# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໖

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໕

## ອັງຄຸດຕະຣະນິກາຍ ສັດຕະກະນິບາດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໔໕໕໕-໔໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮິບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໖

# ພຣະສຸດຕັນຕະປິດົກ

## ເຫຼັ້ມທີ ໑໕

## ອັງຄຸດຕະຣະນິກາຍ ສັດຕະກະນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ປັນນາດ

# ໑. ທະນະວັກ

**ໝວດວ່າດ້ວຍອະຣິຍະຊັບ**

## ໑. ປະຖະມະປິຍະສູດ

### ວ່າດ້ວຍທຳທີ່ເປັນເຫດໃຫ້ເປັນທີ່ຮັກ ສູດທີ ໑

[໑] ຂ້າພະເຈົ້າ ໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມຸ້ງລາບ
໒. ເປັນຜູ້ມຸ້ງຊື່ສຽງ
໓. ເປັນຜູ້ມຸ້ງສັກກາຣະ
໔. ເປັນຜູ້ບໍ່ມີຫິຣິ (ຄວາມອາຍບາບ)
໕. ເປັນຜູ້ບໍ່ມີໂອດຕັບປະ (ຄວາມຢ້ານບາບ)
໖. ເປັນຜູ້ມີຄວາມປາຖະໜາຊົ່ວ
໗. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມຸ້ງລາບ
໒. ເປັນຜູ້ບໍ່ມຸ້ງຊື່ສຽງ
໓. ເປັນຜູ້ບໍ່ມຸ້ງສັກກາຣະ
໔. ເປັນຜູ້ມີຫິຣິ
໕. ເປັນຜູ້ມີໂອດຕັບປະ
໖. ເປັນຜູ້ມັກໜ້ອຍ
໗. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ປະຖະມະປິຍະສູດທີ ໑ ຈົບ**

# ໒. ທຸຕິຍະປິຍະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເປັນທີ່ຮັກ ສູດທີ ໒

[໒] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມຸ້ງລາບ
໒. ເປັນຜູ້ມຸ້ງຊື່ສຽງ
໓. ເປັນຜູ້ບໍ່ມີໂອດຕັບປະ
໗. ເປັນຜູ້ມີຄວາມຂີ້ຖີ່
໔. ເປັນຜູ້ມຸ້ງສັກກາຣະ
໕. ເປັນຜູ້ບໍ່ມີຫິຣິ
໖. ເປັນຜູ້ມີຄວາມຣິດສະຫຍາ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ບໍ່ມຸ້ງລາບ
໒. ເປັນຜູ້ບໍ່ມຸ້ງຊື່ສຽງ
໓. ເປັນຜູ້ມີໂອດຕັບປະ
໗. ເປັນຜູ້ບໍ່ມີຄວາມຂີ້ຖີ່
໔. ເປັນຜູ້ບໍ່ມຸ້ງສັກກາຣະ
໕. ເປັນຜູ້ມີຫິຣິ
໖. ເປັນຜູ້ບໍ່ມີຄວາມຣິດສະຫຍາ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ທຸຕິຍະປິຍະສູດທີ ໒ ຈົບ**

# ໓. ສັງຂິດຕະພະລະສູດ

## ວ່າດ້ວຍພະລະໂດຍຫຍໍ້

[໓] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ໆລໆ

ພິກຂຸທັງຫຼາຍ ພະລະ (ກຳລັງ) ໗ ປະການນີ້

ພະລະ ໗ ປະການ ອັນໃດແດ່ ຄື

໑. ສັດທາພະລະ (ກຳລັງຄືສັດທາ)
໒. ວິຣິຍະພະລະ (ກຳລັງຄືວິຣິຍະ)
໓. ຫິຣິພະລະ (ກຳລັງຄືຫິຣິ)
໔. ໂອດຕັບປະພະລະ (ກຳລັງຄືໂອດຕັບປະ)
໕. ສະຕິພະລະ (ກຳລັງຄືສະຕິ)
໖. ສະມາທິພະລະ (ກຳລັງຄືສະມາທິ)
໗. ປັນຍາພະລະ (ກຳລັງຄືປັນຍາ)

ພິກຂຸທັງຫຼາຍ ພະລະ ໗ ປະການນີ້ແລ

ພິກຂຸຜູ້ເປັນບັນດິດມີພະລະ ໗ ປະການນີ້ ຄື

ສັດທາພະລະ ວິຣິຍະພະລະ ຫິຣິພະລະ ໂອດຕັບປະພະລະ
ສະຕິພະລະ ສະມາທິພະລະ ແລະປັນຍາພະລະ
ຍ່ອມຢູ່ຢ່າງເປັນສຸກ
ເລືອກເຟັ້ນທຳໂດຍແຍບຄາຍ
ເຫັນແຈ້ງອັດຖະດ້ວຍປັນຍາ
ຄວາມລຸດພົ້ນແຫ່ງໃຈຍ່ອມມີໄດ້
ເໝືອນຄວາມດັບໄປແຫ່ງປະທີບ ສະນັ້ນ

**ສັງຂິດຕະພະລະສູດທີ ໓ ຈົບ**

# ໔. ວິດຖະຕະພະລະສູດ

## ວ່າດ້ວຍພະລະໂດຍພິດສະດານ

[໔] ພິກຂຸທັງຫຼາຍ ພະລະ ໗ ປະການນີ້

ພະລະ ໗ ປະການ ອັນໃດແດ່ ຄື

໑. ສັດທາພະລະ
໒. ວິຣິຍະພະລະ
໓. ຫິຣິພະລະ
໔. ໂອດຕັບປະພະລະ

໕. ສະຕິພະລະ ໖. ສະມາທິພະລະ

໗. ປັນຍາພະລະ

ສັດທາພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສັດທາ ເຊື່ອປັນຍາເຄື່ອງຕັດສະຣູ້ຂອງຕະຖາຄົດ ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງ ໂດຍຊອບ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ[໒] ເປັນພຣະຜູ້ມີພຣະພາກເຈົ້າ"[໓] ນີ້ຮຽກວ່າ ສັດທາພະລະ

ວິຣິຍະພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳ ທັງຫຼາຍຢູ່ ນີ້ຮຽກວ່າ ວິຣິຍະພະລະ

ຫິຣິພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີຫິຣິ ຄື ລະອາຍຕໍ່ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ລະອາຍຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ຫິຣິພະລະ

ໂອດຕັບປະພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີໂອດຕັບປະ ຄື ສະດຸ້ງຢ້ານຕໍ່ກາຍທຸດຈະຣິດ ວະຈີທຸຈະຣິດ ມະໂນທຸດຈະຣິດ ສະດຸ້ງຢ້ານຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ໂອດຕັບປະພະລະ

ສະຕິພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດແລະຄຳທີ່ເວົ້າແມ່ນດົນໄດ້ ນີ້ຮຽກວ່າ ສະຕິພະລະ

ສະມາທິພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ສະຫງັດຈາກກາມ ໆລໆ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່ ນີ້ຮຽກວ່າ ສະມາທິພະລະ

ປັນຍາພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ນີ້ຮຽກວ່າ ປັນຍາພະລະ

ພິກຂຸທັງຫຼາຍ ພະລະ ໗ ປະການນີ້ແລ

ພິກຂຸຜູ້ເປັນບັນດິດມີພະລະ ໗ ປະການນີ້ ຄື
ສັດທາພະລະ ວິຣິຍະພະລະ ຫິຣິພະລະ ໂອດຕັບປະພະລະ
ສະຕິພະລະ ສະມາທິພະລະ ແລະປັນຍາພະລະ
ຍ່ອມຢູ່ຢ່າງເປັນສຸກ
ເລືອກເຟັ້ນທຳໂດຍແຍບຄາຍ
ເຫັນແຈ້ງອັດຖະດ້ວຍປັນຍາ
ຄວາມລຸດພົ້ນແຫ່ງໃຈຍ່ອມມີໄດ້
ເໝືອນຄວາມດັບໄປແຫ່ງປະທີບ ແນວນັ້ນ

**ວິຕະຖະຕະພະລະສູດທີ ໔ ຈົບ**

# ໕. ສັງຂິດຕະທະນະສູດ

## ວ່າດ້ວຍອະຣິຍະຊັບໂດຍຫຍໍ້

[໕] ພິກຂຸທັງຫຼາຍ ຊັບ ໗ ປະການນີ້

ຊັບ ໗ ປະການ ອັນໃດແດ່ ຄື

໑. ສັດທາທະນະ (ຊັບຄືສັດທາ)
໒. ສີລະທະນະ (ຊັບຄືສີນ)
໓. ຫິຣິທະນະ (ຊັບຄືຫິຣິ)
໔. ໂອດຕັບປະທະນະ (ຊັບຄືໂອດຕັບປະ)
໕. ສຸຕະທະນະ (ຊັບຄືສຸຕະ)
໖. ຈາຄະທະນະ (ຊັບຄືຈາຄະ)
໗. ປັນຍາທະນະ (ຊັບຄືປັນຍາ)

ພິກຂຸທັງຫຼາຍ ຊັບ ໗ ປະການນີ້ແລ

ຜູ້ໃດຈະເປັນສະຕີ ຫຼື ບຸຣຸດກໍຕາມ
ມີຊັບ ໗ ປະການນີ້ ຄື ສັດທາທະນະ
ສີລະທະນະ ຫິຣິທະນະ ໂອດຕັບປະທະນະ
ສຸຕະທະນະ ຈາຄະທະນະ ແລະປັນຍາທະນະ
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າ "ເປັນຄົນບໍ່ຂັດສົນ"
ຊີວິດຂອງເຂົາກໍບໍ່ສູນເປົ່າ
ເພາະສະນັ້ນ ຜູ້ມີປັນຍາ
ເມື່ອຣະນຶກເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ຄວນໝັ່ນປະກອບສັດທາ ສີນ
ຄວາມເຫຼື້ອມໃສ ແລະການເຫັນທຳ໑

**ສັງຂິດຕະທະນະສູດທີ ໕ ຈົບ**

# ໖. ວິດຖະຕະທະນະສູດ

## ວ່າດ້ວຍອະຣິຍະຊັບໂດຍພິດສະດານ

[໖] ພິກຂຸທັງຫຼາຍ ຊັບ ໗ ປະການນີ້

ຊັບ ໗ ປະການ ອັນໃດແດ່ ຄື

໑. ສັດທາທະນະ
໒. ສີລະທະນະ
໓. ຫິຣິທະນະ
໔. ໂອດຕັບປະທະນະ
໕. ສຸຕະທະນະ
໖. ຈາຄະທະນະ
໗. ປັນຍາທະນະ

ສັດທາທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສັດທາ ຄື ເຊື່ອປັນຍາເຄື່ອງຕັດສະຣູ້ຂອງ ຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ຯລຯ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ນີ້ຮຽກວ່າ ສັດທາທະນະ

ສີລະທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ສີລະທະນະ

ຫິຣິທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີຫິຣິ ຄື ລະອາຍຕໍ່ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ລະອາຍຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ຫິຣິທະນະ

ໂອດຕັບປະທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີໂອດຕັບປະ ຄື ສະດຸ້ງຢ້ານຕໍ່ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ສະດຸ້ງຢ້ານຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ໂອຕັບປະທະນະ

ສຸຕະທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍ ເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ນີ້ຮຽກວ່າ ສຸຕະທະນະ

ຈາຄະທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານ ຢູ່ຄອງເຮືອນ ນີ້ຮຽກວ່າ ຈາຄະທະນະ

ປັນຍາທະນະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາຯລຯ ໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ນີ້ຮຽກວ່າ ປັນຍາທະນະ

ພິກຂຸທັງຫຼາຍ ຊັບ ໗ ປະການນີ້ແລ

ຜູ້ໃດຈະເປັນສະຕິ ຫຼື ບຸຣຸດກໍຕາມ
ມີຊັບ ໗ ປະການນີ້ ຄື ສັດທາທະນະ
ສີລະທະນະ ຫິຣິທະນະ ໂອດຕັບປະທະນະ
ສຸຕະທະນະ ຈາຄະທະນະ ແລະປັນຍາທະນະ
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າ "ເປັນຄົນບໍ່ຂັດສົນ"
ຊີວິດຂອງເຂົາກໍບໍ່ສູນເປົ່າ
ເພາະສະນັ້ນ ຜູ້ມີປັນຍາ
ເມື່ອຣະນຶກເຖິງຄໍາສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ຄວນໝັ່ນປະກອບສັດທາ ສີນ
ຄວາມເຫຼື້ອມໃສແລະການເຫັນທໍາ

**ວິດຖະຕະທະນະສູດທີ ໖ ຈົບ**

# ໗. ອຸກຄະສູດ

## ວ່າດ້ວຍມະຫາອໍາມາດຊື່ອຸກຄະ

[໗] ຄັ້ງນັ້ນ ຣາດຊະມະຫາອໍາມາດ ຊື່ ອຸກຄະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທີ່ມີຄາຣະເສດຖີຜູ້ເປັນຫຼານຂອງໂຣທະນະເສດຖີນີ້ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຊັບຫຼາຍເຖິງພຽງນີ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຸກຄະ ມີຄາຣະເສດຖີຜູ້ເປັນຫຼານຂອງໂຣທະນະເສດຖີເປັນຜູ້ຮັ່ງມີພຽງໃດ ມີຊັບຫຼາຍເທົ່າໃດ ມີໂພຄະຊັບຫຼາຍເທົ່າໃດ?"

ອຸກຄະມະຫາອໍາມາດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເຂົາມີຄໍາແສນໜຶ່ງ ບໍ່ຈໍາຕ້ອງກ່າວເຖິງເງິນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸກຄະ ຊັບນັ້ນມີຢູ່ຈິງ ເຮົາບໍ່ໄດ້ກ່າວວ່າ ຊັບນັ້ນບໍ່ມີ ແຕ່ຊັບນັ້ນແລ ເປັນຂອງທົ່ວໄປແກ່ໄຟ ນໍ້າ ພຣະຣາຊາ ໂຈນ ແລະທາຍາດຜູ້ບໍ່ເປັນທີ່ຮັກ

ອຸກຄະ ຊັບ ໗ ປະການນີ້ ເປັນຂອງບໍ່ທົ່ວໄປແກ່ໄຟ ນໍ້າ ພຣະຣາຊາ ໂຈນ ແລະທາຍາດຜູ້ບໍ່ເປັນທີ່ຮັກ

ຊັບ ໗ ປະການ ອັນໃດແດ່ ຄື

໑. ສັດທາທະນະ
໒. ສີລະທະນະ
໓. ຫິຣິທະນະ
໔. ໂອດຕັບປະທະນະ
໕. ສຸຕະທະນະ
໖. ຈາຄະທະນະ
໗. ປັນຍາທະນະ

ອຸກຄະ ຊັບ ໗ ປະການນີ້ ເປັນຂອງບໍ່ທົ່ວໄປແກ່ໄຟ ນ້ຳ ພຣະຣາຊາ ໂຈນ ແລະທາຍາດຜູ້ບໍ່ທີ່ເປັນຮັກ

ຜູ້ໃດຈະເປັນສະຕີ ຫຼືບຸຣຸດກໍຕາມ
ມີຊັບ ໗ ປະການນີ້ ຄື ສັດທາທະນະ
ສີລະທະນະ ຫິຣິທະນະ ໂອດຕັບປະທະນະ
ສຸຕະທະນະ ຈາຄະທະນະ ແລະປັນຍາທະນະ
ຜູ້ນັ້ນເປັນຄົນມີຊັບຫຼາຍ
ໃຜ ໆ ບໍ່ເພິ່ງຊະນະໄດ້ທັງໃນເທວະໂລກ ແລະມະນຸດໂລກ
ເພາະສະນັ້ນ ຜູ້ມີປັນຍາ
ເມື່ອຣະນຶກເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ຄວນໝັ່ນປະກອບສັດທາ ສີນ
ຄວາມເຫຼື້ອມໃສ ແລະການເຫັນທຳ

**ອຸກຄະສູດທີ ໗ ຈົບ**

# ໘. ສັນໂຍຊະນະສູດ

## ວ່າດ້ວຍສັງໂຍດ

[໘] ພິກຂຸທັງຫຼາຍ ສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ) ໗ ປະການນີ້

ສັງໂຍດ ໗ ປະການ ອັນໃດແດ່ ຄື

໑. ອະນຸນຍະສັງໂຍດ[໒] (ສັງໂຍດຄືຄວາມຍິນດີ)
໒. ປະຕິຄະສັງໂຍດ (ສັງໂຍດຄືຄວາມຍິນຮ້າຍ)
໓. ທິດຖິສັງໂຍດ (ສັງໂຍດຄືຄວາມເຫັນຜິດ)

໔. ວິຈິກິດສາສັງໂຍດ (ສັງໂຍດຄືຄວາມລັງເລສົງໄສ)
໕. ມານະສັງໂຍດ (ສັງໂຍດຄືຄວາມຖືຕົວ)
໖. ພະວະຣາຄະສັງໂຍດ (ສັງໂຍດຄືຄວາມຕິດໃຈໃນພົບ)
໗. ອະວິດຊາສັງໂຍດ (ສັງໂຍດຄືຄວາມບໍ່ຮູ້ແຈ້ງ)

ພິກຂຸທັງຫຼາຍ ສັງໂຍດ ໗ ປະການນີ້ແລ

**ສັນໂຍຊະນະສູດທີ ໗ ຈົບ**

# ໙. ປະຫານະສູດ

## ວ່າດ້ວຍການຢູ່ປະພຶດພົມມະຈັນເພື່ອລະສັງໂຍດ

[໙] ພິກຂຸທັງຫຼາຍ ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດສັງໂຍດ ໗ ປະການ

ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດສັງໂຍດ ໗ ປະການ ອັນໃດແດ່ ຄື

໑. ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດອະນຸນຍະສັງໂຍດ
໒. ฯລฯ ປະຕິຄະສັງໂຍດ
໓. ฯລฯ ທິດຖິສັງໂຍດ
໔. ฯລฯ ວິຈິກິດສາສັງໂຍດ
໕. ฯລฯ ມານະສັງໂຍດ
໖. ฯລฯ ພະວະຣາຄະສັງໂຍດ
໗. ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດອະວິດຊາສັງໂຍດ

ພິກຂຸທັງຫຼາຍ ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດສັງໂຍດ ໗ ປະການນີ້ແລ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະອະນຸນຍະສັງໂຍດໄດ້ເດັດຂາດ ຕັດຣາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຣາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ລະປະຕິຄະສັງໂຍດໄດ້ເດັດຂາດฯລฯ ທິດຖິສັງໂຍດฯລฯ ວິຈິກິດສາສັງໂຍດฯລฯ ມານະສັງໂຍດ ฯລฯ ພະວະຣາຄະສັງໂຍດ ฯລฯ ລະອະວິດຊາສັງໂຍດໄດ້ເດັດຂາດ ຕັດຣາກ ກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຣາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ເມື່ອນັ້ນເຮົາຈຶ່ງຮຽກພິກຂຸນີ້ວ່າ "ຕັດຕັນຫາໄດ້ແລ້ວ ຖອນສັງໂຍດ ໄດ້ແລ້ວ ເຮັດບ່ອນສຸດແຫ່ງທຸກໄດ້ແລ້ວເພາະລະມານະໄດ້ໂດຍຊອບ"

**ປະຫານະສູດທີ ໙ ຈົບ**

# ໑໐. ມັດສະຣິຍະສູດ

## ວ່າດ້ວຍມັດສະຣິຍະ

[໑໐] ພິກຂຸທັງຫຼາຍ ສັງໂຍດ ໗ ປະການນີ້

ສັງໂຍດ ໗ ປະການ ອັນໃດແດ່ ຄື

໑. ອະນຸນຍະສັງໂຍດ
໒. ທິດຖິສັງໂຍດ
໓. ມານະສັງໂຍດ
໔. ປະຕິຄະສັງໂຍດ
໕. ວິຈິກິດສາສັງໂຍດ
໖. ອິດສາສັງໂຍດ (ສັງໂຍດຄືຄວາມຣິດສະຫຍາ)
໗. ມັດສະຣິຍະສັງໂຍດ (ສັງໂຍດຄືຄວາມຂີ້ຖີ່)

ພິກຂຸທັງຫຼາຍ ສັງໂຍດ ໗ ປະການນີ້ແລ

**ມັດສະຣິຍະສູດທີ ໑໐ ຈົບ**

**ທະນະວັກທີ ໑ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖະມະປິຍະສູດ
໒. ສັງຂິດຕະພະລະສູດ
໓. ສັງຂິດຕະທະນະສູດ
໔. ອຸກຄະສູດ
໕. ປະຫານະສູດ
໖. ທຸຕິຍະປິຍະສູດ
໗. ວິດຖະຕະພະລະສູດ
໘. ວິດຖະຕະທະນະສູດ
໙. ສັນໂຍຊະນະສູດ
໑໐. ມັດສະຣິຍະສູດ

# ໒. ອນຸສະຍະວັກ

## ໝວດວ່າດ້ວຍອະນຸໄສ

## ໑. ປະຖະມະອະນຸສະຍະສູດ

### ວ່າດ້ວຍອະນຸໄສສູດທີ ໑

[໑໑] ພິກຂຸທັງຫຼາຍ ອະນຸໄສ (ກິເລດທີ ນອນເນື່ອງໃນສັນດານ) ໗ ປະການນີ້ ອະນຸໄສ ໗ ປະການ ອັນໃດແດ່ ຄື

໑. ກາມະຣາຄານຸໄສ (ອະນຸໄສຄືຄວາມກຳໜັດໃນກາມ)
໒. ປະຕິຄານຸໄສ (ອະນຸໄສຄືຄວາມຍິນຮ້າຍ)
໓. ທິດຖານຸໄສ (ອະນຸໄສຄືຄວາມເຫັນຜິດ)
໔. ວິຈິກິດສານຸໄສ (ອະນຸໄສຄືຄວາມລັງເລສົງໄສ)
໕. ມານານຸໄສ (ອະນຸໄສຄືຄວາມຖືຕົວ)
໖. ພະວະຣາຄານຸໄສ (ອະນຸໄສຄືຄວາມຕິດໃຈໃນພົບ)
໗. ອະວິດຊານຸໄສ (ອະນຸໄສຄືຄວາມບໍ່ຮູ້ແຈ້ງ)

ພິກຂຸທັງຫຼາຍ ອະນຸໄສ ໗ ປະການນີ້ແລ

**ປະຖະມະອະນຸສະຍະສູດທີ ໑ ຈົບ**

## ໒. ທຸຕິຍະອະນຸສະຍະສູດ

### ວ່າດ້ວຍອະນຸໄສ ສູດທີ ໒

[໑໒] ພິກຂຸທັງຫຼາຍ ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດອະນຸໄສ ໗ ປະການ ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດອະນຸໄສ ໗ ປະການ ອັນໃດແດ່ ຄື

໑. ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດກາມະຣາຄານຸໄສ

໔. ໆລໆ ປະຕິຄານຸໄສ
໓. ໆລໆ ທິດຖານຸໄສ
໔. ໆລໆ ວິຈິກິດສານຸໄສ
໕. ໆລໆ ມານານຸໄສ
໖. ໆລໆ ພະວະຣາຄານຸໄສ
໗. ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດອະວິດຊານຸໄສ

ພິກຂຸທັງຫຼາຍ ພິກຂຸຢູ່ປະພຶດພົມມະຈັນເພື່ອລະ ເພື່ອຕັດອະນຸໄສ ໗ ປະການນີ້ແລ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະກາມະຣາຄານຸໄສໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ລະປະຕິຄານຸໄສໄດ້ເດັດຂາດ ໆລໆ ທິດຖານຸໄສ ໆລໆ ວິຈິກິດສານຸໄສ ໆລໆ ມານານຸໄສ ໆລໆ ພະວະຣາຄານຸໄສ ໆລໆ ລະອະວິດຊານຸໄສໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ເມື່ອນັ້ນ ພິກຂຸນີ້ເຮົາຈຶ່ງຮຽກວ່າ "ຕັດຕັນຫາໄດ້ແລ້ວ ຖອນສັງໂຍດໄດ້ແລ້ວ ເຮັດທີ່ສຸດແຫ່ງທຸກໄດ້ແລ້ວ ເພາະລະມານະໄດ້ໂດຍຊອບ"

**ທຸຕິຍະອະນຸສະຍະສູດທີ ໔ ຈົບ**

# ໓. ກຸລະສູດ

## ວ່າດ້ວຍຕະກູນທີ່ພິກຂຸບໍ່ຄວນເຂົ້າໄປຫາແລະຄວນເຂົ້າໄປຫາ

[໑໓] ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໗ ປະການ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ກໍບໍ່ຄວນເຂົ້າໄປຫາ ຫຼື ເຂົ້າໄປຫາແລ້ວ ກໍບໍ່ຄວນນັ່ງໃກ້

ອົງ ໗ ປະການ ອັນໃດແດ່ ຄື ຕະກູນ

໑. ຕ້ອນຮັບດ້ວຍຄວາມບໍ່ເຕັມໃຈ
໔. ໄຫວ້ດ້ວຍຄວາມບໍ່ເຕັມໃຈ
໓. ໃຫ້ອາສະນະດ້ວຍຄວາມບໍ່ເຕັມໃຈ
໔. ປົກປິດຂອງທີ່ມີຢູ່
໕. ມີຂອງຫຼາຍ ແຕ່ຖວາຍໜ້ອຍ
໖. ມີຂອງປະນີດ ແຕ່ຖວາຍຂອງເສົ້າໝອງ

ໆ. ຖວາຍໂດຍບໍ່ເຄົາລົບ ບໍ່ຖວາຍໂດຍເຄົາລົບ

ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໗ ປະການນີ້ແລ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ກໍບໍ່ຄວນເຂົ້າໄປຫາ ຫຼື ເຂົ້າໄປຫາແລ້ວ ກໍບໍ່ຄວນນັ່ງໃກ້

ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໗ ປະການ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ຄວນເຂົ້າໄປຫາ ຫຼື ເຂົ້າໄປຫາແລ້ວ ຄວນນັ່ງໃກ້

ອົງ ໗ ປະການ ອັນໃດແດ່ ຄື ຕະກູນ

໑. ຕ້ອນຮັບດ້ວຍຄວາມເຕັມໃຈ
໒. ໄຫວ້ດ້ວຍຄວາມເຕັມໃຈ
໓. ໃຫ້ອາສະນະດ້ວຍຄວາມເຕັມໃຈ
໔. ບໍ່ປົກປິດຂອງທີ່ມີຢູ່
໕. ມີຂອງຫຼາຍ ກໍຖວາຍຫຼາຍ
໖. ມີຂອງປະນີດ ກໍຖວາຍຂອງປະນີດ
໗. ຖວາຍໂດຍເຄົາລົບ ບໍ່ຖວາຍໂດຍບໍ່ເຄົາລົບ

ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໗ ປະການນີ້ແລ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ຄວນເຂົ້າໄປຫາ ຫຼືເຂົ້າໄປຫາແລ້ວ ຄວນນັ່ງໃກ້

**ກຸລະສູດທີ ໓ ຈົບ**

# ໔. ປຸກຄະລະສູດ

## ວ່າດ້ວຍບຸກຄົນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ

[໑໔] ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໗ ຈຳພວກໃດແດ່ ຄື

໑. ທ່ານຜູ້ເປັນອຸພະໂຕພາຄະວິມຸດ
໒. ທ່ານຜູ້ເປັນປັນຍາວິມຸດ
໓. ທ່ານຜູ້ເປັນກາຍະສັກຂີ
໔. ທ່ານຜູ້ເປັນທິດຖິປັດຕະ

໕. ທ່ານຜູ້ເປັນສັດທາວິມຸດ ໖. ທ່ານຜູ້ເປັນທຳມານຸສາຣີ
໗. ທ່ານຜູ້ເປັນສັດທານຸສາຣີ

ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ປຸກຄະລະສູດທີ ໔ ຈົບ**

# ໕. ອຸທະກູປະມາສູດ

## ວ່າດ້ວຍບຸກຄົນຜູ້ປຽບດ້ວຍຄົນຕົກນໍ້າ

[໑໕] ພິກຂຸທັງຫຼາຍ ບຸກຄົນຜູ້ປຽບດ້ວຍຄົນຕົກນໍ້າ ໗ ຈຳພວກ ມີຜາກົດຢູ່ໃນໂລກ

ບຸກຄົນ ໗ ຈຳພວກໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ ຈົມແລ້ວເທື່ອດຽວ ກໍຍັງຈົມຢູ່ຄືເກົ່າ
໒. ບຸກຄົນບາງຄົນໃນໂລກນີ້ ໂປ່ໂລ່ຂຶ້ນແລ້ວຈົມລົງອີກ
໓. ບຸກຄົນບາງຄົນໃນໂລກນີ້ ໂປ່ໂລ່ຂຶ້ນແລ້ວຢຸດຢູ່
໔. ບຸກຄົນບາງຄົນໃນໂລກນີ້ ໂປ່ໂລ່ຂຶ້ນແລ້ວຫຼຽວເບິ່ງ
໕. ບຸກຄົນບາງຄົນໃນໂລກນີ້ ໂປ່ໂລ່ຂຶ້ນແລ້ວຂ້າມໄປ
໖. ບຸກຄົນບາງຄົນໃນໂລກນີ້ ໂປ່ໂລ່ຂຶ້ນແລ້ວໄດ້ທີ່ເພິ່ງ
໗. ບຸກຄົນບາງຄົນໃນໂລກນີ້ ໂປ່ໂລ່ຂຶ້ນແລ້ວຂ້າມໄປເຖິງຝັ່ງ ເປັນຜູ້ລອຍບາບຢູ່ເທິງບົກ

ບຸກຄົນຜູ້ຈົມລົງເທື່ອດຽວ ກໍຍັງຈົມຢູ່ຄືເກົ່າ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ປະກອບດ້ວຍອະກຸສົນທຳຝ່າຍດຳໂດຍສ່ວນດຽວ ພິກຂຸທັງຫຼາຍ ບຸກຄົນຜູ້ຈົມລົງເທື່ອດຽວ ກໍຍັງຈົມຢູ່ຄືເກົ່າ ເປັນແນວນີ້ແລ

ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຈົມລົງອີກ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໂປ່ໂລ່ມາແລ້ວ ໄດ້ແກ່ ມີສັດທາດີໃນກຸສົນທຳທັງຫຼາຍ ມີຫີຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແຕ່ສັດທາຂອງເຂົານັ້ນບໍ່ຄົງຢູ່ກັບທີ່ ບໍ່ຈະເລີນ ເສື່ອມໄປຝ່າຍດຽວ ຫີຣິຂອງເຂົານັ້ນ ຯລຯ ໂອດຕັບປະ

ຂອງເຂົານັ້ນ ຯລຯ ວິຣິຍະຂອງເຂົານັ້ນ ຯລຯ ປັນຍາຂອງເຂົານັ້ນ ບໍ່ຄົງຢູ່ກັບທີ່ບໍ່ຈະເລີນ ເສື່ອມໄປຝ່າຍດຽວ ພິກຂຸທັງຫຼາຍ ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຈົມລົງອີກ ເປັນແນວນີ້ແລ

ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຢຸດຢູ່ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໂປ່ໂລ່ຂຶ້ນມາແລ້ວ ໄດ້ແກ່ ມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະ ສັດທາຂອງເຂົານັ້ນບໍ່ເສື່ອມ ບໍ່ຈະເລີນ ຄົງຢູ່ກັບທີ ຫິຣິຂອງເຂົານັ້ນ ຯລຯ ໂອດຕັບປະຂອງເຂົານັ້ນ ຯລຯ ວິຣິຍະຂອງເຂົານັ້ນ ຯລຯ ປັນຍາຂອງເຂົານັ້ນບໍ່ເສື່ອມ ບໍ່ຈະເລີນ ຄົງຢູ່ກັບທີ່ ພິກຂຸທັງຫຼາຍ ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຢຸດຢູ່ ເປັນແນວນີ້ແລ

ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຫຼຽວເບິ່ງ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໂປ່ໂລ່ຂຶ້ນມາແລ້ວ ໄດ້ແກ່ມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະ ເພາະສັງໂຍດ ໓ ປະການສິ້ນໄປ ເຂົາຈຶ່ງເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ ພິກຂຸທັງຫຼາຍ ບຸກຄົນຜູ້ຜຸດຂຶ້ນແລ້ວຫຼຽວເບິ່ງ ເປັນແນວນີ້ແລ

ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຂ້າມໄປ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໂປ່ໂລ່ຂຶ້ນມາແລ້ວ ໄດ້ແກ່ມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະ ເພາະ ສັງໂຍດ ໓ ປະການສິ້ນໄປ ເພາະຣາຄະ ໂທສະແລະໂມຫະເບົາບາງ ເຂົາຈຶ່ງເປັນສະກະທາຄາມີ ມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ພິກຂຸທັງຫຼາຍ ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຂ້າມໄປ ເປັນແນວນີ້ແລ

ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວໄດ້ທີ່ເພິ່ງ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໂປ່ໂລ່ຂຶ້ນມາແລ້ວ ໄດ້ແກ່ມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະ ເພາະ ສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເຂົາຈຶ່ງເປັນໂອປະປາຕິກະ ປະຣິນິບພານໃນພົບຊັ້ນສຸດທາວາດນັ້ນ ບໍ່ກັບມາຈາກໂລກນັ້ນ ພິກຂຸທັງຫຼາຍ ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວໄດ້ທີ່ ເພິ່ງເປັນແນວນີ້ແລ

ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຂ້າມໄປເຖິງຝັ່ງ ເປັນຜູ້ລອຍບາບຢູ່ເທິງບົກ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໂປ່ໂລ່ຂຶ້ນມາແລ້ວ ໄດ້ແກ່ມີສັດທາດີໃນກຸສົນທຳທັງຫຼາຍ ມີຫິຣິດີ ຯລຯ ມີໂອດຕັບປະດີ ຯລຯ ມີວິຣິຍະດີ ຯລຯ ມີປັນຍາດີໃນກຸສົນທຳທັງຫຼາຍ ແລະເຂົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸທັງຫຼາຍ ບຸກຄົນຜູ້ໂປ່ໂລ່ຂຶ້ນແລ້ວຂ້າມໄປເຖິງຝັ່ງເປັນຜູ້ລອຍບາບຢູ່ເທິງບົກ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸກຄົນຜູ້ປຽບດ້ວຍຄົນຕົກນ້ຳ ກ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ອຸທະກູປະມາສູດທີ ໕ ຈົບ**

# ໖. ອະນິດຈານຸປັດສີສູດ

## ວ່າດ້ວຍບຸກຄົນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ

[໑໖] ພິກຂຸທັງຫຼາຍ ບຸກຄົນ ກ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ກ ຈຳພວກໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າ ບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນສັງຂານທັງປວງຢູ່ ຕັ້ງໃຈໝັ້ນເນືອງ ໆ ສະໝ່ຳສະເໝີ ບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ ເຂົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໑ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

໒. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນສັງຂານທັງປວງຢູ່ ຕັ້ງໃຈໝັ້ນເນືອງ ໆ ສະໝ່ຳສະເໝີ ບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ ເຂົາມີປັນຍາຢັ່ງຮູ້ຄວາມສິ້ນອາສະວະ ແລະຄວາມສິ້ນຊີວິດ ບໍ່ກ່ອນບໍ່ຫຼັງກັນ ພິກຂຸທັງຫຼາຍ ນີ້ເປັນ ບຸກຄົນຈຳພວກທີ ໒ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

໓. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນສັງຂານທັງປວງຢູ່ ຕັ້ງໃຈໝັ້ນເນືອງ ໆ ສະໝ່ຳສະເໝີ ບໍ່ຂາດຣະຍະ

ມີປັນຍາຢັ່ງຮູ້ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເຂົາຈຶ່ງເປັນອັນຕະຣາປະຣິນິບພາຍີ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໓ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

໔. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນອຸປະຫັດຈະປະຣິນິບພາຍີ ຯລຯ

໕. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນອະສັງຂາຣະປະຣິນິບພາຍີ ຯລຯ

໖. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນສະສັງຂາຣະປະຣິນິບພາຍີ ຯລຯ

໗. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນສັງຂານທັງປວງຢູ່ ຕັ້ງໃຈໝັ້ນເນືອງ ໆ ສະໝ່ຳສະເໝີ ບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເຂົາຈຶ່ງເປັນອຸດທັງໂສຕະອະກະນິດຖະຄາມີ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໗ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ອະນິດຈານຸປັດສີສູດທີ ໖ ຈົບ**

# ໗. ທຸກຂານຸປັດສີສູດ

## ວ່າດ້ວຍບຸກຄົນຜູ້ພິຈາລະນາເຫັນຄວາມເປັນທຸກ

[໑໗] ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໗ ຈຳພວກໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ພິຈາລະນາເຫັນຄວາມເປັນທຸກ ມີສັນຍາວ່າເປັນທຸກ ຮູ້ວ່າເປັນທຸກໃນສັງຂານທັງປວງຢູ່

ຯລຯ

**ທຸກຂານຸປັດສີສູດທີ ໗ ຈົບ**

# ๙. ອະນັດຕານຸປັດສີສູດ

## ວ່າດ້ວຍບຸກຄົນຜູ້ພິຈາລະນາເຫັນຄວາມເປັນອະນັດຕາ

[໑๙] ພິກຂຸທັງຫຼາຍ ບຸກຄົນ ໆ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ฯລฯ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໆ ຈຳພວກໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ພິຈາລະນາເຫັນຄວາມເປັນອະນັດຕາ ມີສັນຍາວ່າເປັນອະນັດຕາ ຮູ້ວ່າເປັນອະນັດຕາໃນສັງຂານທັງປວງຢູ່ ฯລฯ

**ອະນັດຕານຸປັດສີສູດທີ ๙ ຈົບ**

# ໑໐. ນິບພານະສູດ

## ວ່າດ້ວຍບຸກຄົນຜູ້ພິຈາລະນາເຫັນຄວາມເປັນສຸກໃນນິບພານ

[໑໑໐] ພິກຂຸທັງຫຼາຍ ບຸກຄົນ ໆ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍฯລฯ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໆ ຈຳພວກໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ພິຈາລະນາເຫັນຄວາມເປັນສຸກ ມີສັນຍາວ່າເປັນສຸກ ຮູ້ວ່າເປັນສຸກໃນນິບພານຢູ່ ຕັ້ງໃຈໝັ້ນເນືອງໆ ສະໝ່ຳສະເໝີ ບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ ເຂົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໑ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ฯລฯ ເປັນນາບຸນອັນປະເສີດຂອງໂລກ

໔. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ພິຈາລະນາເຫັນຄວາມເປັນສຸກ ມີສັນຍາວ່າເປັນສຸກ ຮູ້ວ່າເປັນສຸກໃນນິບພານຢູ່ ຕັ້ງໃຈໝັ້ນເນືອງໆ ສະໝ່ຳສະເໝີ ບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ ເຂົາມີປັນຍາຢັ່ງຮູ້ຄວາມສິ້ນອາສະວະ ແລະຄວາມສິ້ນຊີວິດ ບໍ່ກ່ອນບໍ່ຫຼັງກັນ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໔ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍฯລฯ ເປັນນາບຸນອັນປະເສີດຂອງໂລກ

໓. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ພິຈາລະນາເຫັນຄວາມເປັນສຸກ ມີສັນຍາວ່າເປັນສຸກ ຮູ້ວ່າເປັນສຸກໃນນິບພານຢູ່ ຕັ້ງໃຈໝັ້ນເນືອງ ໆ ສະໝ່ຳສະເໝີ ບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເຂົາຈຶ່ງເປັນອັນຕະຣາປະຣິນິບພາຍີ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໓ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດ ຂອງໂລກ

໔. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນອຸປະຫັດຈະປະຣິນິບພາຍີ ຯລຯ

໕. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນອະສັງຂາຣະປະຣິນິບພາຍີ ຯລຯ

໖. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນສະສັງຂານປະຣິນິບພາຍີ໑ ຯລຯ

໗. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ພິຈາລະນາເຫັນຄວາມເປັນສຸກ ມີສັນຍາວ່າເປັນສຸກ ຮູ້ວ່າເປັນສຸກໃນນິບພານຢູ່ ຕັ້ງໃຈໝັ້ນເນືອງ ໆ ສະໝ່ຳສະເໝີ ບໍ່ຂາດ ຣະຍະ ມີປັນຍາຢັ່ງຮູ້ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເຂົາຈຶ່ງເປັນອຸດທັງໂສຕະອະກະນິດຖະຄາມີ ພິກຂຸ ທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໗ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍຯລຯ ເປັນນາບຸນອັນປະ ເສີດຂອງໂລກ

ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ນິບພານະສູດທີ ໙ ຈົບ**

# ໑໐. ນິດທະສະວັດຖຸສູດ

## ວ່າດ້ວຍນິດທະສະວັດຖຸ

[໔໐] ພິກຂຸທັງຫຼາຍ ນິດທະສະວັດຖຸ (ເຫດໃຫ້ໄດ້ຊື່ວ່າຜູ້ບໍ່ມີອາຍຸ ໑໐ ປີ) ໗ ປະການນີ້ ນິດທະສະວັດຖຸ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັນທະຢ່າງແຮງກ້າໃນການສະມາທານສິກຂາ ແລະໄດ້ຄວາມຮັກໃນການສະມາທານສິກຂາຕໍ່ໄປ

໒. ເປັນຜູ້ມີສັນທະຢ່າງແຮງກ້າໃນການພິຈາຣະນາທຳ ແລະໄດ້ຄວາມຮັກໃນການພິຈາຣະນາທຳຕໍ່ໄປ

໖. ເປັນຜູ້ມີສັນທະຢ່າງແຮງກ້າໃນການກຳຈັດຄວາມຢາກ ແລະໄດ້ຄວາມຮັກໃນການກຳຈັດຄວາມຢາກຕໍ່ໄປ
໔. ເປັນຜູ້ມີສັນທະຢ່າງແຮງກ້າໃນການຫຼີບຫຼີກ ແລະໄດ້ຄວາມຮັກໃນການຫຼີບຫຼີກຕໍ່ໄປ
໕. ເປັນຜູ້ມີສັນທະຢ່າງແຮງກ້າໃນການພາຣົບຄວາມພຽນ ແລະໄດ້ຄວາມຮັກໃນການພາຣົບຄວາມພຽນຕໍ່ໄປ
໖. ເປັນຜູ້ມີສັນທະຢ່າງແຮງກ້າໃນສະຕິປັນຍາເປັນເຄື່ອງຮັກສາຕົນ ແລະໄດ້ຄວາມຮັກໃນສະຕິປັນຍາເປັນເຄື່ອງຮັກສາຕົນຕໍ່ໄປ
໗. ເປັນຜູ້ມີສັນທະຢ່າງແຮງກ້າໃນການແທງຕະຫຼອດດ້ວຍທິດຖິ ແລະໄດ້ຄວາມຮັກໃນການແທງຕະຫຼອດດ້ວຍທິດຖິຕໍ່ໄປ

ພິກຂຸທັງຫຼາຍ ນິດທະສະວັດຖຸ ໗ ປະການນີ້ແລ

**ນິດທະສະວັດຖຸສູດທີ ໑໐ ຈົບ**

**ອະນຸສະຍະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖະມະອະນຸສະຍະສູດ
໒. ທຸຕິຍະອະນຸສະຍະສູດ
໓. ກຸລະສູດ
໔. ປຸກຄະລະສູດ
໕. ອຸທະກູປະມາສູດ
໖. ອະນິດຈານຸປັດສີສູດ
໗. ທຸກຂານຸປັດສີສູດ
໘. ອະນັດຕານຸປັດສີສູດ
໙. ນິບພານະສູດ
໑໐. ນິດທະສະວັດຖຸສູດ

# ໓. ວັດຊີສັດຕະກະວັກ

## ໝວດວ່າດ້ວຍທຳ ໆ ປະການຂອງຊາວວັດຊີ

## ໑. ສາຣັນທະສູດ

### ວ່າດ້ວຍການສະແດງອະປະຣິຫານິຍະທຳທີ່ສາຣັນທະເຈດີ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນສາຣັນທະເຈດີ ເຂດເມືອງເວສາລີ ຄັ້ງນັ້ນ ເຈົ້າລິດສະຫວີຫຼາຍອົງໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເຈົ້າລິດສະຫວີເຫຼົ່ານັ້ນດັ່ງນີ້ວ່າ "ເຈົ້າລິດສະຫວີທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ ໆ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເຈົ້າລິດສະຫວີເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ເຈົ້າລິດສະຫວີທັງຫຼາຍ ອະປະຣິຫານິຍະທຳ ໆ ປະການ ອັນໃດແດ່ ຄື"

໑. ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງໝັ່ນປະຊຸມກັນເນືອງນິດ ປະຊຸມກັນຫຼາຍເທື່ອ

໒. ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະພ້ອມພຽງກັນເຮັດກິດທີ່ພວກເຈົ້າວັດຊີເພິ່ງເຮັດ

໓. ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງບໍ່ບັນຍັດສິ່ງທີ່ບໍ່ໄດ້ບັນຍັດໄວ້ ບໍ່ລົ້ມລ້າງສິ່ງທີ່ບັນຍັດໄວ້ແລ້ວ ຖືປະຕິບັດໝັ້ນໃນວັດຊີທຳທີ່ວາງໄວ້ເດີມ

໔. ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງສັກກາຣະ ເຄົາລົບ ນັບຖື ບູຊາເຈົ້າວັດຊີຜູ້ມີພຣະ

ຊົມມາຍຸຫຼາຍຂອງຊາວວັດຊີ ແລະສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນວ່າເປັນສິ່ງຄວນຮັບຟັງ

໕. ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງບໍ່ຂົ່ມເຫັງກຸນລະສະຕີ ຫຼື ກຸນລະກຸມາຣີໃຫ້ຢູ່ຮ່ວມນຳ

໖. ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງສັກກາຣະ ເຄົາລົບ ນັບຖື ບູຊາເຈດີໃນແຄວ້ນວັດຊີຂອງຊາວວັດຊີທັງໃນເມືອງແລະນອກເມືອງ ແລະບໍ່ລະເລີຍການບູຊາ ອັນຊອບທຳທີ່ເຄີຍໃຫ້ ເຄີຍກະທຳຕໍ່ເຈດີເຫຼົ່ານັ້ນໃຫ້ເສື່ອມສູນໄປ

໗. ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງຈັດການຮັກສາ ຄຸ້ມຄອງ ປ້ອງກັນພຣະອະຣະຫັນທັງຫຼາຍໂດຍຊອບທຳດ້ວຍຕັ້ງໃຈວ່າ "ເຮັດແນວໃດ ພຣະອະຣະຫັນທີ່ຍັງບໍ່ມາເພິ່ງມາສູ່ແວ່ນແຄວ້ນຂອງເຮົາ ແລະທ່ານທີ່ມາແລ້ວເພິ່ງຢູ່ຢ່າງຜາສຸກ"

ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່"

**ສາຣັນທະສູດທີ ໑ ຈົບ**

# ໔. ວັດສະກາຣະສູດ

## ວ່າດ້ວຍວັດສະກາຣະພາມ

[໔໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ ພູຄິດຊະກູດ ເຂດເມືອງຣາດຊະຄຶ ສະໄໝນັ້ນ ພຣະຣາຊາແຫ່ງແຄວ້ນມະຄົດ ພຣະນາມວ່າອະຊາດສັດຕູ ເວເທຫິບຸດ ມີພຣະປະສົງຈະສະເດັດໄປປາບແຄວ້ນວັດຊີ ຮັບສັ່ງວ່າ "ເຮົາຈະໂຄ່ນລົ້ມພວກເຈົ້າວັດຊີຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ໃຫ້ພິນາດຍ່ອຍຍັບໄປ"

ພຣະຣາຊາແຫ່ງແຄວ້ນມະຄົດພຣະນາມວ່າອະຊາດສັດຕູ ເວເທຫິບຸດ ຈຶ່ງຮັບສັ່ງຮຽກວັດສະກາຣະພາມມະຫາອຳມາດແຄວ້ນມະຄົດມາຕັດວ່າ "ມາເທີ້ນ ພາມ ທ່ານຈົ່ງໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຂາບພຣະບາດທັງສອງດ້ວຍຂະໜ່ອມ ແລ້ວທູນຖາມເຖິງພຣະສຸກຂະພາບ ຄວາມມີພຣະໂຣຄາພາດໜ້ອຍ ແຂງແຮງ ມີພຣະພະລານາໄມສົມບູນ ຢູ່ສຳຣານ ຕາມຄຳຂອງເຮົາວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະຣາຊາແຫ່ງແຄວ້ນມະຄົດ ພຣະນາມວ່າອະຊາດສັດຕູ ເວເທຫິບຸດ ຂໍຂາບພຣະ ບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍພຣະສຽນ ທູນຖາມເຖິງພຣະສຸກຂະພາບ ຄວາມມີພຣະໂຣຄາພາດໜ້ອຍ ແຂງແຮງ ມີພຣະພະລານາໄມສົມບູນ ຢູ່ສຳຣານ" ແລະທ່ານຈົ່ງຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະຣາຊາແຫ່ງແຄວ້ນມະຄົດ ພຣະນາມວ່າອະຊາດສັດຕູ ເວເທຫິບຸດ ມີພຣະປະສົງຈະສະເດັດໄປປາບແຄວ້ນວັດຊີ ມີຮັບສັ່ງຢ່າງນີ້ວ່າ "ເຮົາຈະໂຄ່ນລົ້ມພວກເຈົ້າວັດຊີຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ໃຫ້ພິນາດຍ່ອຍຍັບໄປ" ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນແກ່ທ່ານຢ່າງໃດ ທ່ານເພິ່ງຈຳຄຳພະຍາກອນນັ້ນໃຫ້ດີແລ້ວມາບອກເຮົາ ເພາະວ່າພຣະຕະຖາຄົດທັງຫຼາຍຍ່ອມບໍ່ຕັດ ຄຳຕົວະ"

ວັດສະກາຣະພາມມະຫາອຳມາດແຄວ້ນມະຄົດ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ທ່ານພຣະໂຄດົມ ພຣະຣາຊາແຫ່ງແຄວ້ນມະຄົດ ພະນາມວ່າອະຊາດສັດຕູ ເວເທຫິບຸດ ຂໍຂາບພຣະບາດທັງສອງຂອງພຣະໂຄດົມດ້ວຍພຣະສຽນ ທູນຖາມເຖິງພຣະສຸກຂະພາບ ຄວາມມີພຣະໂຣຄາພາດໜ້ອຍ ແຂງແຮງ ມີພຣະພະລານາໄມສົມບູນ ຢູ່ສຳຣານ ພຣະຣາຊາແຫ່ງແຄວ້ນມະຄົດ ພຣະນາມວ່າອະຊາດສັດຕູ ເວເທຫິບຸດ ມີພະປະສົງຈະສະເດັດໄປປາບແຄວ້ນວັດຊີ ມີຮັບສັ່ງຢ່າງນີ້ວ່າ "ເຮົາຈະໂຄ່ນລົ້ມພວກເຈົ້າວັດຊີຜູ້ມີລິດຫຼາຍແນວນີ້ ມີອານຸພາບຫຼາຍແນວນີ້ ໃຫ້ພິນາດຍ່ອຍຍັບ"

ສະໄໝນັ້ນ ທ່ານພຣະອານົນຢືນຖວາຍງານພັດພຣະຜູ້ມີພຣະພາກເຈົ້າຢູ່ໃນເບື້ອງພຣະປິດສະດາງ (ເບື້ອງຫຼັງຂອງພຣະພຸດທະເຈົ້າ) ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດຖາມ ວ່າ

"ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີໝັ່ນປະຊຸມກັນເນືອງນິດ ປະຊຸມກັນຫຼາຍຄັ້ງ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີໝັ່ນປະຊຸມກັນເນືອງນິດ ປະຊຸມກັນຫຼາຍຄັ້ງ"

"ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງໝັ່ນປະຊຸມກັນເນືອງນິດ ປະຊຸມກັນຫຼາຍຄັ້ງ"

"ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະພ້ອມພຽງກັນເຮັດກິດທີ່ພວກເຈົ້າວັດຊີເພິ່ງເຮັດ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະພ້ອມພຽງກັນເຮັດກິດທີ່ພວກເຈົ້າວັດຊີເພິ່ງເຮັດ"

"ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະພ້ອມພຽງກັນ ເຮັດກິດທີ່ພວກເຈົ້າວັດຊີເພິ່ງເຮັດ"

"ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີບໍ່ບັນຍັດສິ່ງທີ່ບໍ່ໄດ້ບັນຍັດໄວ້ ບໍ່ລົ້ມລ້າງ ສິ່ງທີ່ບັນຍັດໄວ້ແລ້ວ ຖືປະຕິບັດໝັ້ນໃນວັດຊີທຳທີ່ວາງໄວ້ເດີມ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີບໍ່ບັນຍັດສິ່ງທີ່ ບໍ່ໄດ້ ບັນຍັດໄວ້ ບໍ່ລົ້ມລ້າງສິ່ງທີ່ບັນຍັດໄວ້ແລ້ວ ຖືປະຕິບັດໝັ້ນໃນວັດຊີທຳທີ່ວາງໄວ້ເດີມ"

"ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງບໍ່ບັນຍັດສິ່ງທີ່ບໍ່ໄດ້ບັນຍັດໄວ້ ບໍ່ລົ້ມລ້າງສິ່ງທີ່ບັນຍັດໄວ້ແລ້ວ ຖືປະ ຕິບັດໝັ້ນໃນວັດຊີທຳທີ່ວາງໄວ້ເດີມ"

"ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີສັກກາຣະ ເຄົາລົບ ນັບຖື ບູຊາເຈົ້າວັດຊີຜູ້ມີພຣະຊົນມາຍຸຫຼາຍຂອງຊາວວັດຊີ ແລະສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນວ່າເປັນສິ່ງທີ່ຄວນຮັບຟັງ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີສັກກາຣະ ເຄົາລົບ ນັບຖື ບູຊາເຈົ້າວັດຊີຜູ້ມີພຣະຊົນມາຍຸຫຼາຍຂອງຊາວວັດຊີ ແລະສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນ ວ່າເປັນສິ່ງຄວນຮັບຟັງ"

"ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງສັກກາຣະ ເຄົາລົບ ນັບຖື ບູຊາເຈົ້າວັດຊີຜູ້ມີພຣະຊົນມາຍຸຫຼາຍຂອງ ຊາວວັດຊີ ແລະສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນວ່າເປັນສິ່ງທີ່ຄວນຮັບຟັງ"

"ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີບໍ່ຂົ່ມເຫັງກຸນລະສະຕີ ຫຼື ກຸນລະກຸມາຣີໃຫ້ຢູ່ຮ່ວມດ້ວຍ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີບໍ່ຂົ່ມເຫັງກຸນລະສະຕີ ຫຼື ກຸນລະກຸມາຣີໃຫ້ຢູ່ຮ່ວມດ້ວຍ"

"ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງບໍ່ຂົ່ມເຫັງກຸນລະສະຕີ ຫຼື ກຸນລະກຸມາຣີໃຫ້ຢູ່ຮ່ວມດ້ວຍ"

"ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີສັກກາຣະ ເຄົາລົບ ນັບຖື ບູຊາເຈດີ ໃນແຄວ້ນວັດຊີຂອງຊາວວັດຊີທັງໃນເມືອງແລະນອກເມືອງ ແລະບໍ່ລະເລີຍການບູຊາອັນຊອບທຳທີ່ເຄີຍໃຫ້ເຄີຍກະທຳຕໍ່ເຈດີເຫຼົ່ານັ້ນໃຫ້ເສື່ອມສູນໄປ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີສັກກາຣະ ເຄົາລົບ ນັບຖື ບູຊາເຈດີໃນແຄວ້ນວັດຊີຂອງຊາວວັດຊີທັງໃນເມືອງ ແລະນອກເມືອງ ແລະບໍ່ລະເລີຍການບູຊາອັນຊອບທຳທີ່ເຄີຍໃຫ້ເຄີຍກະທຳຕໍ່ເຈດີເຫຼົ່ານັ້ນໃຫ້ເສື່ອມສູນໄປ"

"ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງສັກກາຣະ ເຄົາລົບ ນັບຖື ບູຊາເຈດີໃນແຄວ້ນວັດຊີຂອງຊາວວັດຊີທັງໃນເມືອງແລະນອກເມືອງ ແລະບໍ່ລະເລີຍການບູຊາອັນຊອບທຳທີ່ເຄີຍໃຫ້ ເຄີຍກະທຳຕໍ່ເຈດີເຫຼົ່ານັ້ນໃຫ້ເສື່ອມສູນໄປ"

"ອານົນ ທ່ານໄດ້ຍິນບໍວ່າ "ພວກເຈົ້າວັດຊີຈັດການຮັກສາ ຄຸ້ມຄອງ ປ້ອງກັນພຣະອະຣະຫັນທັງຫຼາຍໂດຍຊອບທຳດ້ວຍຕັ້ງໃຈວ່າ "ເຮັດແນວໃດ ພຣະອະຣະຫັນທີ່ຍັງບໍ່ມາ ເພິ່ງມາສູ່ແວ່ນແຄວ້ນຂອງເຮົາ ທ່ານທີ່ມາແລ້ວເພິ່ງຢູ່ຢ່າງຜາສຸກ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນວ່າ "ພວກເຈົ້າວັດຊີຈັດການຮັກສາ ຄຸ້ມຄອງ ປ້ອງກັນພຣະອະຣະຫັນທັງຫຼາຍໂດຍຊອບທຳ ດ້ວຍຕັ້ງໃຈວ່າ "ເຮັດແນວໃດ ພຣະອະຣະຫັນທີ່ຍັງບໍ່ມາ ເພິ່ງມາສູ່ແວ່ນແຄວ້ນຂອງເຮົາ ທ່ານທີ່ມາແລ້ວເພິ່ງຢູ່ຢ່າງຜາສຸກ"

"ອານົນ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງຈັດການຮັກສາ ຄຸ້ມຄອງ ປ້ອງກັນພຣະອະຣະຫັນທັງຫຼາຍໂດຍຊອບທຳດ້ວຍຕັ້ງໃຈວ່າ "ເຮັດແນວໃດ ພຣະອະຣະຫັນທີ່ຍັງບໍ່ມາ ເພິ່ງມາສູ່ແວ່ນແຄວ້ນຂອງເຮົາ ແລະທ່ານທີ່ມາແລ້ວເພິ່ງຢູ່ຢ່າງຜາສຸກ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງວັດສະກາຣະພາມ ມະຫາອຳມາດແຄວ້ນມະຄົດວ່າ "ພາມ ສະໄໝໜຶ່ງ ເຮົາຢູ່ທີ່ສາຣັນທະເຈດີ ເຂດເມືອງເວສາລີ ໄດ້ສະແດງ ອະປະຣິຫານິຍະທຳ ໗ ປະການນີ້ແກ່ພວກເຈົ້າວັດຊີ ພວກເຈົ້າວັດຊີເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງ

ດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພວກເຈົ້າວັດຊີຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່

ວັດສະກາຣະພາມ ມະຫາອຳມາດແຄວັ້ນມະຄົດຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ພວກເຈົ້າວັດຊີມີອະປະຣິຫານິຍະທຳແມ່ນພຽງປະການດຽວ ກໍເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ບໍ່ຈຳຕ້ອງກ່າວວ່າມີຄົບທັງ ໗ ປະການ ຂ້າແດ່ ທ່ານພຣະໂຄດົມ ພຣະຣາຊາແຫ່ງແຄວັ້ນມະຄົດ ພຣະນາມວ່າອະຊາດສັດຕູ ເວເທຫິບຸດ ບໍ່ຄວນເຮັດສົງຄາມກັບພວກເຈົ້າວັດຊີ ນອກຈາກຈະໃຊ້ວິທີປອງດອງທາງການທູດ ຫຼື ບໍ່ກໍເຮັດໃຫ້ແຕກສາມັກຄີກັນ ຂ້າແດ່ທ່ານພຣະໂຄດົມ ຖ້າຢ່າງນັ້ນ ບັດນີ້ ຂ້າພຣະອົງຂໍທູນລາກັບ ເພາະມີກິດຫຼາຍ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ຈາກນັ້ນ ວັດສະກາຣະພາມ ມະຫາອຳມາດແຄວັ້ນມະຄົດມີໃຈຍິນດີ ຊື່ນຊົມພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າລຸກຈາກບ່ອນນັ່ງແລ້ວຈາກໄປ

**ວັດສະກາຣະສູດທີ ໔ ຈົບ**

# ໕. ປະຖະມະສັດຕະກະສູດ

## ວ່າດ້ວຍອະປະຣິຫານິຍະທຳ ໗ ປະການ ສູດທີ ໑

[໔໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພູຄິດຊະກູດ ເຂດເມືອງຣາດຊະຄຶ ໃນທີ່ນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ ໗ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ອະປະຣິຫານິຍະທຳ ໗ ປະການ ອັນໃດແດ່ ຄື

໑. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງ ໝັ່ນປະຊຸມກັນເນືອງນິດ ປະຊຸມກັນຫຼາຍຄັ້ງ

໒. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງພ້ອມພຽງກັນປະຊຸມ ພ້ອມພຽງກັນເລີກປະຊຸມ ແລະພ້ອມພຽງກັນເຮັດກິດທີ່ສົງເພິ່ງເຮັດ

໓. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ບັນຍັດສິ່ງທີ່ເຮົາບໍ່ໄດ້ບັນຍັດໄວ້ ບໍ່ລົ້ມລ້າງສິ່ງທີ່ເຮົາບັນຍັດໄວ້ແລ້ວ ຖືປະຕິບັດໝັ້ນໃນສິກຂາບົດທີ່ບັນຍັດໄວ້

໔. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸຜູ້ເປັນເຖຣະ ເປັນຣັດຕັນຍູ ບວດມາດົນ ເປັນສັງຄະບິດອນ ເປັນສັງຄະປະຣິຍາຍະກະ ແລະສຳຄັນຖ້ອຍຄຳຂອງທ່ານເຫຼົ່ານັ້ນວ່າເປັນສິ່ງຄວນຮັບຟັງ

໕. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ຕົກຢູ່ໃນອຳນາດແຫ່ງຕັນຫາກໍ່ໃຫ້ເກີດພົບໃໝ່ ທີ່ເກີດຂຶ້ນແລ້ວ

໖. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ມຸ້ງຫວັງເສນາສະນະປ່າ

໗. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຕັ້ງສະຕິໝັ້ນໄວ້ໃນພາຍໃນວ່າ "ເຮັດແນວໃດ ເພື່ອນພົມມະຈາຣີທັງຫຼາຍຜູ້ມີສີນງາມທີ່ຍັງບໍ່ມາ ຂໍໃຫ້ມາ ແລະທ່ານທີ່ມາແລ້ວ ເພິ່ງຢູ່ຢ່າງຜາສຸກ"

ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳ ທັງ ໗ ປະການ ນີ້ຢູ່"

**ປະຖະມະສັດຕະກະສູດທີ ໓ ຈົບ**

## ໔. ທຸຕິຍະສັດຕະກະສູດ

### ວ່າດ້ວຍອະປະຣິຫານິຍະທຳ ໗ ປະການ ສູດທີ ໔

[໒໔] ພິກຂຸທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ ໗ ປະການແກ່ທ່ານທັງຫຼາຍ ຯລຯ

ອະປະຣິຫານິຍະທຳ ໗ ປະການ ອັນໃດແດ່ ຄື

໑. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກການງານ ບໍ່ຍິນດີໃນວຽກງານ ບໍ່ໝັ່ນປະກອບຄວາມເປັນຜູ້ມັກວຽກງານ

໔. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກການ ໂອ້ລົມ ຯລຯ

໓. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກການນອນຫຼັບ ຯລຯ

໔. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມັກການຄຸກຄີດ້ວຍໝູ່ ຯລຯ

໕. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນຜູ້ບໍ່ມີຄວາມປາຖະໜາຊົ່ວ ບໍ່ຕົກໄປສູ່ອຳນາດຂອງຄວາມປາຖະໜາຊົ່ວ

໖. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ມີມິດຊົ່ວ ບໍ່ມີສະຫາຍຊົ່ວ ບໍ່ມີເພື່ອນຊົ່ວ

໗. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງບໍ່ເຖິງຄວາມຢຸດຊະງັກໃນລະຫວ່າງພຽງເພາະໄດ້ບັນລຸຄຸນວິເສດຊັ້ນຕ່ຳ

ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່

**ທຸຕິຍະສັດຕະກະສູດທີ ໔ ຈົບ**

# ໕. ຕະຕິຍະສັດຕະກະສູດ

## ວ່າດ້ວຍອະປະຣິຫານິຍະທຳ ໗ ປະການ ສູດທີ ໓

[໒໕] ພິກຂຸທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ ໗ ປະການແກ່ທ່ານທັງຫຼາຍ ຯລຯ

ອະປະຣິຫານິຍະທຳ ໗ ປະການ ອັນໃດແດ່ ຄື

໑. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີສັດທາ

໔. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີຫິຣິ

໓. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີໂອດຕັບປະ

໔. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງເປັນພະຫູສູດ

໕. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຜາຣົບຄວາມພຽນ

໖. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີສະຕິຕັ້ງໝັ້ນ

໗. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີປັນຍາ

ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່

**ຕະຕິຍະສັດຕະກະສູດທີ ໕ ຈົບ**

# ໖. ໂພດຊັງຄະສູດ

## ວ່າດ້ວຍໂພດຊົງທີ່ເປັນອະປະຣິຫານິຍະທຳ

[໒໖] ພິກຂຸທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ ໗ ປະການແກ່ທ່ານທັງຫຼາຍ ຯລຯ

ອະປະຣິຫານິຍະທຳ ໗ ປະການ ອັນໃດແດ່ ຄື

໑. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນສະຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຣະນຶກໄດ້)

໒. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນທຳມະວິຈະຍະສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມເຟັ້ນທຳ)

໓. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນວິຣິຍະສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ)

໔. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນປີຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ)

໕. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນປັດສັດທິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມສະງົບກາຍສະງົບໃຈ)

໖. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນສະມາທິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ)

໗. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນອຸເປກຂາສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມວາງໃຈເປັນກາງ)

ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່

**ໂພດຊັງຄະສູດທີ ໖ ຈົບ**

# ໗. ສັນຍາສູດ

## ວ່າດ້ວຍສັນຍາທີ່ເປັນອະປະຣິຫານິຍະທຳ

[໔໗] ພິກຂຸທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ ໗ ປະການແກ່ທ່ານ ທັງຫຼາຍ

໗໘໗

ອະປະຣິຫານິຍະທຳ ໗ ປະການ ອັນໃດແດ່ ຄື

໑. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)

໒. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາແຫ່ງທຳທັງປວງ)

໓. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)

໔. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນອາທີນະວະສັນຍາ (ກຳນົດໝາຍໂທດທຸກຂອງກາຍອັນມີຄວາມເຈັບໄຂ້ຕ່າງໆ)

໕. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)

໖. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປະນີດ)

໗. ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງຈະເລີນນິໂຣທະສັນຍາ (ກຳນົດໝາຍນິໂຣດວ່າເປັນທຳລະອຽດປະນີດ)

ພິກຂຸທັງຫຼາຍ ພິກຂຸເພິ່ງຫວັງໄດ້ແຕ່ຄວາມຈະເລີນຢ່າງດຽວ ບໍ່ມີຄວາມເສື່ອມເລີຍ ຕາບເທົ່າທີ່ພິກຂຸຍັງມີອະປະຣິຫານິຍະທຳທັງ ໗ ປະການນີ້ຢູ່ ແລະໃສ່ໃຈອະປະຣິຫານິຍະທຳ ທັງ ໗ ປະການ ນີ້ຢູ່

**ສັນຍາສູດທີ ໗ ຈົບ**

# ໘. ປະຖະມະປະຣິຫານີສູດ

## ວ່າດ້ວຍທຳທີ່ເປັນເຫດແຫ່ງຄວາມເສື່ອມ ສູດທີ ໑

[໔໘] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

ທຳ ໗ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກ ວຽກງານ
໒. ຄວາມເປັນຜູ້ມັກການ ໂອ້ລົມ
໓. ຄວາມເປັນຜູ້ມັກການ ນອນຫຼັບ
໔. ຄວາມເປັນຜູ້ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ
໗. ກິດທີ່ສົງຈະຕ້ອງເຮັດມີຢູ່ໃນສົງ ພິກຂຸຜູ້ເປັນເສຂະບໍ່ເຫັນປະຈັກໃນກິດນັ້ນຢ່າງນີ້ວ່າ "ພຣະເຖຣະຜູ້ເປັນຣັດຕັນຍູ ບວດມາດົນ ເປັນຜູ້ຮັບພາຣະມີຢູ່ໃນສົງ ທ່ານເຫຼົ່ານັ້ນຈັກຜາກົດດ້ວຍກິດນັ້ນ" ຈຶ່ງຕ້ອງຂວນຂວາຍດ້ວຍຕົນເອງ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ ພິກຂຸທັງຫຼາຍ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

ທຳ ໗ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ບໍ່ມັກ ວຽກງານ
໒. ຄວາມເປັນຜູ້ບໍ່ມັກການ ໂອ້ລົມ
໓. ຄວາມເປັນຜູ້ບໍ່ມັກການ ນອນຫຼັບ
໔. ຄວາມເປັນຜູ້ບໍ່ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ
໗. ກິດທີ່ສົງຈະຕ້ອງເຮັດມີຢູ່ໃນສົງ ພິກຂຸຜູ້ເປັນເສຂະເຫັນປະຈັກໃນກິດນັ້ນຢ່າງນີ້ວ່າ "ພຣະເຖຣະຜູ້ເປັນຣັດຕັນຍູ ບວດມາດົນ ເປັນຜູ້ຮັບພາຣະມີຢູ່ໃນສົງ ທ່ານເຫຼົ່ານັ້ນຈັກຜາກົດດ້ວຍກິດນັ້ນ" ຈຶ່ງບໍ່ຕ້ອງຂວນຂວາຍດ້ວຍຕົນເອງ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

**ປະຖະມະປະຣິຫານິສູດທີ ໗ ຈົບ**

# ໘. ທຸຕິຍະປະຣິຫານິສູດ

## ວ່າດ້ວຍທຳທີ່ເປັນເຫດແຫ່ງຄວາມເສື່ອມ ສູດທີ ໘

[໒໘] ພິກຂຸທັງຫຼາຍ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ອຸປາສົກ

ທຳ ໗ ປະການ ອັນໃດແດ່ ຄື

໑. ລະເລີຍການຢ້ຽມຢາມພິກຂຸ
໒. ປະຖິ້ມການຟັງສັດທຳ
໓. ບໍ່ສຶກສາໃນອະທິສິນ
໔. ບໍ່ມີຄວາມເຫຼື້ອມໃສຫຼາຍໃນພິກຂຸຜູ້ເປັນເຖຣະ ຜູ້ເປັນນະວະກະ ແລະຜູ້ເປັນມັດຊິມະ
໕. ຟັງທຳຢ່າງຄອຍຖ້າຄິດໂຕ້ແຍ້ງເພ່ງໂທດ
໖. ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້
໗. ທຳອຸປະກາຣະນອກສາດສະໜາກ່ອນ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ອຸປາສົກ
ພິກຂຸທັງຫຼາຍ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ອຸປາສົກ
ທຳ ໗ ປະການ ອັນໃດແດ່ ຄື

໑. ບໍ່ລະເລີຍການຢ້ຽມຢາມພິກຂຸ
໔. ບໍ່ລະຖິ້ມການຟັງສັດທຳ
໓. ສຶກສາໃນອະທິສິນ
໔. ມີຄວາມເຫຼື້ອມໃສຫຼາຍໃນພິກຂຸຜູ້ເປັນເຖຣະ ຜູ້ເປັນນະວະກະ ແລະຜູ້ເປັນ
ມັດຊິມະ
໕. ຟັງທຳຢ່າງບໍ່ຄອຍຖ້າຄິດໂຕ້ແຍ້ງເພ່ງໂທດ
໖. ບໍ່ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້
໗. ທຳອຸປະກາຣະໃນສາດສະໜານີ້ກ່ອນ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ອຸປາສິກາ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ອຸປາສິກາໃດລະເລີຍການຢ້ຽມຢາມພິກຂຸຜູ້ອົບຮົມຕົນ
ລະຖິ້ມການຟັງອະຣິຍະທຳ ບໍ່ສຶກສາໃນອະທິສິນ
ບໍ່ມີຄວາມເຫຼື້ອມໃສຍິ່ງຂຶ້ນໃນພິກຂຸທັງຫຼາຍ
ປາຖະໜາຟັງສັດທຳຢ່າງຄອຍຖ້າຄິດໂຕ້ແຍ້ງ
ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້
ແລະທຳອຸປະກາຣະນອກສາດສະໜາກ່ອນ
ອຸປາສິການັ້ນຜູ້ເສບທຳ ໗ ປະການ
ອັນເປັນເຫດແຫ່ງຄວາມເສື່ອມທີ່ເຮົາສະແດງດີແລ້ວນີ້
ຍ່ອມເສື່ອມຈາກສັດທຳ
ສ່ວນອຸປາສິກາໃດບໍ່ລະເລີຍການຢ້ຽມຢາມພິກຂຸຜູ້ອົບຮົມຕົນ
ບໍ່ລະຖິ້ມການຟັງອະຣິຍະທຳ ສຶກສາໃນອະທິສິນ
ມີຄວາມເຫຼື້ອມໃສຍິ່ງຂຶ້ນໃນພິກຂຸທັງຫຼາຍ
ປາຖະໜາຟັງສັດທຳຢ່າງບໍ່ຄອຍຖ້າຄິດໂຕ້ແຍ້ງ
ບໍ່ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້
ແລະທຳອຸປະກາຣະໃນສາດສະໜານີ້ກ່ອນ
ອຸປາສິການັ້ນຜູ້ເສບທຳ ໗ ປະການ
ອັນບໍ່ເປັນເຫດແຫ່ງຄວາມເສື່ອມທີ່ເຮົາສະແດງດີແລ້ວນີ້
ຍ່ອມບໍ່ເສື່ອມຈາກສັດທຳ

**ທຸຕິຍະປະຣິຫານິສູດທີ ໘ ຈົບ**

# ໑໐. ວິປັດຕິສູດ

## ວ່າດ້ວຍວິບັດແລະສົມບັດຂອງອຸປາສົກ

[໘໐] ພິກຂຸທັງຫຼາຍ ວິບັດຂອງອຸປາສົກ ໗ ປະການນີ້ ຯລຯ

ພິກຂຸທັງຫຼາຍ ສົມບັດຂອງອຸປາສົກ ໗ ປະການນີ້ ຯລຯ

**ວິປັດຕິສູດທີ ໑໐ ຈົບ**

# ໑໑. ປະຣາພະວະສູດ

## ວ່າດ້ວຍຄວາມເສື່ອມແລະຄວາມຈະເລີນຂອງອຸປາສົກ

[໘໑] ພິກຂຸທັງຫຼາຍ ຄວາມເສື່ອມຂອງອຸປາສົກ ໗ ປະການນີ້ ຯລຯ

ພິກຂຸທັງຫຼາຍ ຄວາມຈະເລີນຂອງອຸປາສົກ ໗ ປະການນີ້

ຄວາມຈະເລີນຂອງອຸປາສົກ ໗ ປະການ ອັນໃດແດ່ ຄື

໑. ບໍ່ລະເລີຍການຢ້ຽມຢາມພິກຂຸ
໒. ບໍ່ລະຖິ້ມການຟັງສັດທຳ
໓. ສຶກສາໃນອະທິສີນ
໔. ມີຄວາມເຫຼື້ອມໃສຫຼາຍໃນພິກຂຸຜູ້ເປັນເຖຣະ ຜູ້ເປັນນະວະກະ ແລະຜູ້ເປັນມັດຊິມະ
໕. ຟັງທຳຢ່າງບໍ່ຄອຍຖ້າຄິດໂຕ້ແຍ້ງເພ່ງໂທດ
໖. ບໍ່ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້
໗. ທຳອຸປະກາຣະໃນສາດສະໜານີ້ກ່ອນ

ພິກຂຸທັງຫຼາຍ ຄວາມຈະເລີນຂອງອຸປາສົກ ໗ ປະການນີ້ແລ

ອຸປາສົກໃດລະເລີຍການຢ້ຽມຢາມພິກຂຸຜູ້ອົບຮົມຕົນ
ລະຖິ້ມການຟັງອະຣິຍະທຳ ບໍ່ສຶກສາໃນອະທິສີນ
ບໍ່ມີຄວາມເຫຼື້ອມໃສຍິ່ງຂຶ້ນໃນພິກຂຸທັງຫຼາຍ

ປາຖະໜາຟັງສັດທຳຢ່າງຄອຍຖ້າຄິດໂຕ້ແຍ້ງ

ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້

ແລະທຳອຸປະກາຣະນອກສາດສະໜາກ່ອນ

ອຸປາສິການັ້ນຜູ້ເສບທຳ ໗ ປະການ

ອັນເປັນເຫດແຫ່ງຄວາມເສື່ອມທີ່ເຮົາສະແດງດີແລ້ວນີ້ແລ

ຍ່ອມເສື່ອມຈາກສັດທຳ

ສ່ວນອຸປາສິກາໃດບໍ່ລະເລີຍການຢ້ຽມຢາມພິກຂຸຜູ້ອົບຮົມຕົນ

ບໍ່ລະຖິ້ມການຟັງອະຣິຍະທຳ ສຶກສາໃນອະທິສິນ

ມີຄວາມເຫຼື້ອມໃສຍິ່ງຂຶ້ນໃນພິກຂຸທັງຫຼາຍ

ປາຖະໜາຟັງສັດທຳຢ່າງບໍ່ຄອຍຖ້າຄິດໂຕ້ແຍ້ງ

ບໍ່ສະແຫວງຫາຜູ້ຮັບທັກຂິນານອກສາດສະໜານີ້

ແລະທຳອຸປະກາຣະໃນສາດສະໜານີ້ກ່ອນ

ອຸປາສິການັ້ນຜູ້ເສບທຳ ໗ ປະການ

ອັນບໍ່ເປັນເຫດແຫ່ງຄວາມເສື່ອມທີ່ເຮົາສະແດງດີແລ້ວນີ້ແລ

ຍ່ອມບໍ່ເສື່ອມຈາກສັດທຳ

**ປະຣາພະວະສູດທີ ໑໑ ຈົບ**

**ວັດຊີສັດຕະກະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ສາຣັນທະສູດ | ໒. ວັດສະກາຣະສູດ |
| ໓. ປະຖະມະສັດຕະກະສູດ | ໔. ທຸຕິຍະສັດຕະກະສູດ |
| ໕. ຕະຕິຍະສັດຕະກະສູດ | ໖. ໂພດຊັງຄະສູດ |
| ໗. ສັນຍາສູດ | ໘. ປະຖະມະປະຣິຫານິສູດ |
| ໙. ທຸຕິຍະປະຣິຫານິສູດ | ໑໐. ວິປັດຕິສູດ |
| ໑໑. ປະຣາພະວະສູດ | |

# ໔. ເທວະຕາວັກ

## ໝວດວ່າດ້ວຍເທວະດາ

# ໑. ອັບປະມາທະຄາຣະວະສູດ

## ວ່າດ້ວຍຄວາມເຄົາລົບໃນຄວາມບໍ່ປະໝາດ

[໓໔] ຄັ້ງນັ້ນ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ທຳ ໗ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ສະມາທິ
໖. ຄວາມເປັນຜູ້ມີຄວາມເຄົາລົບໃນ ຄວາມບໍ່ປະໝາດ
໗. ຄວາມເປັນຜູ້ມີຄວາມເຄົາລົບໃນ ປະຕິສັນຖານ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ"

ເມື່ອເທວະດານັ້ນ ໄດ້ຂາບທູນດັ່ງນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ເມື່ອເທວະດານັ້ນຮູ້ວ່າ "ພຣະສາດສະດາຊົງພໍພຣະທະໄທເຮົາ" ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນ ແລ້ວຫາຍໄປໃນທີ່ນັ້ນ

ເມື່ອຄືນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າມາຫາເຮົາເຖິງທີ່ຢູ່ ໄຫວ້ເຮົາແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ທຳ ໗ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ສະມາທິ
໖. ຄວາມເປັນຜູ້ມີຄວາມເຄົາລົບໃນ ຄວາມບໍ່ຜະໝາດ
໗. ຄວາມເປັນຜູ້ມີຄວາມເຄົາລົບໃນ ປະຕິສັນຖານ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ພິກຂຸທັງຫຼາຍ ເທວະດານັ້ນ ເມື່ອກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາ ກະທຳປະທັກຂິນແລ້ວ ຫາຍໄປໃນບ່ອນນັ້ນແລ

ພິກຂຸມີຄວາມເຄົາລົບໃນສາດສະດາ
ມີຄວາມເຄົາລົບໃນທຳ
ມີຄວາມເຄົາລົບຢ່າງແຮງກ້າໃນສົງ
ມີຄວາມເຄົາລົບໃນສະມາທິ ມີຄວາມພຽນ
ມີຄວາມເຄົາລົບຢ່າງແຮງກ້າໃນສິກຂາ
ມີຄວາມເຄົາລົບໃນຄວາມບໍ່ຜະໝາດ
ມີຄວາມເຄົາລົບໃນປະຕິສັນຖານ

ເປັນຜູ້ບໍ່ຄວນເສື່ອມ ດຳຣົງຢູ່ໃກ້ນິບພານຢ່າງແນ່ນອນ

**ອັບປະມາທະຄາຣະວະສູດທີ ໑ ຈົບ**

# ໒. ຫິຣິຄາຣະວະສູດ

## ວ່າດ້ວຍຄວາມເຄົາລົບໃນຫິຣິ

[໓໓] ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງມີວັນນະງົດງາມຫຼາຍ ເປັ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າມາຫາເຮົາເຖິງທີ່ຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ

ຂ້າແດ່ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ທຳ ໗ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ສະມາທິ
໖. ຄວາມເປັນຜູ້ມີຄວາມເຄົາລົບໃນ ຫິຣິ (ຄວາມອາຍບາບ)
໗. ຄວາມເປັນຜູ້ມີຄວາມເຄົາລົບໃນ ໂອດຕັບປະ (ຄວາມຢ້ານບາບ)

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ ພິກຂຸ ພິກຂຸທັງຫຼາຍ ເທວະດານັ້ນ ເມື່ອກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາກະທຳປະທັກຂິນແລ້ວຫາຍ ໄປ ໃນບ່ອນນັ້ນແລ

ພິກຂຸມີຄວາມເຄົາລົບໃນສາດສະດາ
ມີຄວາມເຄົາລົບໃນທຳ
ມີຄວາມເຄົາລົບຢ່າງແຮງກ້າໃນສົງ
ມີຄວາມເຄົາລົບໃນສະມາທິ ມີຄວາມພຽນ
ມີຄວາມເຄົາລົບຢ່າງແຮງກ້າໃນສິກຂາ
ເຖິງພ້ອມດ້ວຍຫິຣິແລະໂອດຕັບປະ
ມີຄວາມຢຳເກງ ມີຄວາມເຄົາລົບ

ເປັນຜູ້ບໍ່ຄວນເສື່ອມ ດຳຣົງຢູ່ໃກ້ນິບພານຢ່າງແນ່ນອນ

**ຫິຣິຄາຣະວະສູດທີ ໒ ຈົບ**

# ໓. ປະຖະມະໂສວະຈັດສະຕາສູດ

## ວ່າດ້ວຍຄວາມເປັນຜູ້ວ່າງ່າຍ ສູດທີ ໑

[໓໒] ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງ໗ລ໗ ໄດ້ກ່າວກັບ ເຮົາດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ ພິກຂຸ

ທຳ ໗ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ
໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ສະມາທິ
໖. ຄວາມເປັນຜູ້ວ່າງ່າຍ
໗. ຄວາມເປັນຜູ້ມີກັນລະຍານະມິດ (ມິດດີ)

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ພິກຂຸທັງຫຼາຍ ເທວະດານັ້ນເມື່ອກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາ ກະທຳປະທັກຂິນແລ້ວຫາຍໄປໃນບ່ອນນັ້ນແລ

ພິກຂຸມີຄວາມເຄົາລົບໃນສາດສະດາ
ມີຄວາມເຄົາລົບໃນທຳ
ມີຄວາມເຄົາລົບຢ່າງແຮງກ້າໃນສົງ
ມີຄວາມເຄົາລົບໃນສະມາທິ ມີຄວາມພຽນ
ມີຄວາມເຄົາລົບຢ່າງແຮງກ້າໃນສິກຂາ
ມີກັນລະຍານະມິດ ເປັນຜູ້ວ່າງ່າຍ
ມີຄວາມຢຳເກງ ມີຄວາມເຄົາລົບ
ເປັນຜູ້ບໍ່ຄວນເສື່ອມ ດຳຣົງຢູ່ໃກ້ນິບພານຢ່າງແນ່ນອນ

**ປະຖະມະໂສວະຈັດສະຕາສູດທີ ໓ ຈົບ**

# ໔. ທຸຕິຍະໂສວະຈັດສະຕາສູດ

## ວ່າດ້ວຍຄວາມເປັນຜູ້ວ່າງ່າຍ ສູດທີ ໔

[໓໕] ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາອົງໜຶ່ງ ໆລໆ ໄດ້ກ່າວ ກັບເຮົາດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ ທຳ ໗ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສາດສະດາ

໒. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະທຳ
໓. ຄວາມເປັນຜູ້ມີຄວາມເຄົາລົບໃນ ພຣະສົງ
໔. ຄວາມເປັນຜູ້ມີຄວາມເຄົາລົບໃນ ສິກຂາ
໕. ຄວາມເປັນຜູ້ມີຄວາມເຄົາລົບໃນ ສະມາທິ
໖. ຄວາມເປັນຜູ້ວ່າງ່າຍ
໗. ຄວາມເປັນຜູ້ມີກັນລະຍານະມິດ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳ ໗ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸ

ພິກຂຸທັງຫຼາຍ ເທວະດານັ້ນເມື່ອກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາ ກະທຳປະທັກຂິນແລ້ວ ຫາຍໄປໃນບ່ອນນັ້ນແລ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຍ່ອມຮູ້ແຈ້ງເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້ວ່າ

ພິກຂຸໃນພຣະທຳວິໄນນີ້

໑. ຕົນເອງເປັນຜູ້ມີຄວາມເຄົາລົບໃນພຣະສາດສະດາ ສັນເສີນຄວາມເປັນຜູ້ມີຄວາມເຄົາລົບໃນພຣະສາດສະດາ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາໃຫ້ມີຄວາມເຄົາລົບໃນພຣະສາດສະດາ ທັງປະກາດຄຸນທີ່ມີຈິງຂອງພິກຂຸເຫຼົ່າອື່ນຜູ້ມີຄວາມເຄົາລົບໃນພຣະສາດສະດາຕາມການອັນຄວນ

໒. ຕົນເອງເປັນຜູ້ມີຄວາມເຄົາລົບໃນພຣະທຳ ฯລฯ
໓. ຕົນເອງເປັນຜູ້ມີຄວາມເຄົາລົບໃນພຣະສົງ ฯລฯ
໔. ຕົນເອງເປັນຜູ້ມີຄວາມເຄົາລົບໃນສິກຂາ ฯລฯ
໕. ຕົນເອງເປັນຜູ້ມີຄວາມເຄົາລົບໃນສະມາທິ ฯລฯ
໖. ຕົນເອງເປັນຜູ້ວ່າງ່າຍ ฯລฯ

໗. ຕົນເອງເປັນຜູ້ມີກັນລະຍານະມິດ ສັນເສີນຄວາມເປັນຜູ້ມີກັນລະຍານະມິດ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີກັນລະຍານະມິດໃຫ້ເປັນຜູ້ມີກັນລະຍານະມິດ ທັງປະກາດຄຸນທີ່ມີຈິງຂອງພິກຂຸເຫຼົ່າອື່ນຜູ້ມີກັນລະຍານະມິດຕາມການອັນຄວນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍ່ອມຮູ້ແຈ້ງເນື້ອຄວາມແຫ່ງພຣະພາສິດທີ່ ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ດີແລ້ວ ສາຣີບຸດ ດີແທ້ ສາຣີບຸດ ທ່ານຮູ້ແຈ້ງເນື້ອຄວາມແຫ່ງພາສິດທີ່ເຮົາກ່າວໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້

ສາຣີບຸດ ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ມີຄວາມເຄົາລົບໃນສາດສະດາ ສັນເສີນຄວາມເປັນຜູ້ມີຄວາມເຄົາລົບໃນສາດສະດາ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີຄວາມເຄົາລົບໃນສາດສະດາໃຫ້ມີຄວາມເຄົາລົບໃນສາດສະດາ ທັງປະກາດຄຸນທີ່ມີຈິງຂອງພິກຂຸເຫຼົ່າອື່ນຜູ້ມີຄວາມເຄົາລົບໃນສາດສະດາຕາມການອັນຄວນ

໒. ຕົນເອງເປັນຜູ້ມີຄວາມເຄົາລົບໃນທຳ ຯລຯ
໓. ຕົນເອງເປັນຜູ້ມີຄວາມເຄົາລົບໃນສົງ ຯລຯ
໔. ຕົນເອງເປັນຜູ້ມີຄວາມເຄົາລົບໃນສິກຂາ ຯລຯ
໕. ຕົນເອງເປັນຜູ້ມີຄວາມເຄົາລົບໃນສະມາທິ ຯລຯ
໖. ຕົນເອງເປັນຜູ້ວ່າງ່າຍ ຯລຯ

໗. ຕົນເອງເປັນຜູ້ມີກັນລະຍານະມິດ ສັນເສີນຄວາມເປັນຜູ້ມີກັນລະຍານະມິດ ຊັກຊວນພິກຂຸເຫຼົ່າອື່ນຜູ້ບໍ່ມີກັນລະຍານະມິດໃຫ້ເປັນຜູ້ມີກັນລະຍານະມິດ ທັງປະກາດຄຸນທີ່ມີຈິງຂອງພິກຂຸເຫຼົ່າອື່ນຜູ້ມີກັນລະຍານະມິດຕາມການອັນຄວນ

ສາຣີບຸດ ທ່ານເພິ່ງຮູ້ເນື້ອຄວາມແຫ່ງພາສິດທີ່ເຮົາກ່າວໄວ້ໂດຍຫຍໍ້ນີ້ ໄດ້ໂດຍພິດສະດານແນວນີ້ເທີ້ນ

**ທຸຕິຍະ ໂສວະຈັດສະຕາສູດທີ ໔ ຈົບ**

# ໕. ປະຖະມະມິດຕະສູດ

## ວ່າດ້ວຍອົງແຫ່ງມິດ ສູດທີ ໑

[໓໖] ພິກຂຸທັງຫຼາຍ ມິດປະກອບດ້ວຍອົງ ໗ ປະການ ເປັນຜູ້ຄວນເສບ

ອົງ ໗ ປະການ ອັນໃດແດ່ ຄື

໑. ໃຫ້ສິ່ງທີ່ ໃຫ້ໄດ້ຍາກ
໒. ເຮັດສິ່ງທີ່ ເຮັດໄດ້ຍາກ
໓. ອົດທົນຖ້ອຍຄຳທີ່ອົດທົນໄດ້ຍາກ

໔. ເປີດເຜີຍຄວາມລັບແກ່ເພື່ອນ
໕. ປິດຄວາມລັບຂອງເພື່ອນ
໖. ບໍ່ລະຖິ້ມໃນຍາມວິບັດ
໗. ເມື່ອເພື່ອນສິ້ນໂພຄະສົມບັດກໍບໍ່ດູໝິ່ນ

ພິກຂຸທັງຫຼາຍ ມິດປະກອບດ້ວຍອົງ ໗ ປະການນີ້ແລ ເປັນຜູ້ຄວນເສບ

ມິດຍ່ອມໃຫ້ສິ່ງທີ່ໃຫ້ໄດ້ຍາກ ເຮັດສິ່ງທີ່ເຮັດໄດ້ຍາກ
ອົດທົນຄຳຫຍາບແມ່ນທີ່ອົດທົນໄດ້ຍາກ
ເປີດເຜີຍຄວາມລັບແກ່ເພື່ອນ ປິດຄວາມລັບຂອງເພື່ອນ
ບໍ່ລະຖິ້ມໃນຍາມວິບັດ
ເມື່ອເພື່ອນສິ້ນໂພຄະສົມບັດກໍບໍ່ດູໝິ່ນ
ໃນໂລກນີ້ ຖານະເຫຼົ່ານີ້ມີຢູ່ໃນບຸກຄົນໃດ
ບຸກຄົນນັ້ນຈັດວ່າເປັນມິດ
ຜູ້ຕ້ອງການຈະຄົບມິດ ຄວນຄົບມິດເຊັ່ນນັ້ນ

**ປະຖະມະມິດຕະສູດທີ ໕ ຈົບ**

# ໖. ທຸຕິຍະມິດຕະສູດ

## ວ່າດ້ວຍອົງແຫ່ງມິດ ສູດທີ ໘

[໓໗] ພິກຂຸທັງຫຼາຍ ມິດປະກອບດ້ວຍອົງ ໗ ປະການ ເປັນຜູ້ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ແມ່ນຈະຖືກຂັບໄລ່ກໍຕາມ

ອົງ ໗ ປະການ ອັນໃດແດ່ ຄື

໑. ເປັນທີ່ຮັກເປັນທີ່ພໍໃຈ[໑]
໒. ເປັນທີ່ຍົກຍ້ອງ
໓. ເປັນທີ່ເຄົາລົບ
໔. ເປັນນັກເວົ້າ[໒]
໕. ເປັນຜູ້ອົດທົນຕໍ່ຖ້ອຍຄຳ[໓]
໖. ເປັນຜູ້ເວົ້າຖ້ອຍຄຳເລິກເຊິ່ງໄດ້[໔]
໗. ບໍ່ຊັກນຳໃນອະຖານະ[໕]

ພິກຂຸທັງຫຼາຍ ມິດປະກອບດ້ວຍອົງ ໗ ປະການນີ້ ເປັນຜູ້ຄວນເສບ ຄວນຄົບ ຄວນເຂົ້າໄປນັ່ງໃກ້ ແມ່ນຈະຖືກຂັບໄລ່ກໍຕາມ

ມິດເປັນທີ່ຮັກ ເປັນທີ່ເຄົາລົບ ເປັນທີ່ຍົກຍ້ອງ
ເປັນນັກເວົ້າ ເປັນຜູ້ອົດທົນຕໍ່ຖ້ອຍຄຳ
ເວົ້າຖ້ອຍຄຳເລິກເຊິ່ງໄດ້ ບໍ່ຊັກນຳໃນອະຖານະ
ໃນໂລກນີ້ ຖານະເຫຼົ່ານີ້ມີຢູ່ໃນບຸກຄົນໃດ
ບຸກຄົນນັ້ນຈັດວ່າເປັນມິດຜູ້ມຸ້ງປະໂຫຍດແລະອະນຸເຄາະ
ຜູ້ຕ້ອງການຈະຄົບມິດ ຄວນຄົບມິດເຊັ່ນນັ້ນ
ແມ່ນຈະຖືກຂັບໄລ່ກໍຕາມ

**ທຸຕິຍະມິດຕະສູດທີ ໖ ຈົບ**

# ໗. ປະຖະມະປະຕິສຳພິທາສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ບັນລຸປະຕິສຳພິທາ ສູດທີ ໑

[໓໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ອີກບໍ່ດົນປານໃດ ກໍຈະເຮັດໃຫ້ແຈ້ງປະຕິສຳພິທາ[໑] ໔ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ຈິດຂອງເຮົານີ້ຫົດຫູ່"
໒. ຮູ້ແຈ້ງຈິດທໍ້ແທ້ພາຍໃນ ຕາມຄວາມເປັນຈິງວ່າ "ຈິດຂອງເຮົາທໍ້ແທ້ພາຍໃນ"
໓. ຮູ້ແຈ້ງຈິດຟຸ້ງຊ່ານໄປພາຍນອກ ຕາມຄວາມເປັນຈິງວ່າ "ຈິດຂອງເຮົາຟຸ້ງຊ່ານໄປພາຍນອກ"
໔. ຮູ້ແຈ້ງຕາມຄວາມເປັນຈິງວ່າ ເວທະນາຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດດັບໄປ
໕. ຮູ້ແຈ້ງຕາມຄວາມເປັນຈິງວ່າ ສັນຍາຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດດັບໄປ
໖. ຮູ້ແຈ້ງຕາມຄວາມເປັນຈິງວ່າ ວິຕົກຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດດັບໄປ
໗. ກຳນົດດີ ມະນະສິການດີ ຊົງຈຳດີ ແທງຕະຫຼອດດີດ້ວຍປັນຍາເຊິ່ງນິມິດໃນທຳທີ່ເປັນສັບປາຍະ ແລະອະສັບປາຍະ ທີ່ຊົ່ວແລະປະນີດ ທີ່ມີສ່ວນດຳແລະຂາວ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ອີກບໍ່ດົນປານໃດ ກໍຈະເຮັດໃຫ້ແຈ້ງປະຕິສຳພິທາ ໔ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່

**ປະຖະມະປະຕິສຳພິທາສູດທີ ໗ ຈົບ**

# ໗. ທຸຕິຍະປະຕິສຳພິທາສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ບັນລຸປະຕິສຳພິທາ ສູດທີ ໒

[໓໙] ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໗ ປະການ ຈຶ່ງເຮັດໃຫ້ແຈ້ງປະຕິສຳພິທາ ໔ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ ທຳ ໗ ປະການ ອັນໃດແດ່ ຄື

ໃນທຳວິໄນນີ້ ສາຣີບຸດ

໑. ຮູ້ແຈ້ງຕາມຄວາມເປັນຈິງວ່າ "ຈິດຂອງເຮົານີ້ຫົດຫູ່"
໒. ຮູ້ແຈ້ງຈິດທີ່ແທ້ພາຍໃນຕາມຄວາມເປັນຈິງວ່າ "ຈິດຂອງເຮົາທີ່ແທ້ພາຍໃນ"
໓. ຮູ້ແຈ້ງຈິດຟຸ້ງຊ່ານໄປພາຍນອກຕາມຄວາມເປັນຈິງວ່າ "ຈິດຂອງເຮົາຟຸ້ງຊ່ານໄປພາຍນອກ"
໔. ຮູ້ແຈ້ງຕາມຄວາມເປັນຈິງວ່າ ເວທະນາຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດດັບໄປ
໕. ຮູ້ແຈ້ງຕາມຄວາມເປັນຈິງວ່າ ສັນຍາຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດດັບໄປ
໖. ຮູ້ແຈ້ງຕາມຄວາມເປັນຈິງວ່າ ວິຕົກຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ຜາກົດດັບໄປ
໗. ກຳນົດດີ ມະນະສິການດີ ຊົງຈຳດີ ແທງຕະຫຼອດດີດ້ວຍປັນຍາເຊິ່ງຈິດໃນທຳທີ່ເປັນ ສັບປາຍະແລະອະສັບປາຍະ ທີ່ຊົ່ວແລະປະນີດ ທີ່ມີສ່ວນດຳແລະຂາວ

ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໗ ປະການນີ້ແລ ຈຶ່ງເຮັດໃຫ້ແຈ້ງ ປະຕິສຳພິທາ ໔ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່

**ທຸຕິຍະປະຕິສຳພິທາສູດທີ ໗ ຈົບ**

# ໘. ປະຖະມະວະສະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ຈິດຕົກຢູ່ໃນອຳນາດ ສູດທີ ໑

[໔໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ຍ່ອມເຮັດຈິດໄວ້ໃນອຳນາດ ແລະບໍ່ເປັນໄປຕາມອຳນາດຂອງຈິດ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ສະຫຼາດໃນສະມາທິ
໒. ເປັນຜູ້ສະຫຼາດໃນການເຂົ້າສະມາທິ
໓. ເປັນຜູ້ສະຫຼາດໃນການໃຫ້ສະມາທິຕັ້ງຢູ່ໄດ້
໔. ເປັນຜູ້ສະຫຼາດໃນການອອກຈາກສະມາທິ
໕. ເປັນຜູ້ສະຫຼາດໃນຄວາມພ້ອມແຫ່ງສະມາທິ
໖. ເປັນຜູ້ສະຫຼາດໃນອາລົມແຫ່ງສະມາທິ
໗. ເປັນຜູ້ສະຫຼາດໃນອະພິນິຫານແຫ່ງສະມາທິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ຍ່ອມເຮັດຈິດໄວ້ໃນອຳນາດ ແລະບໍ່ເປັນໄປຕາມອຳນາດຂອງຈິດ

**ປະຖະມະວະສະສູດທີ ໙ ຈົບ**

# ໑໐. ທຸຕິຍະວະສະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ຈິດຕະກຢູ່ໃນອຳນາດ ສູດທີ ໒

[໔໑] ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໗ ປະການ ຍ່ອມເຮັດຈິດ ໄວ້ໃນອຳນາດ ແລະບໍ່ເປັນໄປຕາມອຳນາດຂອງຈິດ ທຳ ໗ ປະການ ອັນໃດແດ່ ຄື

ໃນທຳວິໄນນີ້ ສາຣີບຸດ

໑. ເປັນຜູ້ສະຫຼາດໃນສະມາທິ
໒. ເປັນຜູ້ສະຫຼາດໃນການເຂົ້າສະມາທິ
໓. ເປັນຜູ້ສະຫຼາດໃນການໃຫ້ສະມາທິຕັ້ງຢູ່ໄດ້
໔. ເປັນຜູ້ສະຫຼາດໃນການອອກຈາກສະມາທິ
໕. ເປັນຜູ້ສະຫຼາດໃນຄວາມພ້ອມແຫ່ງສະມາທິ
໖. ເປັນຜູ້ສະຫຼາດໃນອາລົມແຫ່ງສະມາທິ
໗. ເປັນຜູ້ສະຫຼາດໃນອະພິນິຫານແຫ່ງສະມາທິ

ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໗ ປະການນີ້ແລ ຍ່ອມເຮັດຈິດໄວ້ໃນອຳນາດ ແລະບໍ່ເປັນໄປຕາມອຳນາດຂອງຈິດ

**ທຸຕິຍະວະສະສູດທີ ໑໐ ຈົບ**

# ໑໑. ປະຖະມະນິດທະສະສູດ

## ວ່າດ້ວຍນິດທະສະວັດຖຸ ສູດທີ ໑

[໔໘] ຄັ້ງນັ້ນແລ ເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປໃນເມືອງສາວັດຖີເພື່ອບິນທະບາດ ໄດ້ມີຄວາມຄິດຢ່າງນີ້ວ່າ "ການທ່ຽວບິນທະບາດໃນເມືອງສາວັດຖີຍັງເຊົ້າໂພດ ທາງທີ່ດີເຮົາຄວນຈະເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ" ເມື່ອແລ້ວຈຶ່ງເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ສະໄໝນັ້ນແລ ພວກອັນຍະເດຍຣະຖີປະຣິພາຊົກນັ່ງປະຊຸມກັນ ສົນທະນາກັນໃນລະຫວ່າງ ການປະຊຸມວ່າ "ຜູ້ມີອາຍຸທັງຫຼາຍ ທ່ານຜູ້ໃດຜູ້ໜຶ່ງປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໑໒ ປີ ຄວນຮຽກທ່ານຜູ້ນັ້ນວ່າ "ນິດທະສະພິກຂຸ"

ທ່ານພຣະສາຣີບຸດບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນລຸກຈາກອາສະນະຈາກໄປດ້ວຍຄິດວ່າ "ເຮົາຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ" ທ່ານພຣະສາຣີບຸດເມື່ອທ່ຽວບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ຫຼັງຈາກສັນ ອາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເຊົ້ານີ້ ຂ້າພຣະອົງຄອງອັນຕະຣາວາສົກ ຖືບາດແລະຈີວອນເຂົ້າໄປໃນເມືອງສາວັດຖີເພື່ອບິນທະບາດ ໄດ້ມີຄວາມຄິດຢ່າງນີ້ວ່າ "ການທ່ຽວບິນທະບາດໃນເມືອງສາວັດຖີຍັງເຊົ້າໂພດ ທາງທີ່ດີເຮົາຄວນຈະເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ" ເມື່ອແລ້ວຈຶ່ງເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ສະໄໝນັ້ນແລພວກອັນຍະເດຍຣະຖີ ປະຣິພາຊົກນັ່ງປະຊຸມກັນ ສົນທະນາກັນໃນລະຫວ່າງການປະຊຸມວ່າ ຜູ້ມີອາຍຸທັງຫຼາຍ ທ່ານຜູ້ໃດຜູ້ໜຶ່ງປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໑໒ ປີ ຄວນຮຽກທ່ານຜູ້ນັ້ນວ່າ "ນິດທະສະພິກຂຸ" ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ "ເຮົາຈັກຮູ້ແຈ້ງເນື້ອຄວາມ ແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ" ຂ້າແດ່ພຣະອົງຜູ້ຈະເລີນ ເປັນໄປໄດ້ບໍ? ບັນຍັດນິດທະສະພິກຂຸໄວ້ໃນພຣະທຳວິໄນນີ້ດ້ວຍເຫດພຽງນັບພັນສາຢ່າງດຽວ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສາຣີບຸດ ເປັນໄປບໍ່ໄດ້ເລີຍທີ່ ຈະບັນຍັດນິດທະສະພິກຂຸໄວ້ໃນທຳວິໄນນີ້ ດ້ວຍເຫດພຽງນັບພັນສາຢ່າງດຽວ ນິດທະສະວັດຖຸ ໗ ປະການນີ້ແລ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໄວ້ ນິດທະສະວັດຖຸ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັນທະຢ່າງແຮງກ້າໃນການສະມາທານສິກຂາ ແລະໄດ້ຄວາມຮັກໃນການສະມາທານສິກຂາຕໍ່ໄປ
໒. ເປັນຜູ້ມີສັນທະຢ່າງແຮງກ້າໃນການພິຈາຣະນາທຳ ແລະໄດ້ຄວາມຮັກໃນການພິຈາຣະນາທຳຕໍ່ໄປ
໓. ເປັນຜູ້ມີສັນທະຢ່າງແຮງກ້າໃນການກຳຈັດຄວາມຢາກ ແລະໄດ້ຄວາມຮັກໃນການກຳຈັດຄວາມຢາກຕໍ່ໄປ
໔. ເປັນຜູ້ມີສັນທະຢ່າງແຮງກ້າໃນການຫຼີບຫຼີກ ແລະໄດ້ຄວາມຮັກໃນການຫຼີບຫຼີກຕໍ່ໄປ
໕. ເປັນຜູ້ມີສັນທະຢ່າງແຮງກ້າໃນການຜາຣົບຄວາມພຽນ ແລະໄດ້ຄວາມຮັກໃນການຜາຣົບຄວາມພຽນຕໍ່ໄປ
໖. ເປັນຜູ້ມີສັນທະຢ່າງແຮງກ້າໃນສະຕິປັນຍາເປັນເຄື່ອງຮັກສາຕົນ ແລະໄດ້ຄວາມຮັກໃນສະຕິປັນຍາເປັນເຄື່ອງຮັກສາຕົນຕໍ່ໄປ
໗. ເປັນຜູ້ມີສັນທະຢ່າງແຮງກ້າໃນການແທງຕະຫຼອດດ້ວຍທິດຖິ ແລະໄດ້ຄວາມຮັກໃນການແທງຕະຫຼອດດ້ວຍທິດຖິຕໍ່ໄປ

ສາຣີບຸດ ນິດທະສະວັດຖຸ ໗ ປະການນີ້ແລ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໄວ້

ພິກຂຸປະກອບດ້ວຍນິດທະສະວັດຖຸ ໗ ປະການນີ້ແລ ຫາກປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໑໒ ປີ ຄວນຮຽກພິກຂຸນັ້ນວ່າ "ນິດທະສະພິກຂຸ" ຫາກປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໒໔ ປີ ຄວນຮຽກພິກຂຸນັ້ນວ່າ "ນິດທະສະພິກຂຸ" ຫາກປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໓໖ ປີ ກໍຄວນຮຽກພິກຂຸນັ້ນວ່າ "ນິດທະສະພິກຂຸ" ຫາກປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໔໘ ປີ ກໍຄວນຮຽກພິກຂຸນັ້ນວ່າ "ນິດທະສະພິກຂຸ"

**ປະຖະມະນິດທະສະສູດທີ່ ໑໑ ຈົບ**

# ໑໘. ທຸຕິຍະນິດທະສະສູດ
## ວ່າດ້ວຍນິດທະສະວັດຖຸ ສູດທີ ໘

[໘໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນໂຄສິຕາຣາມ ເຂດເມືອງໂກສຳພີ ຄັ້ງນັ້ນເອງໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣາວາສົກຖືບາດ ແລະຈີວອນເຂົ້າໄປໃນເມືອງໂກສຳພີເພື່ອບິນທະບາດ ໄດ້ມີຄວາມຄິດຢ່າງນີ້ວ່າ "ການທ່ຽວບິນທະບາດໃນເມືອງໂກສຳພີຍັງເຊົ້າໂພດທາງທີ່ດີ ເຮົາຄວນຈະເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ" ເມື່ອແລ້ວຈຶ່ງເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ສະໄໝນັ້ນແລ ພວກອັນຍະເດຍຣະຖີປະຣິພາຊົກນັ່ງປະຊຸມກັນ ສົນທະນາກັນໃນລະຫວ່າງ ການປະຊຸມວ່າ "ຜູ້ມີອາຍຸທັງຫຼາຍ ທ່ານຜູ້ໃດຜູ້ໜຶ່ງປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໑໘ ປີ ຄວນຮຽກທ່ານຜູ້ນັ້ນວ່າ "ນິດທະສະພິກຂຸ"

ທ່ານພຣະອານົນບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ "ເຮົາຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະ ພາກເຈົ້າ" ທ່ານພຣະອານົນເມື່ອທ່ຽວບິນທະບາດໃນເມືອງໂກສຳພີ ກັບຈາກບິນທະບາດຫຼັງຈາກສັນອາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເຊົ້ານີ້ ຂ້າພຣະອົງຄອງອັນຕະຣາວາສົກ ຖືບາດແລະຈີວອນເຂົ້າໄປໃນເມືອງໂກສຳພີເພື່ອບິນທະບາດ ໄດ້ມີຄວາມຄິດຢ່າງນີ້ວ່າ "ການທ່ຽວບິນທະບາດໃນເມືອງໂກສຳພີຍັງເຊົ້າໂພດ ທາງທີ່ດີເຮົາຄວນຈະເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ" ເມື່ອແລ້ວຈຶ່ງເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ສະໄໝນັ້ນແລພວກອັນຍະເດຍຣະຖີປະຣິພາຊົກນັ່ງປະຊຸມກັນ ສົນທະນາກັນໃນລະຫວ່າງການປະຊຸມວ່າ ຜູ້ມີອາຍຸທັງຫຼາຍ ທ່ານຜູ້ໃດຜູ້ໜຶ່ງປະພຶດພົມມະຈັນບໍລິສຸດບໍລິບູນຄົບ ໑໘ ປີ ຄວນຮຽກທ່ານຜູ້ນັ້ນວ່າ "ນິດທະສະພິກຂຸ" ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ "ເຮົາຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ" ຂ້າແດ່ພຣະອົງຜູ້ຈະເລີນ ເປັນໄປໄດ້ບໍ? ທີ່ຈະບັນຍັດນິດທະສະພິກຂຸໄວ້ໃນພຣະທຳວິໄນນີ້ດ້ວຍເຫດພຽງນັບພັນສາຢ່າງດຽວ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ເປັນໄປບໍ່ໄດ້ເລີຍ ທີ່ຈະບັນຍັດນິດທະສະພິກາ ຊຸໄວ້ໃນທຳວິໄນນີ້ດ້ວຍເຫດພຽງນັບພັນສາຢ່າງດຽວ ນິດທະສະວັດຖຸ ໗ ປະການນີ້ແລ ເຮົາເຮັດ ໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວຈຶ່ງປະກາດໄວ້ ນິດທະສະວັດຖຸ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີໂອດຕັບປະ
໕. ເປັນຜູ້ຜາຣົບຄວາມພຽນ
໗. ເປັນຜູ້ມີປັນຍາ
໔. ເປັນຜູ້ມີຫິຣິ
໘. ເປັນພະຫູສູດ
໖. ເປັນຜູ້ມີສະຕິ

ອານົນ ນິດທະສະວັດຖຸ ໗ ປະການນີ້ແລ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໄວ້

ພິກຂຸປະກອບດ້ວຍນິດທະສະວັດຖຸ ໗ ປະການນີ້ແລ ຫາກປະພຶດພົມມະຈັນ ບໍລິສຸດ ບໍລິບູນຄົບ ໑໘ ປີ ກໍຄວນຮຽກພິກຂຸນັ້ນວ່າ "ນິດທະສະພິກຂຸ" ຫາກປະພຶດພົມມະຈັນບໍລິສຸດ ບໍລິບູນຄົບ ໔໘ ປີ ກໍຄວນຮຽກພິກຂຸນັ້ນວ່າ "ນິດທະສະພິກຂຸ" ຫາກປະພຶດພົມມະຈັນບໍລິສຸດ ບໍລິບູນຄົບ ໒໖ ປີ ກໍຄວນຮຽກພິກຂຸນັ້ນວ່າ "ນິດທະສະພິກຂຸ" ຫາກປະພຶດພົມມະຈັນບໍລິສຸດ ບໍລິບູນຄົບ ໘໙ ປີ ກໍຄວນຮຽກ ພິກຂຸນັ້ນວ່າ "ນິດທະສະພິກຂຸ"

**ທຸຕິຍະນິດທະສະສູດທີ ໑໑ ຈົບ**

**ເທວະຕາວັກທີ ໘ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອັບປະມາທະຄາຣະວະສູດ
໒. ປະຖະມະໂສວະຈັດສະຕາສູດ
໕. ປະຖະມະມິດຕະສູດ
໗. ປະຖະມະປະຕິສຳພິທາສູດ
໙. ປະຖະມະວະສະສູດ
໑໑. ປະຖະມະນິດທະສະສູດ
໔. ຫິຣິຄາຣະວະສູດ
໘. ທຸຕິຍະໂສວະຈັດສະຕາສູດ
໖. ທຸຕິຍະມິດຕະສູດ
໘. ທຸຕິຍະປະຕິສຳພິທາສູດ
໑໐. ທຸຕິຍະວະສະສູດ
໑໘. ທຸຕິຍະນິດທະສະສູດ

# ໕. ມະຫາຍັນຍະວັກ

## ໝວດວ່າດ້ວຍມະຫາຍັນ

# ໑. ສັດຕະວິນຍານັດຖິຕິສູດ

## ວ່າດ້ວຍວິນຍານຖິຕິ ໗ ປະການ

[໔໔] ພິກຂຸທັງຫຼາຍ ວິນຍານຖິຕິ (ພູມເປັນທີ່ຕັ້ງແຫ່ງວິນຍານ) ໗ ປະການນີ້

ວິນຍານຖິຕິ ໗ ປະການ ອັນໃດແດ່ ຄື

໑. ມີສັດຜູ້ມີກາຍຕ່າງກັນ ມີສັນຍາຕ່າງກັນ ຄື ມະນຸດບາງພວກ ເທວະດາບາງພວກ ແລະ ວິນິປາຕິກະບາງພວກ ນີ້ເປັນວິນຍານຖິຕິທີ ໑

໒. ມີສັດຜູ້ມີກາຍຕ່າງກັນ ແຕ່ມີສັນຍາຢ່າງດຽວກັນ ຄື ເທວະດາຊັ້ນພົມກາຍິກາ ເກີດໃນປະຖົມຊານພູມ ນີ້ເປັນວິນຍານຖິຕິທີ ໒

໓. ມີສັດຜູ້ມີກາຍຢ່າງດຽວກັນ ແຕ່ມີສັນຍາຕ່າງກັນ ຄື ເທວະດາຊັ້ນອາພັດສະ ນີ້ເປັນວິນຍານຖິຕິທີ ໓

໔. ມີສັດຜູ້ມີກາຍຢ່າງດຽວກັນ ມີສັນຍາຢ່າງດຽວກັນ ຄື ເທວະດາຊັ້ນສຸພະກິນຫະ (ເທວະດາທີ່ເຕັມໄປດ້ວຍຄວາມງາມ) ນີ້ເປັນວິນຍານຖິຕິທີ ໔

໕. ມີສັດຜູ້ບັນລຸອາກາສານັນຈາຍະຕະນະຊານ ຢູ່ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ມະນະສິການນານັດຕະສັນຍາໂດຍປະການທັງປວງ ນີ້ເປັນວິນຍານຖິຕິທີ ໕

໖. ມີສັດຜູ້ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ນີ້ເປັນວິນຍານຖິຕິທີ ໖

໗. ມີສັດຜູ້ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ" ນີ້ເປັນວິນຍານຖິຕິທີ ໗

ພິກຂຸທັງຫຼາຍ ວິນຍານຖິຕິ ໗ ປະການນີ້ແລ

**ສັດຕະວິນຍານັດຖິຕິສູດທີ່ ໑ ຈົບ**

# ໒. ສະມາທິປະຣິກຂາຣະສູດ

## ວ່າດ້ວຍບໍຣິຂານແຫ່ງສະມາທິ

[໔໕] ພິກຂຸທັງຫຼາຍ ບໍຣິຂານແຫ່ງສະມາທິ ໗ ປະການນີ້

ບໍຣິຂານແຫ່ງສະມາທິ ໗ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ດຳຣິຖືກ)
໓. ສຳມາວາຈາ (ເຈຣະຈາຖືກ)
໔. ສຳມາກຳມັນຕະ (ກະທຳຖືກ)
໕. ສຳມາອາຊີວະ (ລ້ຽງຊີບຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)
໗. ສຳມາສະຕິ (ຣະນຶກຖືກ)

ພິກຂຸທັງຫຼາຍ ສະພາວະທີ່ຈິດມີອາລົມດຽວເຊິ່ງມີອົງ ໗ ປະການນີ້ແວດລ້ອມ ຮຽກວ່າ "ອະຣິຍະສຳມາສະມາທິທີ່ມີອຸປະນິສະ" ແດ່ ວ່າ "ອະຣິຍະສຳມາທິດຖິທີ່ມີບໍຣິຂານ" ແດ່

**ສະມາທິປະຣິກຂາຣະສູດທີ່ ໒ ຈົບ**

# ໓. ປະຖະມະອັກຄິສູດ

## ວ່າດ້ວຍໄຟ ສູດທີ່ ໑

[໔໖] ພິກຂຸທັງຫຼາຍ ອັກຄິ (ໄຟ) ໗ ປະການນີ້

ອັກຄິ ໗ ປະການ໔ ອັນໃດແດ່ ຄື

໑. ຣາຄັກຄິ (ໄຟຄືຣາຄະ)
໒. ໂທສັກຄິ (ໄຟຄືໂທສະ)
໓. ໂມຫັກຄິ (ໄຟຄືໂມຫະ)
໔. ອາຫຸເນີຍຍັກຄິ (ໄຟຄືອາຫຸໄນຍະບຸກຄົນ)

໕. ຄະຫະປະຕັກຄີ (ໄຟຄືຄະຫະບໍດີ)
໖. ທັກຂິເນີຍຍັກຄີ (ໄຟຄືທັກຂິໄນຍະບຸກຄົນ)
໗. ກັດຖັກຄີ (ໄຟທີ່ເກີດຈາກໄມ້)

ພິກຂຸທັງຫຼາຍ ອັກຄີ ໗ ປະການນີ້ແລ

**ປະຖະມະອັກຄີສູດທີ ໗ ຈົບ**

# ໘. ທຸຕິຍະອັກຄີສູດ

## ວ່າດ້ວຍໄຟ ສູດທີ ໘

[໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ສະໄໝນັ້ນ ອຸກຄະຕະສະຣີຣະພາມກະກຽມມະຫາຍັນ ງົວຜູ້ ໕໐໐ ຕົວຖືກນຳເຂົ້າໄປຜູກຕິດໄວ້ກັບຫຼັກ ເພື່ອປະໂຫຍດແກ່ການບູຊາຍັນ ລູກງົວຜູ້ ໕໐໐ ຕົວຖືກນຳເຂົ້າໄປຜູກຕິດໄວ້ກັບຫຼັກ ເພື່ອປະໂຫຍດແກ່ການບູຊາຍັນ ລູກງົວຕົວເມຍ ໕໐໐ ຕົວຖືກນຳເຂົ້າໄປຜູກຕິດໄວ້ກັບຫຼັກ ເພື່ອປະໂຫຍດແກ່ການບູຊາຍັນ ແບ້ ໕໐໐ ຕົວ ຖືກນຳເຂົ້າໄປຜູກຕິດໄວ້ກັບຫຼັກ ເພື່ອປະໂຫຍດແກ່ການບູຊາຍັນ ແກະ ໕໐໐ ຕົວຖືກນຳເຂົ້າໄປຜູກຕິດໄວ້ກັບຫຼັກ ເພື່ອປະໂຫຍດແກ່ການບູຊາຍັນ

ຄັ້ງນັ້ນແລ ອຸກຄະຕະສະຣີຣະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາ ປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ສະດັບມາວ່າ "ການກໍ່ໄຟ ການປັກ ຫຼັກບູຊາຍັນ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ແມ່ນເຮົາກໍໄດ້ສະດັບມາວ່າ "ການກໍ່ໄຟ ການປັກຫຼັກບູຊາຍັນ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ"

ແມ່ນຄັ້ງທີ ໒ ຯລຯ

ແມ່ນຄັ້ງທີ ໓ ອຸກຄະຕະສະຣີຣະພາມກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ສະດັບມາວ່າ "ການກໍ່ໄຟ ການປັກຫຼັກບູຊາຍັນ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ແມ່ນເຮົາກໍໄດ້ສະດັບມາວ່າ "ການກໍ່ໄຟ ການປັກຫຼັກບູຊາຍັນ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ"

ພາມຂາບທູນວ່າ "ທ່ານພຣະໂຄດົມ ຂໍ້ຄວາມທັງໝົດຂອງທ່ານພຣະໂຄດົມ ແລະຂອງຂ້າພະເຈົ້າຍ່ອມເໝາະສົມກັນ"

ເມື່ອອຸກຄະຕະສະຣີຣະພາມຂາບທູນຢ່າງນີ້ແລ້ວ ທ່ານພຣະອານົນໄດ້ກ່າວກັບອຸກຄະຕະສະຣີຣະພາມດັ່ງນີ້ວ່າ "ພາມ ທ່ານບໍ່ຄວນຖາມພຣະຕະຖາຄົດຢ່າງນີ້ວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ສະດັບມາວ່າ "ການກໍ່ໄຟ ການປັກຫຼັກບູຊາຍັນ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ" ແຕ່ຄວນຖາມພຣະຕະຖາຄົດຢ່າງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພະເຈົ້າປະສົງຈະກໍ່ໄຟ ປະສົງຈະປັກຫຼັກບູຊາຍັນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຕັກເຕືອນ ໂຜດພ່ຳສອນຂ້າພະເຈົ້າເຖິງຂໍ້ທີ່ຈະເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ຂ້າພະເຈົ້າຕະຫຼອດການລະນານດ້ວຍເທີ້ນ"

ລຳດັບນັ້ນ ອຸກຄະຕະສະຣີຣະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພະເຈົ້າປະສົງຈະກໍ່ໄຟ ປະສົງຈະປັກຫຼັກບູຊາຍັນ ຂໍທ່ານພຣະໂຄດົມໂຜດຕັກເຕືອນ ໂຜດພ່ຳສອນຂ້າພະເຈົ້າເຖິງຂໍ້ທີ່ຈະເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກແກ່ຂ້າພະເຈົ້າຕະຫຼອດການລະນານດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ບຸກຄົນເມື່ອຈະກໍ່ໄຟ ປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຍ່ອມຈັບອາວຸດ ໓ ຊະນິດ ທີ່ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກ ເປັນຜົນ

ອາວຸດ ໓ ຊະນິດ ອັນໃດແດ່ ຄື

໑. ອາວຸດທາງກາຍ
໒. ອາວຸດທາງວາຈາ
໓. ອາວຸດທາງໃຈ

ບຸກຄົນເມື່ອຈະກໍ່ໄຟ ປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຍ່ອມຄິດຢ່າງນີ້ວ່າ "ຕ້ອງຂ້າງົວຜູ້ເທົ່ານີ້ຕົວເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າລູກງົວຜູ້ເທົ່ານີ້ຕົວເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າລູກງົວຕົວເມຍເທົ່ານີ້ຕົວ ເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າແບ້ເທົ່ານີ້ຕົວເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າແກະເທົ່ານີ້ຕົວເພື່ອປະໂຫຍດແກ່ການບູຊາຍັນ" ເຂົາຄິດວ່າ "ຈະເຮັດບຸນ" ແຕ່ກັບເຮັດສິ່ງທີ່ບໍ່ແມ່ນບຸນ ຄິດວ່າ "ຈະເຮັດກຸສົນ" ແຕ່ກັບເຮັດອະກຸສົນ ຄິດວ່າ "ຈະສະແຫວງຫາທາງສຸກຄະຕິ" ແຕ່ກັບສະແຫວງຫາທາງທຸກຄະຕິ ພາມ ບຸກຄົນເມື່ອຈະກໍ່ໄຟປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຍ່ອມເງື້ອອາວຸດທາງໃຈຊະນິດທີ ໑ ນີ້ ທີ່ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນຜົນ

ບຸກຄົນເມື່ອຈະກໍ່ໄຟ ປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຍ່ອມກ່າວຢ່າງນີ້ວ່າ "ຕ້ອງຂ້າງົວຜູ້ເທົ່ານີ້ໂຕເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າລູກງົວຜູ້ເທົ່ານີ້ໂຕເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າລູກງົວໂຕເມຍເທົ່ານີ້ໂຕເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າແບ້ເທົ່ານີ້ໂຕເພື່ອປະໂຫຍດແກ່ການບູຊາຍັນ ຕ້ອງຂ້າແກະເທົ່ານີ້ໂຕເພື່ອປະໂຫຍດແກ່ການບູຊາຍັນ" ເຂົາຄິດວ່າ "ຈະເຮັດບຸນ" ແຕ່ກັບເຮັດສິ່ງທີ່ບໍ່ແມ່ນບຸນ ຄິດວ່າ "ຈະເຮັດກຸສົນ" ແຕ່ກັບເຮັດອະກຸສົນ ຄິດວ່າ "ຈະສະແຫວງຫາທາງສຸກຄະຕິ" ແຕ່ກັບສະແຫວງຫາທາງທຸກຄະຕິ ພາມ ບຸກຄົນເມື່ອຈະກໍ່ໄຟປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຍ່ອມເງື້ອອາວຸດທາງວາຈາຊະນິດທີ ໒ ນີ້ທີ່ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນຜົນ

ບຸກຄົນເມື່ອຈະກໍ່ໄຟປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຕົນເອງລົງມືຂ້າງົວຜູ້ ກ່ອນເພື່ອປະໂຫຍດແກ່ການບູຊາຍັນ ຕົນເອງລົງມືຂ້າລູກງົວຜູ້ກ່ອນເພື່ອປະໂຫຍດແກ່ການບູຊາຍັນ ຕົນເອງລົງມືຂ້າລູກງົວໂຕເມຍກ່ອນເພື່ອປະໂຫຍດແກ່ການບູຊາຍັນ ຕົນເອງລົງມື ຂ້າແບ້ກ່ອນເພື່ອປະໂຫຍດແກ່ການບູຊາຍັນ ຕົນເອງລົງມືຂ້າແກະກ່ອນເພື່ອປະໂຫຍດແກ່ການບູຊາຍັນ ເຂົາຄິດວ່າ "ຈະເຮັດບຸນ" ແຕ່ກັບເຮັດສິ່ງທີ່ ບໍ່ແມ່ນບຸນ ຄິດວ່າ "ຈະເຮັດກຸສົນ" ແຕ່ກັບເຮັດອະກຸສົນ ຄິດວ່າ "ຈະສະແຫວງຫາທາງສຸຄະຕິ" ແຕ່ກັບສະແຫວງຫາທາງທຸກຄະຕິ ພາມ ບຸກຄົນເມື່ອຈະກໍ່ໄຟປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຍ່ອມເງື້ອອາວຸດທາງກາຍຊະນິດທີ ໓ ນີ້ ທີ່ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນຜົນ

ພາມ ບຸກຄົນເມື່ອຈະກໍ່ໄຟປັກຫຼັກບູຊາຍັນ ກ່ອນທີ່ຈະບູຊາຍັນ ຍ່ອມຈັບອາວຸດ ໓ ຊະນິດນີ້ ທີ່ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນຜົນ

ພາມ ອັກຄີ (ໄຟ) ໓ ປະການນີ້ ເປັນສິ່ງທີ່ ຄວນລະ ຄວນເວັ້ນ ບໍ່ຄວນເສບ

ອັກຄີ ໓ ປະການ ອັນໃດແດ່ ຄື

໑. ຣາຄັກຄີ (ໄຟຄືຣາຄະ)
໒. ໂທສັກຄີ (ໄຟຄືໂທສະ)
໓. ໂມຫັກຄີ (ໄຟຄືໂມຫະ)

ເພາະເຫດໃດ? ຣາຄັກຄີນີ້ ຈຶ່ງເປັນສິ່ງທີ່ ຄວນລະ ຄວນເວັ້ນ ບໍ່ຄວນເສບ

ເພາະບຸກຄົນຜູ້ມີຣາຄະ ຖືກຣາຄະຄອບງຳ ມີຈິດຖືກຣາຄະກຸ້ມລຸມ ຍ່ອມປະພຶດທຸດຈະຣິດທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຫຼັງຈາກຕາຍແລ້ວເຂົາຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ສະນັ້ນ ຣາຄັກຄີນີ້ ຈຶ່ງເປັນສິ່ງທີ່ຄວນລະຄວນເວັ້ນ ບໍ່ຄວນເສບ

ເພາະເຫດໃດ? ໂທສັກຄີນີ້ ຈຶ່ງເປັນສິ່ງທີ່ ຄວນລະ ຄວນເວັ້ນ ບໍ່ຄວນເສບ

ເພາະບຸກຄົນຜູ້ມີໂທສະ ຖືກໂທສະຄອບງຳ ມີຈິດຖືກໂທສະກຸ້ມລຸມ ຍ່ອມປະພຶດທຸດຈະຣິດທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຫຼັງຈາກຕາຍແລ້ວເຂົາຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ສະນັ້ນ ໂທສັກຄີນີ້ ຈຶ່ງເປັນສິ່ງທີ່ຄວນລະຄວນເວັ້ນ ບໍ່ຄວນເສບ

ເພາະເຫດໃດ? ໂມຫັກຄີນີ້ ຈຶ່ງເປັນສິ່ງທີ່ ຄວນລະ ຄວນເວັ້ນ ບໍ່ຄວນເສບ

ເພາະບຸກຄົນຜູ້ມີໂມຫະ ຖືກໂມຫະຄອບງຳ ມີຈິດຖືກໂມຫະກຸ້ມລຸມ ຍ່ອມປະພຶດທຸດຈະຣິດ ທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຫຼັງຈາກຕາຍແລ້ວເຂົາຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ສະນັ້ນ ໂມຫັກຄີນີ້ ຈຶ່ງເປັນສິ່ງທີ່ຄວນລະຄວນເວັ້ນ ບໍ່ຄວນເສບ

ພາມ ອັກຄີ ໓ ປະການນີ້ແລ ເປັນສິ່ງທີ່ ຄວນລະ ຄວນເວັ້ນ ບໍ່ຄວນເສບ

ພາມ ອັກຄີ ໓ ປະການນີ້ ເປັນສິ່ງທີ່ ຄວນສັກກາຣະ ເຄົາລົບ ນັບຖື ບູຊາ ແລ້ວບໍລິຫານໃຫ້ເປັນສຸກໂດຍຊອບ

ອັກຄີ ໓ ປະການ ອັນໃດແດ່ ຄື

໑. ອາຫຸເນີຍຍັກຄີ
໒. ຄະຫະປະຕັກຄີ
໓. ທັກຂິເນີຍຍັກຄີ

ອາຫຸເນີຍຍັກຄີ ເປັນແນວໃດ?

ຄື ບຸດໃນໂລກນີ້ມີມານດາ ຫຼື ບິດາ ນີ້ຮຽກວ່າ ອາຫຸເນີຍຍັກຄີ ຂໍ້ນັ້ນ ເພາະເຫດໃດເພາະບຸດເກີດມາຈາກມານດາບິດານີ້ ສະນັ້ນ ອາຫຸເນີຍຍັກຄີນີ້ ຈຶ່ງເປັນຜູ້ທີ່ຄວນສັກກາຣະເຄົາລົບ ນັບຖື ບູຊາ ບໍລິຫານໃຫ້ເປັນສຸກໂດຍຊອບ

ຄະຫະປະຕັກຄີ ເປັນແນວໃດ?

ຄື ຄະຫະບໍດີໃນໂລກນີ້ມີບຸດ ພັນລະຍາ ທາດ ຄົນໃຊ້ ຫຼືກຳມະກອນ ນີ້ຮຽກວ່າ ຄະຫະປະຕັກຄີ ສະນັ້ນ ຄະຫະປະຕັກຄີນີ້ ຈຶ່ງເປັນຜູ້ທີ່ຄວນສັກກາຣະ ເຄົາລົບ ນັບຖື ບູຊາ ບໍລິຫານໃຫ້ເປັນສຸກໂດຍຊອບ

ທັກຂິເນີຍຍັກຄີ ເປັນແນວໃດ?

ຄື ສະມະນະພາມຜູ້ເວັ້ນຂາດຈາກຄວາມມົວເມົາ ແລະຜະໝາດ ຕັ້ງໝັ້ນຢູ່ໃນຂັນຕິແລະໂສຣັດຈະ ຝຶກຕົນໄດ້ເປັນໜຶ່ງ ເຮັດຕົນໃຫ້ສະງົບໄດ້ເປັນໜຶ່ງ ເຮັດຕົນໃຫ້ດັບເຢັນໄດ້ເປັນໜຶ່ງ ນີ້ຮຽກວ່າ ທັກຂິເນີຍຍັກຄີ ສະນັ້ນ ທັກຂິເນີຍຍັກຄີນີ້ ຈຶ່ງເປັນຜູ້ທີ່ຄວນສັກກາຣະ ເຄົາລົບ ນັບຖືບູຊາ ແລ້ວບໍລິຫານໃຫ້ເປັນສຸກໂດຍຊອບ

ພາມ ອັກຄີ ໓ ປະການນີ້ແລ ເປັນສິ່ງທີ່ ຄວນສັກກາຣະ ເຄົາລົບ ນັບຖື ບູຊາ ແລ້ວບໍລິຫານໃຫ້ເປັນສຸກໂດຍຊອບ

ສ່ວນກັດຖັກຄີນີ້ ຕ້ອງຈຸດຕາມການອັນຄວນ ຕ້ອງຄອຍຖ້າເບິ່ງຕາມການອັນຄວນ ຕ້ອງຄອຍຖ້າດັບຕາມການອັນຄວນ ຕ້ອງຄອຍຖ້າເກັບຕາມການອັນຄວນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ອຸກຄະຕະສະຣີຣະພາມໄດ້ຂາບທູນພຣະຜູ້ມີພຣະ ພາກເຈົ້າດັ່ງນີ້ວ່າ "ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະຍິ່ງ ຯລຯ ຂໍທ່ານພຣະໂຄດົມໂຜດຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ຂ້າພຣະອົງຈະປ່ອຍງົວຜູ້ ໕໐໐ ຕົວ ໃຫ້ຊີວິດພວກມັນ ຈະປ່ອຍລູກງົວຜູ້ ໕໐໐ ຕົວ ໃຫ້ຊີວິດພວກມັນ ຈະປ່ອຍລູກງົວຕົວເມຍ ໕໐໐ ຕົວ ໃຫ້ຊີວິດພວກມັນຈະປ່ອຍແບ້ ໕໐໐ ຕົວ ໃຫ້ຊີວິດພວກມັນ ຈະປ່ອຍແກະ ໕໐໐ ຕົວ ໃຫ້ຊີວິດພວກມັນ ພວກມັນຈະໄດ້ກິນຫຍ້າສົດ ດື່ມນ້ຳເຢັນແລະຮັບລົມເຢັນ"

**ທຸຕິຍະອັກຄີສູດທີ່ ๘ ຈົບ**

# ໕. ປະຖະມະສັນຍາສູດ

## ວ່າດ້ວຍສັນຍາ ສູດທີ່ ໑

[໔໗] ພິກຂຸທັງຫຼາຍ ສັນຍາ ໗ ປະການນີ້ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

ສັນຍາ ໗ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)
໒. ມໍຣະນະສັນຍາ (ຯລຯຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)

໓. ອາຫາເຣ ປະຕິກູນສັນຍາ (ຫລຍຄວາມປະຕິກູນໃນອາຫານ)

໔. ສັບພະໂລເກ ອະນະພິຣະຕະສັນຍາ (ຫລຍວາມບໍ່ໜ້າເພີດເພີນໃນໂລກທັງປວງ)

໕. ອະນິດຈະສັນຍາ (ຫລຍຄວາມບໍ່ທ່ຽງແຫ່ງສັງຂານ)

໖. ອະນິດເຈ ທຸກຂະສັນຍາ (ຫລຍຄວາມເປັນທຸກໃນຄວາມບໍ່ທ່ຽງແຫ່ງສັງຂານ)

໗. ທຸກເຂ ອະນັດຕະສັນຍາ (ຫລຍຄວາມເປັນອະນັດຕາໃນຄວາມເປັນທຸກ)

ພິກຂຸທັງຫຼາຍ ສັນຍາ ໗ ປະການນີ້ແລ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

**ປະຖະມະສັນຍາສູດທີ ໕ ຈົບ**

# ໖. ທຸຕິຍະສັນຍາສູດ

## ວ່າດ້ວຍສັນຍາ ສູດທີ ໘

[໔໙] ພິກຂຸທັງຫຼາຍ ສັນຍາ ໗ ປະການນີ້ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

ສັນຍາ ໗ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ

໒. ມໍຣະນະສັນຍາ

໓. ອາຫາເຣ ປະຕິກູນສັນຍາ

໔. ສັບພະໂລເກ ອະນະພິຣະຕະສັນຍາ

໕. ອະນິດຈະສັນຍາ

໖. ອະນິດເຈ ທຸກຂະສັນຍາ

໗. ທຸກເຂ ອະນັດຕະສັນຍາ

ພິກຂຸທັງຫຼາຍ ສັນຍາ ໗ ປະການນີ້ແລ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອະສຸພະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະສຸພະສັນຍາຢູ່ສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບການຮ່ວມເມຖຸນທຳ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ຂົນໄກ່ ຫຼື ເສັ້ນເອັນທີ່ເຂົາໃສ່ເຂົ້າໄປໃນໄຟ ຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ຄາຍອອກ ສັນໃດ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະສຸພະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບການຮ່ວມເມຖຸນທຳ ສັນນັ້ນຄືກັນ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່

ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະສຸພະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມໄຫຼໄປຕາມການຮ່ວມເມຖຸນທຳ ຄວາມເປັນຂອງບໍ່ປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ອະສຸພະສັນຍາເຮົາບໍ່ໄດ້ຈະເລີນແລ້ວ ຄຸນວິເສດທັງເບື້ອງຕົ້ນ ແລະເບື້ອງປາຍຈຶ່ງບໍ່ມີແກ່ເຮົາ ພາວະນາພະລະ (ກຳລັງຄືພາວະນາ) ຂອງເຮົາຍັງບໍ່ເຖິງທີ່ " ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງ ໃນອະສຸພະສັນຍານັ້ນ

ແຕ່ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະສຸພະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບການຮ່ວມເມຖຸນທຳ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ອະສຸພະສັນຍາ ເຮົາຈະເລີນດີແລ້ວ ຄຸນວິເສດ ທັງເບື້ອງຕົ້ນ ແລະເບື້ອງປາຍຈຶ່ງມີແກ່ເຮົາ ພາວະນາພະລະຂອງເຮົາເຖິງທີ່ແລ້ວ" ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນອະສຸພະສັນຍານັ້ນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ອະສຸພະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" (໑)

ເຮົາກ່າວໄວ້ເຊັ່ນນີ້ວ່າ "ມໍຣະນະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" ເພາະອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍມໍຣະນະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຄວາມຕິດໃຈໃນຊີວິດ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ຂົນໄກ່ຫຼືເສັ້ນເອັນທີ່ເຂົາໃສ່ເຂົ້າໄປໃນໄຟ ຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ຄາຍອອກ ສັນໃດ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍມໍຣະນະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຄວາມຕິດໃຈໃນຊີວິດ ສັນນັ້ນຄືກັນ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່

ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍມໍຣະນະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມໄຫຼໄປຕາມຄວາມ ຕິດໃຈໃນຊີວິດ ຄວາມເປັນຂອງບໍ່ປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ມໍຣະນະສັນຍາ ເຮົາບໍ່ໄດ້ຈະເລີນແລ້ວ ຄຸນວິເສດທັງເບື້ອງຕົ້ນ ແລະເບື້ອງປາຍຈຶ່ງບໍ່ມີແກ່ເຮົາ ພາວະນາພະລະຂອງເຮົາຍັງບໍ່ເຖິງທີ່ " ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນມໍຣະນະສັນຍານັ້ນ

ແຕ່ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍມໍຣະນະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຄວາມຕິດໃຈໃນຊີວິດ ອຸເປກຂາ ຫຼື ຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ມໍຣະນະສັນຍາ ເຮົາຈະເລີນດີແລ້ວ ຄຸນວິເສດທັງເບື້ອງຕົ້ນ ແລະເບື້ອງປາຍຈຶ່ງມີແກ່ເຮົາ ພາວະນາພະລະຂອງເຮົາເຖິງທີ່ແລ້ວ" ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນມໍຣະນະສັນຍານັ້ນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ມໍຣະນະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" (໘)

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາຫາເຣ ປະຕິກູນສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" ເພາະອາໄສ ເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອາຫາເຣ ປະຕິກູນສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຕັນຫາໃນຣົດ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ຂົນໄກ່ຫຼືເສັ້ນເອັນທີ່ເຂົາໃສ່ເຂົ້າໄປໃນໄຟ ຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ຄາຍອອກສັນໃດ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອາຫາເຣ ປະຕິກູນສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຕັນຫາໃນຣົດ ສັນນັ້ນຄືກັນແລ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່

ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອາຫາເຣ ປະຕິກູນສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມໄຫຼໄປຕາມຕັນຫາໃນຣົດ ຄວາມເປັນຂອງບໍ່ປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ອາຫາເຣ ປະຕິກູນສັນຍາ ເຮົາບໍ່ໄດ້ຈະເລີນແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍຈຶ່ງບໍ່ມີແກ່ເຮົາ ພາວະນາພະລະຂອງເຮົາຍັງບໍ່ເຖິງທີ່" ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນອາຫາເຣ ປະຕິກູນສັນຍານັ້ນ

ແຕ່ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອາຫາເຣ ປະຕິກູນສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໗ລ໗ ຕັນຫາໃນຣົດ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ອາຫາເຣ ປະຕິກູນສັນຍາ ເຮົາຈະເລີນດີແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍ

ຈຶ່ງມີແກ່ເຮົາ ພາວະນາພະລະຂອງເຮົາເຖິງທີ່ແລ້ວ" ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນອາຫາເຣ ປະຕິກູນສັນຍານັ້ນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ອາຫາເຣ ປະຕິກູນສັນຍາທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" (໓)

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ສັບພະໂລເກ ອະນະພິຣະຕະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍສັບພະໂລເກ ອະນະພິຣະຕະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຄວາມ ວິຈິດຂອງໂລກ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ຂົນໄກ່ຫຼືເສັ້ນເອັນທີ່ເຂົາໃສ່ເຂົ້າໄປໃນໄຟ ຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ຄາຍອອກ ສັນໃດ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍສັບພະໂລເກ ອະນະພິຕະຣະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຄວາມວິຈິດຂອງໂລກ ສັນນັ້ນຄືກັນແລ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່

ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍສັບພະໂລເກ ອະນະພິຣະຕະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມໄຫຼໄປຕາມຄວາມວິຈິດຂອງໂລກ ຄວາມເປັນຂອງບໍ່ປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ສັບພະໂລເກ ອະນະພິຣະຕະສັນຍາ ເຮົາບໍ່ໄດ້ຈະເລີນແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍ ຈຶ່ງບໍ່ມີແກ່ເຮົາ ພາວະນາພະລະຂອງເຮົາຍັງບໍ່ເຖິງທີ " ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນ ສັບພະໂລເກ ອະນະພິຣະຕະສັນຍານັ້ນ

ແຕ່ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍສັບພະໂລເກ ອະນະພິຣະຕະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມ ຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບຄວາມວິຈິດຂອງໂລກ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ສັບພະໂລເກ ອະນະພິຣະຕະສັນຍາ ເຮົາຈະເລີນດີແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍຈຶ່ງມີແກ່ເຮົາ ພາວະນາພະລະຂອງເຮົາເຖິງທີ່ແລ້ວ" ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນສັບພະໂລເກ ອະນະພິຣະຕະສັນຍານັ້ນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ສັບພະໂລເກ ອະນະພິຣະຕະສັນຍາທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" (໔)

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ອະນິດຈະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະນິດຈະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບລາບສັກກາຣະແລະຊື່ສຽງ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ຂົນໄກ່ຫຼືເສັ້ນເອັນທີ່ເຂົາໃສ່ເຂົ້າໄປໃນໄຟ ຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ມາຍອອກ ສັນໃດ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍ ອະນິດຈະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບລາບ ສັກກາຣະແລະຊື່ສຽງ ສັນນັ້ນຄືກັນແລ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມ ຕັ້ງຢູ່

ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະນິດຈະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມໄຫຼໄປຕາມລາບສັກກາຣະແລະຊື່ສຽງ ຄວາມເປັນຂອງບໍ່ປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ອະນິດຈະສັນຍາ ເຮົາບໍ່ໄດ້ຈະເລີນແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍຈຶ່ງບໍ່ມີແກ່ເຮົາ ພາວະນາພະລະຂອງເຮົາຍັງບໍ່ເຖິງທີ " ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນອະນິດຈະສັນຍານັ້ນ

ແຕ່ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະນິດຈະສັນຍາຢູ່ໂດຍສ່ວນຫຼາຍ ຈິດຍ່ອມຫົດກັບ ງໍກັບ ໝຸນກັບ ບໍ່ອອກໄປຮັບລາບສັກກາຣະແລະຊື່ສຽງ ອຸເປກຂາຫຼືຄວາມເປັນຂອງປະຕິກູນຍ່ອມຕັ້ງຢູ່ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ອະນິດຈະສັນຍາ ເຮົາຈະເລີນດີແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍຈຶ່ງມີແກ່ເຮົາ ພາວະນາພະລະຂອງເຮົາເຖິງທີ່ແລ້ວ" ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນອະນິດຈະສັນຍານັ້ນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ອະນິດຈະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" (໕)

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ອະນິດເຈ ທຸກຂະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" ເພາະອາໄສເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະນິດເຈ ທຸກຂະສັນຍາ ຢູ່ໂດຍສ່ວນຫຼາຍ ສັນຍາໃນຄວາມເສື່ອຍຊາ ໃນຄວາມຂີ້ຄ້ານ ໃນຄວາມທໍ້ຖອຍ ໃນຄວາມຜະໝາດ ໃນການບໍ່ປະກອບຄວາມພຽນ ແລະໃນການບໍ່ພິຈາລະນາເຫັນວ່າ ເປັນໄພອັນຮ້າຍແຮງເໝືອນເພຊຊະຄາດຜູ້ເງື້ອດາບຂຶ້ນ

ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະນິດເຈ ທຸກຂະສັນຍາຢູ່ໂດຍສ່ວນຫຼາຍ ສັນຍາໃນຄວາມເສື່ອຍຊາ ໃນຄວາມຂີ້ຄ້ານ ໃນຄວາມທໍ້ຖອຍ ໃນຄວາມຜະໝາດ ໃນການບໍ່ປະກອບຄວາມພຽນ ແລະໃນການບໍ່ພິຈາລະນາບໍ່ຜາກົດວ່າເປັນໄພອັນຮ້າຍແຮງເໝືອນເພດຊະຄາດຜູ້ເງື້ອດາບຂຶ້ນ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ “ອະນິດເຈ ທຸກຂະສັນຍາ ເຮົາບໍ່ໄດ້ຈະເລີນແລ້ວ ຄຸນວິເສດທັງເບື້ອງຕົ້ນ ແລະເບື້ອງປາຍຈຶ່ງບໍ່ມີແກ່ເຮົາ ພາວະນາພະລະຂອງເຮົາຍັງບໍ່ເຖິງທີ ” ເພາະສະນັ້ນພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນອະນິດເຈ ທຸກຂະສັນຍານັ້ນ

ແຕ່ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍອະນິດເຈ ທຸກຂະສັນຍາຢູ່ໂດຍສ່ວນຫຼາຍ ສັນຍາໃນຄວາມເສື່ອຍຊາ ໃນຄວາມຂີ້ຄ້ານ ໃນຄວາມທໍ້ຖອຍ ໃນຄວາມຜະໝາດ ໃນການບໍ່ປະກອບຄວາມພຽນ ແລະໃນການບໍ່ພິຈາລະນາປຣາກຕວ່າເປັນໄພອັນຮ້າຍແຮງ ເໝືອນເພດຊະຄາດຜູ້ເງື້ອດາບຂຶ້ນ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ ອະນິດເຈ ທຸກຂະສັນຍາ ເຮົາຈະເລີນດີແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍຈຶ່ງມີແກ່ເຮົາ ພາວະນາພະລະຂອງເຮົາເຖິງທີ່ແລ້ວ” ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນອະນິດເຈ ທຸກຂະສັນຍານັ້ນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ “ອະນິດເຈ ທຸກຂະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວຍ່ອມມີ ຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ” (໖)

ເຮົາກ່າວໄວ້ເຊັ່ນນີ້ວ່າ “ທຸກເຂ ອະນັດຕະສັນຍາທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ” ເພາະອາໄສ ເຫດອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸມີໃຈທີ່ອົບຮົມແລ້ວດ້ວຍທຸກເຂ ອະນັດຕະສັນຍາຢູ່ໂດຍສ່ວນຫຼາຍ ມີໃຈປາສະຈາກອະຫັງການ ມະມັງການ ແລະມານະ໑ໃນຮ່າງກາຍທີ່ມີວິນຍານນີ້ ແລະໃນນິມິດພາຍນອກທັງປວງ ກ້າວລ່ວງມານະ ສະງົບແລ້ວ ລຸດພົ້ນດີແລ້ວ

ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍທຸກເຂ ອະນັດຕະສັນຍາຢູ່ໂດຍສ່ວນຫຼາຍ ມີໃຈບໍ່ປາສະຈາກອະຫັງການ ມະມັງການ ແລະມານະໃນຮ່າງກາຍທີ່ມີວິນຍານນີ້ ແລະໃນນິມິດພາຍນອກທັງປວງ ບໍ່ກ້າວລ່ວງມານະ ບໍ່ສະງົບ ບໍ່ລຸດພົ້ນແລ້ວ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ “ທຸກເຂ ອະນັດຕະສັນຍາ ເຮົາບໍ່ໄດ້ຈະເລີນແລ້ວ ຄຸນວິເສດທັງເບື້ອງຕົ້ນແລະເບື້ອງປາຍຈຶ່ງບໍ່ມີແກ່ເຮົາ ພາວະນາພະລະຂອງເຮົາຍັງບໍ່ເຖິງທີ ” ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນທຸກເຂ ອະນັດຕະສັນຍານັ້ນ

ແຕ່ຖ້າພິກຂຸມີໃຈທີ່ອົບຮົມແລ້ວດ້ວຍທຸກເຂ ອະນັດຕະສັນຍາຢູ່ໂດຍສ່ວນຫຼາຍ ມີໃຈປາສະຈາກ ອະຫັງການ ມະມັງການ ແລະມານະ ໃນຮ່າງກາຍທີ່ມີວິນຍານນີ້ ແລະໃນນິມິດ

ພາຍນອກທັງປວງ ກ້າວລ່ວງມານະ ສະງົບແລ້ວ ລຸດພົ້ນດີແລ້ວ ພິກຂຸເພິ່ງຮູ້ຂໍ້ນີ້ວ່າ "ທຸກເຂ ອະນັດຕະສັນຍາ ເຮົາຈະເລີນດີແລ້ວ ຄຸນວິເສດທັງເບື້ອງຕົ້ນ ແລະເບື້ອງປາຍຈຶ່ງມີແກ່ເຮົາ ພາວະນາພະລະຂອງເຮົາ ເຖິງທີ່ແລ້ວ" ເພາະສະນັ້ນ ພິກຂຸນັ້ນຈຶ່ງເປັນຜູ້ຮູ້ແຈ້ງໃນທຸກເຂ ອະນັດຕະສັນຍານັ້ນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ທຸກເຂ ອະນັດຕະສັນຍາທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ" (໗)

ພິກຂຸທັງຫຼາຍ ສັນຍາ ໗ ປະການນີ້ແລ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີ ຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

**ທຸຕິຍະສັນຍາສູດທີ ໖ ຈົບ**

# ໗. ເມຖຸນສູດ

## ວ່າດ້ວຍເມຖຸນສັງໂຍກ

[໕໐] ຄັ້ງນັ້ນແລ ຊານຸດໂສນີພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ທ່ານພຣະໂຄດົມ ຍັງປະຕິນຍາວ່າ ຕົນເປັນພົມມະຈາຣີຢູ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງຜູ້ໃດຜູ້ໜຶ່ງວ່າ "ເຂົາປະພຶດພົມມະຈັນ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ບໍລິສຸດ ບໍລິບູນ" ບຸກຄົນນັ້ນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງເຮົານັ້ນ ເພາະເຮົາປະພຶດພົມມະຈັນ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ບໍລິສຸດ ບໍລິບູນ"

ພາມທູນຖາມວ່າ " ທ່ານພຣະໂຄດົມ ອັນໃດນໍ? ຊື່ວ່າ ເປັນຄວາມຂາດ ຄວາມຊອດ ຄວາມດ່າງ ຄວາມໝອງແຫ່ງພົມມະຈັນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ

໑. ສະມະນະ ຫຼື ພາມບາງຄົນໃນໂລກນີ້ ປະຕິນຍາວ່າເປັນພົມມະຈາຣີຢ່າງ ຖືກຕ້ອງ ບໍ່ປະພຶດກິດສອງຕໍ່ສອງກັບມາຕຸຄາມ ແຕ່ຍັງຍິນດີການ ລູບໄລ້ ການຂັດຖູ ການໃຫ້ອາບນ້ຳ

ແລະການບີບນວດຂອງມາຕຸຄາມ ເຂົາພໍໃຈ ຕິດໃຈ ແລະເຖິງຄວາມພໍໃຈກັບການເຮັດເຊັ່ນນັ້ນ ແມ່ນນີ້ກໍຊື່ວ່າ ເປັນຄວາມຂາດ ຄວາມຊອດ ຄວາມດ່າງ ແລະຄວາມໝອງແຫ່ງພົມມະຈັນ ພາມ ຜູ້ນີ້ເຮົາຮຽກວ່າປະພຶດພົມມະຈັນບໍ່ບໍລິສຸດ ປະກອບດ້ວຍເມຖຸນສັງໂຍກ ຍ່ອມບໍ່ລຸດພົ້ນຈາກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເຮົາກ່າວວ່າ ບໍ່ລຸດພົ້ນຈາກທຸກ

໔. ສະມະນະ ຫຼື ພາມບາງຄົນໃນໂລກນີ້ ປະຕິນຍາວ່າເປັນພົມມະຈາຣີຢ່າງຖືກຕ້ອງ ບໍ່ປະພຶດກິດສອງຕໍ່ສອງກັບມາຕຸຄາມ ທັງບໍ່ຍິນດີການລູບໄລ້ ການຂັດຖູ ການໃຫ້ອາບນ້ຳ ແລະການບີບນວດ ຂອງມາຕຸຄາມ ແຕ່ຍັງ ຢອກ ຍິ້ມແຍ້ມ ຫົວມ່ວນຊື່ນກັບມາຕຸຄາມ ຯລຯ

໓. ສະມະນະ ຫຼື ພາມບາງຄົນໃນໂລກນີ້ ຯລຯ ທັງບໍ່ຢອກ ຍິ້ມແຍ້ມ ຫົວມ່ວນຊື່ນກັບມາຕຸຄາມ ແຕ່ຍັງຈ້ອງແນມຕາມາຕຸຄາມ ຯລຯ

໔. ສະມະນະ ຫຼື ພາມບາງຄົນໃນໂລກນີ້ ຯລຯ ທັງບໍ່ຈ້ອງແນມຕາມາຕຸຄາມ ແຕ່ຍັງຟັງສຽງຂອງມາຕຸຄາມຜູ້ຫົວ ຜູ້ເວົ້າ ຜູ້ຂັບຮ້ອງ ຫຼື ຜູ້ຮ້ອງໄຫ້ຢູ່ນອກຝາ ຫຼື ນອກກຳແພງ ຯລຯ

໕. ສະມະນະ ຫຼື ພາມບາງຄົນໃນໂລກນີ້ ຯລຯ ທັງບໍ່ຟັງສຽງຂອງມາຕຸຄາມ ຜູ້ຫົວ ຜູ້ເວົ້າ ຜູ້ຂັບຮ້ອງ ຫຼື ຜູ້ຮ້ອງໄຫ້ຢູ່ນອກຝາ ຫຼື ນອກກຳແພງ ແຕ່ຍັງຄອຍນຶກເຖິງການທີ່ເຄີຍຫົວໂອ້ລົມ ຍິ້ມແຍ້ມກັບມາຕຸຄາມ ຯລຯ

໖. ສະມະນະ ຫຼື ພາມບາງຄົນໃນໂລກນີ້ ຯລຯ ທັງບໍ່ຄອຍນຶກເຖິງການທີ່ເຄີຍຫົວ ໂອ້ລົມ ຍິ້ມແຍ້ມກັບມາຕຸຄາມ ແຕ່ຍັງເບິ່ງຄະຫະບໍດີ ຫຼື ບຸດຄະຫະບໍດີຜູ້ເອີບອີ່ມພຽບພ້ອມດ້ວຍການມະຄຸນ ໕ ບຳເຣີຕົນຢູ່ ຯລຯ

໗. ສະມະນະ ຫຼື ພາມບາງຄົນໃນໂລກນີ້ ຯລຯ ທັງບໍ່ເບິ່ງຄະຫະບໍດີ ຫຼື ບຸດຄະຫະບໍດີຜູ້ເອີບອີ່ມ ພຽບພ້ອມດ້ວຍການມະຄຸນ ໕ ບຳເຣີຕົນຢູ່ ແຕ່ຍັງປະພຶດພົມມະຈັນປາຖະໜາເປັນເທບພະເຈົ້າໝູ່ໃດໝູ່ໜຶ່ງວ່າ "ດ້ວຍສີນ ຂໍ້ວັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທບ ຫຼື ເທບອົງໃດອົງໜຶ່ງ" ເຂົາພໍໃຈ ຕິດໃຈ ແລະເຖິງຄວາມພໍໃຈກັບການເຮັດເຊັ່ນນັ້ນ ແມ່ນນີ້ກໍຊື່ວ່າ ເປັນຄວາມຂາດ ຄວາມຊອດ ຄວາມດ່າງ ແລະຄວາມໝອງແຫ່ງພົມມະຈັນ ພາມ ຜູ້ນີ້ເຮົາຮຽກວ່າປະພຶດພົມມະຈັນບໍ່ບໍລິສຸດ ປະກອບດ້ວຍເມຖຸນສັງໂຍກ ບໍ່ລຸດພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເຮົາກ່າວວ່າ ບໍ່ລຸດພົ້ນຈາກທຸກ

ພາມ ຕາບໃດ ເຮົາຍັງເຫັນເມຖຸນສັງໂຍກ ໗ ປະການນີ້ ຢ່າງໃດຢ່າງໜຶ່ງ ໃນຕົນທີ່ຍັງລະບໍ່ໄດ້ ຕາບນັ້ນ ເຮົາກໍຍັງບໍ່ຢືນຢັນວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານ ອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງ ສະມະນະພາມ ເທວະດາ ແລະມະນຸດ ແຕ່ເມື່ອໃດເຮົາບໍ່ເຫັນເມຖຸນສັງໂຍກ ໗ ປະການນີ້ ຢ່າງໃດຢ່າງໜຶ່ງໃນຕົນທີ່ຍັງລະບໍ່ໄດ້ເມື່ອນັ້ນເຮົາຈຶ່ງຢືນຢັນໄດ້ວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຍານທັດສະນະເກີດຂຶ້ນແກ່ເຮົາວ່າ "ວິມຸດຕິ ຂອງເຮົາບໍ່ກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ຍ່ອມບໍ່ມີ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ຊານຸດໂສນີພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະຍິ່ງ ໆລໆ ຂໍທ່ານພຣະໂຄດົມໂຜດຊົງຈຳຂ້າພຣະອົງວ່າເປັນອຸປາສິກາ ຜູ້ເຖິງສະຣະນະຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ເມຖຸນສູດທີ ໗ ຈົບ**

# ໘. ສັງໂຍຄະສູດ

## ວ່າດ້ວຍຄວາມກ່ຽວຂ້ອງແລະຄວາມບໍ່ກ່ຽວຂ້ອງ

[໔໑] ພິກຂຸທັງຫຼາຍ ເຮົາຈັກສະແດງທຳບັນລະຍາຍເລື້ອງຄວາມກ່ຽວຂ້ອງ ແລະຄວາມບໍ່ກ່ຽວຂ້ອງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳບັນລະຍາຍເລື້ອງຄວາມກ່ຽວຂ້ອງ ແລະຄວາມບໍ່ກ່ຽວຂ້ອງ ເປັນແນວໃດ?

ຄື ສະຕີຍ່ອມກຳນົດ

໑. ຄວາມເປັນສະຕີພາຍໃນຕົນ
໒. ກິຣິຍາຂອງສະຕີ
໓. ທ່າທາງຂອງສະຕີ
໔. ຄວາມວາງຕົວຂອງສະຕີ
໕. ຄວາມພໍໃຈຂອງສະຕີ
໖. ສຽງຂອງສະຕີ
໗. ເຄື່ອງປະດັບຂອງສະຕີ

ນາງຍ່ອມຕິດໃຈຍິນດີຍິ່ງໃນຄວາມເປັນສະຕີພາຍໃນຕົນເປັນຕົ້ນນັ້ນ

ນາງຜູ້ຕິດໃຈຍິນດີຍິ່ງໃນຄວາມເປັນສະຕີພາຍໃນຕົນເປັນຕົ້ນນັ້ນ ຍ່ອມກຳນົດ

໑. ຄວາມເປັນບຸຣຸດພາຍນອກ
໒. ທ່າທາງຂອງບຸຣຸດ
໓. ຄວາມພໍໃຈຂອງບຸຣຸດ
໗. ເຄື່ອງປະດັບຂອງບຸຣຸດ
໔. ກິຣິຍາຂອງບຸຣຸດ
໕. ຄວາມວາງຕົວຂອງບຸຣຸດ
໖. ສຽງຂອງບຸຣຸດ

ນາງຍ່ອມຕິດໃຈຍິນດີຍິ່ງໃນຄວາມເປັນບຸຣຸດພາຍນອກເປັນຕົ້ນນັ້ນ ນາງຜູ້ຕິດໃຈຍິນດີຍິ່ງ ໃນຄວາມເປັນບຸຣຸດພາຍນອກເປັນຕົ້ນນັ້ນ ຍ່ອມມຸ້ງຫວັງການກ່ຽວຂ້ອງພາຍນອກ ແລະມຸ້ງຫວັງ ສຸກແລະໂສມະນັດທີ່ຈະເກີດຂຶ້ນເພາະການກ່ຽວຂ້ອງນັ້ນເປັນປັດໄຈ ສັດທັງຫຼາຍຜູ້ຍິນດີຍິ່ງໃນຄວາມເປັນສະຕີ ຍ່ອມເປັນຜູ້ກ່ຽວຂ້ອງກັບບຸຣຸດທັງຫຼາຍ ສະຕີລ່ວງພົ້ນຄວາມເປັນສະຕີໄປບໍ່ໄດ້ ຢ່າງນີ້ແລ

ບຸຣຸດຍ່ອມກຳນົດ

໑. ຄວາມເປັນບຸຣຸດພາຍໃນຕົນ
໒. ທ່າທາງຂອງບຸຣຸດ
໓. ຄວາມພໍໃຈຂອງບຸຣຸດ
໗. ເຄື່ອງປະດັບຂອງບຸຣຸດ
໔. ກິຣິຍາຂອງບຸຣຸດ
໕. ຄວາມວາງຕົວຂອງບຸຣຸດ
໖. ສຽງຂອງບຸຣຸດ

ເຂົາຍ່ອມຕິດໃຈຍິນດີຍິ່ງໃນຄວາມເປັນບຸຣຸດພາຍໃນຕົນເປັນຕົ້ນນັ້ນ

ເຂົາຜູ້ຕິດໃຈຍິນດີຍິ່ງໃນຄວາມເປັນບຸຣຸດພາຍໃນຕົນເປັນຕົ້ນນັ້ນ ຍ່ອມກຳນົດ

໑. ຄວາມເປັນສະຕີພາຍນອກ
໒. ທ່າທາງຂອງສະຕີ
໓. ຄວາມພໍໃຈຂອງສະຕີ
໗. ເຄື່ອງປະດັບຂອງສະຕີ
໔. ກິຣິຍາຂອງສະຕີ
໕. ຄວາມວາງຕົວຂອງສະຕີ
໖. ສຽງຂອງສະຕີ

ເຂົາຍ່ອມຕິດໃຈຍິນດີຍິ່ງໃນຄວາມເປັນສະຕີພາຍນອກເປັນຕົ້ນນັ້ນ ເຂົາຜູ້ຕິດໃຈຍິນດີຍິ່ງໃນຄວາມເປັນສະຕີພາຍນອກເປັນຕົ້ນນັ້ນ ຍ່ອມມຸ້ງຫວັງການກ່ຽວຂ້ອງພາຍນອກ ແລະມຸ້ງຫວັງສຸກແລະໂສມະນັດທີ່ຈະເກີດຂຶ້ນເພາະການກ່ຽວຂ້ອງນັ້ນ ເປັນປັດໄຈ ສັດທັງຫຼາຍຜູ້ຍິນດີຍິ່ງໃນຄວາມເປັນບຸຣຸດ ຍ່ອມເປັນຜູ້ກ່ຽວຂ້ອງກັບສະຕີທັງຫຼາຍ ບຸຣຸດລ່ວງພົ້ນຄວາມເປັນບຸຣຸດໄປບໍ່ໄດ້ ຢ່າງນີ້ແລ

ພິກຂຸທັງຫຼາຍ ຄວາມກ່ຽວຂ້ອງເປັນແນວນີ້ແລ
ຄວາມບໍ່ກ່ຽວຂ້ອງ ເປັນແນວໃດ?
ຄື ສະຕີຍ່ອມບໍ່ກຳນົດ

໑. ຄວາມເປັນສະຕີພາຍໃນຕົນ
໒. ກິຣິຍາຂອງສະຕີ
໓. ທ່າທາງຂອງສະຕີ
໔. ຄວາມວາງຕົວຂອງສະຕີ
໕. ຄວາມພໍໃຈຂອງສະຕີ
໖. ສຽງຂອງສະຕີ
໗. ເຄື່ອງປະດັບຂອງສະຕີ

ນາງຍ່ອມບໍ່ຕິດໃຈ ບໍ່ຍິນດີຍິ່ງໃນຄວາມເປັນສະຕີພາຍໃນຕົນເປັນຕົ້ນນັ້ນ

ນາງຜູ້ບໍ່ຕິດໃຈບໍ່ຍິນດີຍິ່ງໃນຄວາມເປັນສະຕີໃນພາຍໃນຕົນເປັນຕົ້ນນັ້ນ ຍ່ອມບໍ່ກຳນົດ

໑. ຄວາມເປັນບຸຣຸດພາຍນອກ
໒. ກິຣິຍາຂອງບຸຣຸດ
໓. ທ່າທາງຂອງບຸຣຸດ
໔. ຄວາມວາງຕົວຂອງບຸຣຸດ
໕. ຄວາມພໍໃຈຂອງບຸຣຸດ
໖. ສຽງຂອງບຸຣຸດ
໗. ເຄື່ອງປະດັບຂອງບຸຣຸດ

ນາງຍ່ອມບໍ່ຕິດໃຈບໍ່ຍິນດີຍິ່ງໃນຄວາມເປັນບຸຣຸດພາຍນອກເປັນຕົ້ນນັ້ນ ນາງຜູ້ບໍ່ຕິດໃຈບໍ່ຍິນດີຍິ່ງໃນຄວາມເປັນບຸຣຸດພາຍນອກເປັນຕົ້ນນັ້ນ ຍ່ອມບໍ່ມຸ້ງຫວັງການກ່ຽວຂ້ອງພາຍນອກ ແລະບໍ່ມຸ້ງຫວັງສຸກ ແລະໂສມະນັດທີ່ຈະເກີດຂຶ້ນເພາະການກ່ຽວຂ້ອງນັ້ນເປັນປັດໄຈ ສັດທັງຫຼາຍຜູ້ບໍ່ຍິນດີຍິ່ງໃນຄວາມເປັນສະຕີ ຍ່ອມເປັນຜູ້ບໍ່ກ່ຽວຂ້ອງກັບບຸຣຸດທັງຫຼາຍ ສະຕີລ່ວງພົ້ນຄວາມເປັນສະຕີໄປໄດ້ ຢ່າງນີ້ແລ

ບຸຣຸດຍ່ອມບໍ່ກຳນົດ

໑. ຄວາມເປັນບຸຣຸດພາຍໃນຕົນ
໒. ກິຣິຍາຂອງບຸຣຸດ
໓. ທ່າທາງຂອງບຸຣຸດ
໔. ຄວາມວາງຕົວຂອງບຸຣຸດ
໕. ຄວາມພໍໃຈຂອງບຸຣຸດ
໖. ສຽງຂອງບຸຣຸດ
໗. ເຄື່ອງປະດັບຂອງບຸຣຸດ

ເຂົາຍ່ອມບໍ່ຕິດໃຈບໍ່ຍິນດີຍິ່ງໃນຄວາມເປັນບຸຣຸດພາຍໃນຕົນເປັນຕົ້ນນັ້ນ

ເຂົາຜູ້ບໍ່ຕິດໃຈບໍ່ຍິນດີຍິ່ງໃນຄວາມເປັນບຸຣຸດພາຍໃນຕົນເປັນຕົ້ນນັ້ນ ຍ່ອມບໍ່ກຳນົດ

໑. ຄວາມເປັນສະຕີພາຍນອກ
໒. ກິຣິຍາຂອງສະຕີ

໓. ທ່າທາງຂອງສະຕີ ໔. ຄວາມວາງຕົວຂອງສະຕີ
໕. ຄວາມພໍໃຈຂອງສະຕີ ໖. ສຽງຂອງສະຕີ
໗. ເຄື່ອງປະດັບຂອງສະຕີ

ເຂົາຍ່ອມບໍ່ຕິດໃຈ ບໍ່ຍິນດີຍິ່ງໃນຄວາມເປັນສະຕີພາຍນອກເປັນຕົ້ນນັ້ນ ເຂົາຜູ້ບໍ່ຕິດໃຈ ບໍ່ຍິນດີຍິ່ງໃນຄວາມເປັນສະຕີພາຍນອກເປັນຕົ້ນນັ້ນ ຍ່ອມບໍ່ມຸ້ງຫວັງການກ່ຽວຂ້ອງພາຍນອກ ແລະບໍ່ມຸ້ງຫວັງສຸກ ແລະໂສມະນັດທີ່ຈະເກີດຂຶ້ນເພາະການກ່ຽວຂ້ອງນັ້ນເປັນປັດໄຈ ສັດທັງຫຼາຍ ຜູ້ ບໍ່ຍິນດີຍິ່ງໃນຄວາມເປັນບຸຣຸດ ຍ່ອມເປັນຜູ້ບໍ່ກ່ຽວຂ້ອງກັບສະຕີທັງຫຼາຍ ບຸຣຸດລ່ວງພົ້ນຄວາມ ເປັນບຸຣຸດໄປໄດ້ ຢ່າງນີ້ແລ

ພິກຂຸທັງຫຼາຍ ຄວາມບໍ່ກ່ຽວຂ້ອງ ເປັນແນວນີ້ແລ

ພິກຂຸທັງຫຼາຍ ທຳບັນລະຍາຍເລື້ອງຄວາມກ່ຽວຂ້ອງ ແລະຄວາມບໍ່ກ່ຽວຂ້ອງ ເປັນແນວ ນີ້ແລ

**ສັງໂຍຄະສູດທີ ໗ ຈົບ**

# ໘. ທານມະຫັບຜະລະສູດ

## ວ່າດ້ວຍທານທີ່ມີຜົນຫຼາຍແລະທານທີ່ບໍ່ມີຜົນຫຼາຍ

[໕໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແຄມຝັ່ງສະຄັກຄາໂບກຂະຣະນີ ເຂດ ເມືອງຈຳປາ ຄັ້ງນັ້ນແລ ອຸປາສົກຊາວເມືອງຈຳປາຈຳນວນຫຼາຍເຂົ້າໄປຫາທ່ານພຣະສາຣີບຸດເຖິງ ທີ່ຢູ່ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ ວ່າ

"ທ່ານຜູ້ຈະເລີນ ເຮົາທັງຫຼາຍໄດ້ຟັງທຳມິກະຖາ ຕໍ່ພຣະພັກພຣະຜູ້ມີພຣະພາກເຈົ້າຜ່ານ ມາດົນແລ້ວ ຂໍໃຫ້ເຮົາທັງຫຼາຍໄດ້ຟັງທຳມິກະຖາຂອງພຣະຜູ້ມີພຣະພາກເຈົ້າອີກດ້ວຍເທີ້ນ"

ທ່ານພຣະສາຣີບຸດກ່າວວ່າ "ຜູ້ມີອາຍຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຄວນມາໃນວັນ ອຸໂປສົດເທີ້ນ ຈະໄດ້ຟັງທຳມິກະຖາໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແນ່ນອນ" ອຸປາສົກ ຊາວເມືອງຈຳປາ ຮັບຄຳແລ້ວລຸກຈາກບ່ອນນັ່ງ ອະພິວາດ ທຳປະທັກຂິນແລ້ວຈາກໄປ

ເມື່ອເຖິງວັນອຸໂປສົດ ອຸປາສົກຊາວເມືອງຈຳປາໄດ້ພາກັນໄປຫາທ່ານພຣະສາຣີບຸດເຖິງ ທີ່ຢູ່ ອະພິວາດແລ້ວ ໄດ້ຢືນຢູ່ບ່ອນທີ່ສົມຄວນ ຕໍ່ຈາກນັ້ນ ທ່ານພຣະສາຣີບຸດພ້ອມດ້ວຍອຸປາສົກ

ຊາວເມືອງຈຳປາເຫຼົ່ານັ້ນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ບໍ ທານຊະນິດດຽວກັນທີ່ບຸກຄົນບາງຄົນໃນໂລກນີ້ ຖວາຍແລ້ວບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ແຕ່ທີ່ບຸກຄົນບາງຄົນໃນໂລກນີ້ຖວາຍແລ້ວກັບມີຜົນ ຫຼາຍ ມີອານິສົງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມີໄດ້ ສາຣີບຸດ ທານຊະນິດດຽວກັນທີ່ບຸກຄົນ ບາງ ຄົນໃນໂລກນີ້ຖວາຍແລ້ວບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ແຕ່ທີ່ບຸກຄົນບາງຄົນໃນໂລກນີ້ ຖວາຍ ແລ້ວກັບມີຜົນຫຼາຍ ມີອານິສົງຫຼາຍ"

"ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ທານຊະນິດດຽວກັນທີ່ ບຸກຄົນບາງຄົນໃນໂລກນີ້ຖວາຍແລ້ວບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ອັນໃດນໍ? ເປັນເຫດເປັນປັດ ໄຈໃຫ້ທານຊະນິດດຽວກັນທີ່ບຸກຄົນບາງຄົນໃນໂລກນີ້ຖວາຍແລ້ວກັບມີຜົນຫຼາຍ ມີອານິສົງຫຼາຍ"

"ສາຣີບຸດ ບຸກຄົນບາງຄົນໃນໂລກນີ້ໃຫ້ທານຢ່າງມີໃຈເຍື່ອໃຍ ໃຫ້ທານຢ່າງມີຈິດຜູກພັນ ໃຫ້ທານຢ່າງມຸ້ງຫວັງສັ່ງສົມບຸນ ໃຫ້ທານດ້ວຍຄິດວ່າ "ເຮົາລະໂລກນີ້ໄປແລ້ວຈັກບໍຣິໂພກຜົນ ທານນີ້" ເຂົາຈຶ່ງໃຫ້ທານນັ້ນ ຄື ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນ ນອນ ບ່ອນພັກ ແລະເຄື່ອງປະທີບແກ່ສະມະນະ ຫຼື ພາມ ສາຣີບຸດ ທ່ານເຂົ້າໃຈເລື້ອງນັ້ນ ຢ່າງໃດ ຄື ບຸກຄົນບາງຄົນໃນໂລກນີ້ຄວນໃຫ້ທານເຊັ່ນນັ້ນຫຼືບໍ່?"

"ຄວນໃຫ້ ຂ້ານ້ອຍ"

"ສາຣີບຸດ ໃນການໃຫ້ທານເຊັ່ນນັ້ນ ບຸກຄົນຜູ້ໃຫ້ທານຢ່າງມີໃຈເຍື່ອໃຍ ໃຫ້ທານຢ່າງມີ ຈິດຜູກພັນ ໃຫ້ທານຢ່າງມຸ້ງຫວັງສັ່ງສົມບຸນ ໃຫ້ທານດ້ວຍຄິດວ່າ "ເຮົາລະໂລກນີ້ໄປແລ້ວຈັກບໍຣິ ໂພກຜົນທານນີ້" ເຂົາໃຫ້ທານນັ້ນແລ້ວ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບພວກເທວະດາ ຊັ້ນຈາຕຸມະຫາຣາດ ເຂົາໃຫ້ກຳນັ້ນສິ້ນໄປ ໃຫ້ລິດນັ້ນສິ້ນໄປ ໃຫ້ຍົດນັ້ນສິ້ນໄປ ໃຫ້ຄວາມເປັນ ໃຫຍ່ນັ້ນສິ້ນໄປ ເປັນຜູ້ຍັງຕ້ອງກັບມາສູ່ຄວາມເປັນຢ່າງນີ້ອີກ"

"ສາຣີບຸດ ສ່ວນບຸກຄົນບາງຄົນໃນໂລກນີ້ໃຫ້ທານຢ່າງບໍ່ມີໃຈເຍື່ອໃຍ ໃຫ້ທານຢ່າງບໍ່ມີ ຈິດຜູກພັນ ໃຫ້ທານຢ່າງບໍ່ມຸ້ງຫວັງສັ່ງສົມບຸນ ບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເຮົາລະໂລກນີ້ໄປ ແລ້ວຈັກບໍຣິ ໂພຄຜົນທານນີ້" ແຕ່ໃຫ້ທານດ້ວຍຄິດວ່າ "ການໃຫ້ທານເປັນການດີ" ຯລຯ"

"ສາຣີບຸດ ສ່ວນບຸກຄົນບາງຄົນໃນໂລກນີ້ໃຫ້ທານຢ່າງບໍ່ມີໃຈເຍື່ອໃຍ ໃຫ້ທານຢ່າງບໍ່ມີ ຈິດຜູກພັນ ໃຫ້ທານຢ່າງບໍ່ມຸ້ງຫວັງສັ່ງສົມບຸນ ບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເຮົາລະໂລກນີ້ໄປ

ແລ້ວຈັກບໍຣິໂພກຜົນທານນີ້" ທັງບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ການໃຫ້ທານເປັນການດີ" ແຕ່ໃຫ້ທານດ້ວຍຄິດວ່າ "ບິດາມານດາ ປູ່ຍາ ຕາຍາຍ ເຄີຍໃຫ້ທານ ເຄີຍເຮັດທານ ເຮົາບໍ່ຄວນໃຫ້ວົງຕະກູນເກົ່າແກ່ເສື່ອມເສຍໄປ" ຯລຯ"

"ສາຣີບຸດ ສ່ວນບຸກຄົນບາງຄົນໃນໂລກນີ້ ຯລຯ ທັງບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ບິດາມານດາ ປູ່ຍາ ຕາຍາຍ ເຄີຍໃຫ້ທານ ເຄີຍເຮັດທານ ເຮົາບໍ່ຄວນໃຫ້ວົງຕະກູນເກົ່າແກ່ເສື່ອມເສຍໄປ" ແຕ່ໃຫ້ທານດ້ວຍຄິດວ່າ "ເຮົາຫຸງຫາກິນເອງໄດ້ ຊົນເຫຼົ່ານີ້ຫຸງຫາກິນເອງບໍ່ໄດ້ ການທີ່ເຮົາຫຸງຫາກິນເອງໄດ້ ຈະບໍ່ໃຫ້ທານແກ່ຊົນເຫຼົ່ານີ້ຜູ້ຫຸງຫາກິນເອງບໍ່ໄດ້ ບໍ່ຄວນ" ຯລຯ"

"ສາຣີບຸດ ສ່ວນບຸກຄົນບາງຄົນໃນໂລກນີ້ ຯລຯ ທັງບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເຮົາຫຸງຫາກິນເອງໄດ້ ຊົນເຫຼົ່ານີ້ຫຸງຫາກິນເອງບໍ່ໄດ້ ການທີ່ເຮົາຫຸງຫາກິນເອງໄດ້ ຈະບໍ່ໃຫ້ທານແກ່ຊົນເຫຼົ່ານີ້ຜູ້ຫຸງຫາກິນເອງບໍ່ໄດ້ ບໍ່ຄວນ" ແຕ່ໃຫ້ທານດ້ວຍຄິດວ່າ "ເຮົາໃຫ້ທານແລະຈຳແນກທານນີ້ເໝືອນເຫຼົ່າ ລືສີໃນປາງກ່ອນ ຄື ອັດຖະກະລືສີ ວາມະກະລືສີ ວາມະເທວະລືສີ ເວດສາມິດຕະລືສີ ຍະມະຕັກຄີລືສີ ອັງຄີຣະສະລືສີ ພາຣະທະວາຊະລືສີ ວາເສດຖະລືສີ ກັດສະປະລືສີ ແລະພະຄຸລືສີ ໄດ້ບູຊາມະຫາຍັນແລ້ວ ສະນັ້ນ" ຯລຯ"

"ສາຣີບຸດ ສ່ວນບຸກຄົນບາງຄົນໃນໂລກນີ້ ຯລຯ ທັງບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເຮົາຈັກໃຫ້ທານ ແລະຈຳແນກທານນີ້ເໝືອນເຫຼົ່າລືສີໃນປາງກ່ອນ ຄື ອັດຖະກະລືສີ ວາມະກະລືສີ ວາມະເທວະລືສີ ເວດສາມິດຕະລືສີ ຍະມະທັກຄີລືສີ ອັງຄີຣະສະລືສີ ພາຣະທະວາຊະລືສີ ວາເສດຖະລືສີ ກັດສະປະລືສີ ແລະພະຄຸລືສີ ໄດ້ບູຊາມະຫາຍັນແລ້ວ ແຕ່ໃຫ້ທານດ້ວຍຄິດວ່າ "ເມື່ອເຮົາໃຫ້ທານນີ້ ຈິດຍ່ອມຜ່ອງໃສ ຈະເກີດຄວາມຊື່ນຊົມ ໂສມະນັດ ຯລຯ"

"ສາຣີບຸດ ສ່ວນບຸກຄົນບາງຄົນໃນໂລກນີ້ ຯລຯ ທັງບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເມື່ອເຮົາໃຫ້ທານນີ້ ຈິດຍ່ອມຜ່ອງໃສ ຈະເກີດຄວາມຊື່ນຊົມ ໂສມະນັດ ແຕ່ໃຫ້ທານເປັນເຄື່ອງປະດັບຈິດ ປຸງແຕ່ງຈິດ ເຂົາຈຶ່ງໃຫ້ທານນັ້ນ ຄື ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ແລະເຄື່ອງປະທີບແກ່ສະມະນະພາມ ສາຣີບຸດ ທ່ານເຂົ້າໃຈເລື້ອງນັ້ນຢ່າງໃດ ຄື ບຸກຄົນບາງຄົນໃນໂລກນີ້ຄວນໃຫ້ທານເຊັ່ນນັ້ນຫຼືບໍ່?"

"ຄວນໃຫ້ ຂ້ານ້ອຍ"

"ສາຣີບຸດ ໃນການໃຫ້ທານເຊັ່ນນັ້ນ ບຸກຄົນຜູ້ໃຫ້ທານຢ່າງບໍ່ມີໃຈເຍື່ອໃຍ ໃຫ້ທານຢ່າງບໍ່ມີຈິດຜູກພັນ ໃຫ້ທານຢ່າງບໍ່ມຸ້ງຫວັງສັ່ງສົມບຸນ ບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເຮົາລະໂລກນີ້ໄປແລ້ວຈັກບໍຣິໂພກຜົນທານນີ້" ບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ການໃຫ້ທານເປັນການດີ" ບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ບິດາມານດາ ປູ່ຍາ ຕາຍາຍ ເຄີຍໃຫ້ທານ ເຄີຍເຮັດທານ ເຮົາບໍ່ຄວນໃຫ້ວົງ

ຕະກູນເກົ່າແກ່ເສື່ອມເສຍໄປ" ບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເຮົາຫຸງຫາກິນເອງໄດ້ ຊົນເຫຼົ່ານີ້ຫຸງຫາກິນເອງບໍ່ໄດ້ ການທີ່ເຮົາຫຸງຫາກິນເອງໄດ້ ຈະບໍ່ໃຫ້ທານແກ່ຊົນເຫຼົ່ານີ້ຜູ້ຫຸງຫາກິນເອງບໍ່ໄດ້ ບໍ່ຄວນ" ບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເຮົາຈັກໃຫ້ທານ ແລະຈຳແນກທານນີ້ເໝືອນເຫຼົ່າລືສີໃນປາງກ່ອນ ຄື ອັດຖະກະລືສີ ວາມະກະລືສີ ວາມະເທວະລືສີ ເວດສາມິດຕະລືສີ ຍະມະທັກຄີລືສີ ອັງຄີຣະສະລືສີ ພາຣະທະວາຊະລືສີ ວາເສດຖະລືສີ ກັດສະປະລືສີແລະພະຄຸລືສີ ໄດ້ບູຊາມະຫາຍັນແລ້ວ" ທັງບໍ່ແມ່ນໃຫ້ທານດ້ວຍຄິດວ່າ "ເມື່ອເຮົາໃຫ້ທານນີ້ ຈິດຍ່ອມຜ່ອງໃສ ຈະເກີດຄວາມຊື່ນຊົມ ໂສມະນັດ" ແຕ່ໃຫ້ທານເປັນເຄື່ອງປະດັບຈິດ ປຸງແຕ່ງຈິດ ເຂົາຈຶ່ງໃຫ້ທານນັ້ນ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບພວກເທວະດາຊັ້ນ ພົມກາຍິກາ ເຂົາໃຫ້ກຳນັ້ນສິ້ນໄປ ໃຫ້ລິດນັ້ນສິ້ນໄປ ໃຫ້ຍົດນັ້ນສິ້ນໄປ ໃຫ້ຄວາມເປັນໃຫຍ່ນັ້ນ ສິ້ນໄປ ເປັນຜູ້ບໍ່ຕ້ອງກັບມາບໍ່ມາສູ່ຄວາມເປັນຢ່າງນີ້ອີກ"

ສາຣີບຸດ ນີ້ແລ ເປັນເຫດເປັນປັດໄຈໃຫ້ທານຊະນິດດຽວກັນ ທີ່ບຸກຄົນບາງຄົນໃນໂລກນີ້ໃຫ້ແລ້ວບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ນີ້ແລ ເປັນເຫດເປັນປັດໄຈໃຫ້ທານຊະນິດດຽວກັນທີ່ບຸກຄົນບາງຄົນໃນໂລກນີ້ຖວາຍແລ້ວກັບມີຜົນຫຼາຍ ມີອານິສົງຫຼາຍ"

**ທານມະຫັບຜະລະສູດທີ ໙ ຈົບ**

# ໑໐. ນັນທະມາຕາສູດ

## ວ່າດ້ວຍອະຣິຍະທຳຂອງນັນທະມາຕາອຸປາສິກາ

[໕໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານມະຫາໂມກຄັນລານະ ຈາຣິກໄປໃນທັກຂິນາຄີຣີ ຊົນນະບົດ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະໄໝນັ້ນແລ ໃນເວລາໃກ້ຮຸ່ງ ນັນທະມາຕາອຸປາສິກາຊາວເມືອງເວລຸກັນຕະກະ ລຸກຂຶ້ນສູດປາຣາຍະນະສູດເປັນທຳນອງສໍຣະພັນຍະ

ທ້າວເວດສຸວັນມະຫາຣາດມີວຽກງານບາງຢ່າງ ສະເດັດຈາກທິດເໜືອໄປສູ່ທິດໃຕ້ ໄດ້ສະດັບ ສຽງຂອງນັນທະມາຕາທີ່ກຳລັງສູດປາຣາຍະນະສູດເປັນທຳນອງສໍຣະພັນຍະ ໄດ້ປະທັບຢືນສະດັບຈົນສູດຈົບ ເມື່ອນັນທະມາຕາອຸປາສິກາສູດປາຣາຍະນະ ສູດເປັນທຳນອງສໍຣະພັນຍະຈົບແລ້ວກໍນິ່ງຢູ່

ທ້າວເວດສຸວັນມະຫາຣາດຊົງຮູ້ວ່ານັນທະມາຕາອຸປາສິກາສູດຈົບ ຈຶ່ງອະນຸໂມທະນາວ່າ "ດີແລ້ວ ນາງ ດີແລ້ວ ນາງ"

"ທ່ານຜູ້ມີພັກຜ່ອງໃສນີ້ຄືໃຜ"

"ເຮົາຄືເວດສຸວັນມະຫາຣາດ ອ້າຍຂອງເຈົ້າ"

"ທ່ານຜູ້ມີພັກຜ່ອງໃສ ດີແລ້ວ ຖ້າເຊັ່ນນັ້ນ ຂໍທຳບັນລະຍາຍທີ່ເຮົາສູດນີ້ຈົ່ງເປັນເຄື່ອງຕ້ອນຮັບທ່ານ"

"ດີແລ້ວ ນາງ ນັ້ນແລຈົ່ງເປັນເຄື່ອງຕ້ອນຮັບເຮົາ ມື້ອື່ນ ພິກຂຸສົງມີທ່ານພຣະສາຣີບຸດ ແລະທ່ານພຣະໂມກຄັນລານະເປັນປະທານ ຍັງບໍ່ທັນໄດ້ສັນຈັງຫັນ ຈັກມາເຖິງເມືອງເວລຸກັນຕະກະ ເຈົ້າເພິ່ງອັງຄາດພິກຂຸສົງນັ້ນ ອຸທິດທັກຂິນາທານແກ່ເຮົາ ການເຮັດຢ່າງນີ້ຈັກເປັນເຄື່ອງຕ້ອນຮັບເຮົາ"

ເມື່ອຄືນນັ້ນຜ່ານໄປ ນັນທະມາຕາອຸປາສິກາໄດ້ຈັດຂອງຂົບສັນຢ່າງດີໄວ້ໃນນິເວດຂອງຕົນ ລຳດັບນັ້ນແລ ພິກຂຸສົງມີທ່ານພຣະສາຣີບຸດ ແລະທ່ານພຣະໂມກຄັນລານະເປັນປະທານ ຍັງບໍ່ທັນໄດ້ສັນຈັງຫັນ ກໍໄດ້ເດີນທາງມາເຖິງເມືອງເວລຸກັນຕະກະ ນັນທະມາຕາອຸປາສິກາຈຶ່ງຮຽກບຸຣຸດຄົນໜຶ່ງມາສັ່ງວ່າ "ມານີ້ ທ້າວ ເຈົ້າຈົ່ງໄປສູ່ອາຣາມບອກພັດຕະການ (ເວລາສັນອາຫານ) ແກ່ພິກຂຸສົງວ່າ "ທ່ານຜູ້ຈະເລີນ ໄດ້ເວລາແລ້ວ ພັດຕາຫານໃນນິເວດຂອງຍາແມ່ນັນທະມາຕາອຸປາສິກາສຳເລັດແລ້ວ"

ບຸຣຸດນັ້ນຮັບຄຳແລ້ວກໍໄປສູ່ອາຣາມບອກພັດຕະການແກ່ພິກຂຸສົງວ່າ "ທ່ານຜູ້ຈະເລີນ ໄດ້ເວລາແລ້ວ ພັດຕາຫານໃນນິເວດຂອງຍາແມ່ນັນທະມາຕາອຸປາສິກາສຳເລັດແລ້ວ"

ເມື່ອເວລາເຊົ້າ ພິກຂຸສົງມີທ່ານພຣະສາຣີບຸດ ແລະທ່ານພຣະໂມກຄັນລານະເປັນປະທານ ຄອງອັນຕະຣະວາສົກ ຖືບາດ ແລະຈີວອນ ເຂົ້າໄປສູ່ນິເວດຂອງນັນທະມາຕາອຸປາສິກາແລ້ວນັ່ງເທິງອາສະນະທີ່ປູລາດໄວ້

ລຳດັບນັ້ນແລ ນັນທະມາຕາອຸປາສິກາໄດ້ອັງຄາດພິກຂຸສົງມີທ່ານພຣະສາຣີບຸດ ແລະທ່ານພຣະໂມກຄັນລານະເປັນປະທານໃຫ້ອີ່ມໜຳສຳຣານດ້ວຍຂອງຫຍ້ຳຂອງສັນອັນປະນີດດ້ວຍມືຕົນເອງ

ເມື່ອທ່ານພຣະສາຣີບຸດສັນສຳເລັດວາງມືຈາກບາດ ນັນທະມາຕາອຸປາສິກາຈຶ່ງນັ່ງໃນທີ່ສົມຄວນທີ່ ໃດທີ່ໜຶ່ງເຊິ່ງຕ່ຳກວ່າ ທ່ານພຣະສາຣີບຸດໄດ້ຖາມນັນທະມາຕາອຸປາສິກາ ວ່າ

"ນັນທະມາຕາ ໃຜບອກການມາຂອງພິກຂຸສົງແກ່ທ່ານ"

ນັນທະມາຕາອຸປາສິກາຕອບ ວ່າ

໑. "ທ່ານຜູ້ຈະເລີນ ຂໍໂອກາດຂ້ານ້ອຍ ໃນເວລາໃກ້ຮຸ່ງ ຂ້ານ້ອຍລຸກຂຶ້ນສູດປາຣາຍະນະສູດ ເປັນທຳນອງສໍຣະພັນຍະຈົບແລ້ວໄດ້ນິ່ງຢູ່ ຂະນະນັ້ນ ທ້າວເວດສຸວັນມະຫາຣາດຊົງຮູ້ວ່າຂ້ານ້ອຍສູດຈົບແລ້ວ ຈຶ່ງອະນຸໂມທະນາວ່າ "ດີແລ້ວ ນາງ ດີແລ້ວ ນາງ" ຂ້ານ້ອຍຈຶ່ງຖາມວ່າ "ທ່ານຜູ້ມີພັກຜ່ອງໃສນີ້ຄືຜູ້ໃດ" ທ້າວເວດສຸວັນຕອບວ່າ "ເຮົາຄືເວດສຸວັນມະຫາຣາດ ອ້າຍຂອງ

ເຈົ້າ" ຂ້ານ້ອຍກ່າວວ່າ "ທ່ານຜູ້ມີພັກຜ່ອງໃສ ດີແລ້ວ ຖ້າເຊັ່ນນັ້ນ ຂໍທຳບັນລະຍາຍທີ່ຂ້ານ້ອຍສູດນີ້ຈົ່ງເປັນເຄື່ອງຕ້ອນຮັບທ່ານ" ທ້າວເວດສຸວັນຕອບວ່າ "ດີແລ້ວ ນາງ ນັ້ນແລຈົ່ງເປັນ ເຄື່ອງຕ້ອນຮັບເຮົາ ມື້ອື່ນ ພິກຂຸສົງມີທ່ານພຣະສາຣີບຸດ ແລະທ່ານພຣະໂມກຄັນລານະເປັນປະທານຍັງບໍ່ທັນໄດ້ສັນຈັງຫັນ ຈັກມາເຖິງເມືອງເວລຸກັນຕະກະ ທ່ານເພິ່ງອັງຄາດພິກຂຸສົງນັ້ນ ອຸທິດທັກຂິນາທານແກ່ເຮົາ ການເຮັດຢ່າງນີ້ຈັກເປັນເຄື່ອງຕ້ອນຮັບເຮົາ" ທ່ານຜູ້ຈະເລີນ ຂໍບຸນອັນມີຜົນຫຼາຍໃນທານນີ້ຈົ່ງອຳນວຍຜົນເພື່ອຄວາມສຸກແດ່ ທ້າວເວດສຸວັນມະຫາຣາດເທີ້ນ"

"ນັນທະມາຕາ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທີ່ທ່ານເຈຣະຈາກັບຕໍ່ໜ້າທ້າວເວດສຸວັນມະຫາຣາດຜູ້ເປັນເທບພະບຸດມີລິດຫຼາຍແນວນີ້ ມີສັກຫຼາຍແນວນີ້"

໔. "ທ່ານຜູ້ຈະເລີນ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ບໍ່ແມ່ນມີເທົ່ານີ້ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ແມ່ນຢ່າງອື່ນຍັງມີຢູ່ ຂໍໂອກາດຂ້ານ້ອຍ ຂ້ານ້ອຍມີບຸດຄົນດຽວຊື່ນັນທະ ເປັນທີ່ຮັກ ເປັນທີ່ພໍໃຈ ພຣະຣາຊາໄດ້ກົດຂີ່ ຂົ່ມເຫັງຂ້າເຂົາເພາະສາເຫດພຽງເລັກໜ້ອຍ ເມື່ອເດັກນັ້ນຖືກຈັບແລ້ວກໍຕາມ ກຳລັງຖືກຈັບກໍຕາມ ຖືກຂ້າແລ້ວກໍຕາມ ກຳລັງຖືກຂ້າກໍຕາມ ຖືກປະຫານແລ້ວກໍຕາມ ກຳລັງຖືກປະຫານກໍຕາມ ຂ້ານ້ອຍ ບໍ່ຮູ້ສຶກວ່າຈິດຈະຫວັ່ນໄຫວເລີຍ"

"ນັນທະມາຕາ ໜ້າອັດສະຈັນແທ້ແທ້ ບໍ່ເຄີຍຜາກົດ ແມ່ນພຽງຈິດຕຸບບາດທ່ານກໍເຮັດໃຫ້ບໍລິສຸດໄດ້ແລ້ວ"

໕. "ທ່ານຜູ້ຈະເລີນ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ບໍ່ແມ່ນມີເທົ່ານີ້ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ແມ່ນຢ່າງອື່ນຍັງມີຢູ່ ຂໍໂອກາດຂ້ານ້ອຍ ສາມີຂອງຂ້ານ້ອຍຕາຍແລ້ວໄປເກີດເປັນຍັກຕົນໜຶ່ງ ມາຜາກົດຕົວຄືເກົ່າໃຫ້ຂ້ານ້ອຍເຫັນ ຂ້ານ້ອຍບໍ່ຮູ້ສຶກວ່າຈິດຈະຫວັ່ນໄຫວເພາະເຫດນັ້ນເລີຍ"

"ນັນທະມາຕາ ໜ້າອັດສະຈັນແທ້ແທ້ ບໍ່ເຄີຍຜາກົດ ແມ່ນພຽງຈິດຕຸບບາດທ່ານກໍເຮັດໃຫ້ບໍລິສຸດໄດ້ແລ້ວ"

໖. "ທ່ານຜູ້ຈະເລີນ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ບໍ່ແມ່ນມີເທົ່ານີ້ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ແມ່ນຢ່າງອື່ນຍັງມີຢູ່ ຂໍໂອກາດຂ້ານ້ອຍ ນັບແຕ່ເວລາທີ່ສາມີ ໜຸ່ມ ນຳຂ້ານ້ອຍຜູ້ຍັງເປັນສາວມາ ຂ້ານ້ອຍບໍ່ເຄີຍຄິດທີ່ ຈະປະພຶດນອກໃຈສາມີເລີຍ ບໍ່ຕ້ອງເວົ້າຮອດຈະປະພຶດນອກໃຈດ້ວຍກາຍເລີຍ"

"ນັນທະມາຕາ ໜ້າອັດສະຈັນແທ້ແທ້ ບໍ່ເຄີຍຜາກົດ ແມ່ນພຽງຈິດຕຸບບາດທ່ານກໍເຮັດໃຫ້ບໍລິສຸດໄດ້ແລ້ວ"

໕. "ທ່ານຜູ້ຈະເລີນ ທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ບໍ່ແມ່ນມີເທົ່ານີ້ ທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ແມ່ນຢ່າງອື່ນຍັງມີຢູ່ ຂໍໂອກາດຂ້ານ້ອຍ ເມື່ອຂ້ານ້ອຍສະແດງຕົນເປັນອຸປາສິກາແລ້ວ ບໍ່ຮູ້ສຶກວ່າໄດ້ຈົງໃຈລ່ວງລະເມີດສິກຂາບົດເລີຍ"

"ນັນທະມາຕາ ໜ້າອັດສະຈັນແທ້ແທ້ ບໍ່ເຄີຍຜາກົດ ແມ່ນພຽງຈິດຕຸບບາດທ່ານກໍເຮັດໃຫ້ບໍລິສຸດໄດ້ແລ້ວ"

໖. "ທ່ານຜູ້ຈະເລີນ ທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ບໍ່ແມ່ນມີເທົ່ານີ້ ທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ແມ່ນຢ່າງອື່ນຍັງມີຢູ່ ຂໍໂອກາດຂ້ານ້ອຍ ຂ້ານ້ອຍຍັງຫວັງວ່າ ເຮົາຈະຕ້ອງສະຫງັດຈາກກາມ ແລະອະກຸສົນທໍາທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ເພາະວິຕົກວິຈານສະງົບຣະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່ ເພາະປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິ ສໍາປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ" ເພາະລະສຸກແລະທຸກໄດ້ ເພາະໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່"

"ນັນທະມາຕາ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ"

໗. "ທ່ານຜູ້ຈະເລີນ ທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ບໍ່ແມ່ນມີເທົ່ານີ້ ທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດຂອງຂ້ານ້ອຍ ແມ່ນຢ່າງອື່ນກໍຍັງມີຢູ່ ບັນດາສັງໂຍດເບື້ອງຕໍ່າ ໕ ປະການທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຂ້ານ້ອຍບໍ່ເຫັນສັງໂຍດເຫຼົ່ານັ້ນໃນຕົນເອງທີ່ຍັງລະບໍ່ໄດ້ເລີຍ"

"ນັນທະມາຕາ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ"

ລໍາດັບນັ້ນແລ ທ່ານພຣະສາຣີບຸດໄດ້ຊີ້ແຈ່ງໃຫ້ນັນທະມາຕາອຸປາສິກາເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງດ້ວຍທໍາມີກະຖາ ລຸກຈາກອາສະນະແລ້ວຈາກໄປ

**ນັນທະມາຕາສູດທີ ໑໐ ຈົບ**

**ມະຫາຍັນຍະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



ປັນນາດ ຈົບ

# ໖. ອັບພະຍາກະຕະວັກ

## ໝວດວ່າດ້ວຍເລື້ອງທີ່ ບໍ່ພະຍາກອນ

## ໑. ອັບພະຍາກະຕະສູດ

### ວ່າດ້ວຍເລື້ອງທີ່ບໍ່ພະຍາກອນ

[໕໔] ຄັ້ງນັ້ນແລ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ພຣະອະຣິຍະສາວົກຜູ້ໄດ້ສະດັບ ບໍ່ເກີດຄວາມລັງເລສົງໄສໃນເລື້ອງທີ່ ບໍ່ຄວນພະຍາກອນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເພາະທິດຖິ°ດັບໄປ ອະຣິຍະສາວົກຜູ້ໄດ້ສະດັບຈຶ່ງບໍ່ເກີດຄວາມລັງເລສົງໄສໃນເລື້ອງທີ່ ບໍ່ຄວນພະຍາກອນ ຄື

໑. ທິດຖິນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ທິດຖິນີ້ວ່າ "ຫຼັງຈາກ ຕາຍແລ້ວ ຕະຖາຄົດບໍ່ເກີດອີກ" ທິດຖິນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ" ທິດຖິນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ"

ປຸຖຸຊົນຜູ້ບໍ່ໄດ້ສະດັບຍ່ອມບໍ່ຮູ້ແຈ້ງທິດຖິ ບໍ່ຮູ້ແຈ້ງເຫດເກີດທິດຖິ ບໍ່ຮູ້ແຈ້ງຄວາມດັບທິດຖິ ບໍ່ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບທິດຖິ ທິດຖິນັ້ນຍ່ອມຈະເລີນແກ່ເຂົາ ເຂົາຍ່ອມບໍ່ລຸດພົ້ນຈາກ

ຊາດ(ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເຮົາກ່າວວ່າ ບໍ່ລຸດພົ້ນຈາກທຸກ

ສ່ວນອະຣິຍະສາວົກຜູ້ໄດ້ສະດັບຍ່ອມຮູ້ແຈ້ງທິດຖິ ຮູ້ແຈ້ງເຫດເກີດທິດຖິ ຮູ້ແຈ້ງຄວາມດັບທິດຖິ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບທິດຖິ ທິດຖິຂອງອະຣິຍະສາວົກນັ້ນຍ່ອມດັບໄປ ເຂົາຍ່ອມລຸດພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເຮົາກ່າວວ່າ ຍ່ອມລຸດພົ້ນຈາກທຸກ ອະຣິຍະສາວົກຜູ້ໄດ້ສະດັບ ຮູ້ຢ່າງນີ້ ເຫັນຢ່າງນີ້ ຍ່ອມບໍ່ພະຍາກອນວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ບໍ່ພະຍາກອນວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ" ບໍ່ພະຍາກອນວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ" ບໍ່ພະຍາກອນວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ"

ອະຣິຍະສາວົກຜູ້ໄດ້ສະດັບ ຮູ້ຢ່າງນີ້ ເຫັນຢ່າງນີ້ ເປັນຜູ້ບໍ່ພະຍາກອນ ໃນເລື້ອງທີ່ ບໍ່ຄວນພະຍາກອນເປັນທຳມະດາຢ່າງນີ້ ອະຣິຍະສາວົກຜູ້ໄດ້ສະດັບ ຮູ້ຢ່າງນີ້ ເຫັນຢ່າງນີ້ ຍ່ອມບໍ່ຫວາດຫວັ່ນ ບໍ່ຫວັ່ນໄຫວ ບໍ່ສະທົກສະທ້ານ ບໍ່ສະດຸ້ງ ໃນເລື້ອງທີ່ບໍ່ຄວນພະຍາກອນ ຄື

໒. ຕັນຫານີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ຯລຯ
໓. ສັນຍານີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ຯລຯ
໔. ຄວາມເຂົ້າໃຈນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ຯລຯ
໕. ຄວາມປຸງແຕ່ງນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ຯລຯ
໖. ອຸປາທານນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ຯລຯ

໗. ວິບປະຕິສານ (ຄວາມເດືອດຮ້ອນໃຈ) ນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ" ວິບປະຕິສານນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ" ວິບປະຕິສານ ນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ" ວິບປະຕິສານນີ້ວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກ ກໍບໍ່ແມ່ນ"

ປຸຖຸຊົນຜູ້ບໍ່ໄດ້ສະດັບຍ່ອມບໍ່ຮູ້ແຈ້ງວິບປະຕິສານ ບໍ່ຮູ້ແຈ້ງເຫດເກີດວິບປະຕິສານ ບໍ່ຮູ້ແຈ້ງຄວາມດັບວິບປະຕິສານ ບໍ່ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບວິບປະຕິສານ ວິບປະຕິສານນັ້ນຍ່ອມຈະເລີນແກ່ເຂົາ ເຂົາຍ່ອມບໍ່ລຸດພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເຮົາກ່າວວ່າ ບໍ່ລຸດພົ້ນຈາກທຸກ

ສ່ວນອະຣິຍະສາວົກຜູ້ໄດ້ສະດັບຍ່ອມຮູ້ແຈ້ງວິບປະຕິສານ ຮູ້ແຈ້ງເຫດເກີດວິບປະຕິສານ ຮູ້ແຈ້ງຄວາມດັບວິບປະຕິສານ ຮູ້ແຈ້ງຂໍ້ປະຕິບັດໃຫ້ເຖິງຄວາມດັບວິບປະຕິສານ ວິບປະຕິສານ

ຂອງອະຣິຍະສາວົກນັ້ນຍ່ອມດັບໄປ ເຂົາຍ່ອມລຸດພົ້ນ ຈາກຊາດ ຯລຯ ເຮົາກ່າວວ່າ ຍ່ອມລຸດພົ້ນຈາກທຸກ ອະຣິຍະສາວົກຜູ້ໄດ້ສະດັບຮູ້ຢ່າງນີ້ ເຫັນຢ່າງນີ້ ຍ່ອມບໍ່ພະຍາກອນວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຯລຯ ບໍ່ພະຍາກອນວ່າ "ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ"

ອະຣິຍະສາວົກຜູ້ໄດ້ສະດັບ ຮູ້ຢ່າງນີ້ ເຫັນຢ່າງນີ້ ເປັນຜູ້ບໍ່ພະຍາກອນໃນເລື້ອງທີ່ບໍ່ຄວນພະຍາກອນເປັນທຳມະດາຢ່າງນີ້ ອະຣິຍະສາວົກຜູ້ໄດ້ສະດັບ ຮູ້ຢ່າງນີ້ ເຫັນຢ່າງນີ້ ຍ່ອມບໍ່ຫວາດຫວັ່ນ ບໍ່ຫວັ່ນໄຫວ ບໍ່ສະທົກສະທ້ານ ບໍ່ສະດຸ້ງ ໃນເລື້ອງທີ່ ບໍ່ຄວນພະຍາກອນ

ພິກຂຸ ນີ້ເປັນເຫດເປັນປັດໄຈໃຫ້ອະຣິຍະສາວົກຜູ້ໄດ້ສະດັບ ບໍ່ເກີດຄວາມລັງເລສົງໄສໃນເລື້ອງ ທີ່ບໍ່ຄວນພະຍາກອນ

**ອັບພະຍາກະຕະສູດທີ ໑ ຈົບ**

# ໘. ປຸຣິສະຄະຕິສູດ

## ວ່າດ້ວຍຄະຕິຂອງບຸຣຸດ

[໕໕] ພິກຂຸທັງຫຼາຍ ເຮົາຈັກສະແດງຄະຕິຂອງບຸຣຸດ ໗ ປະການ ແລະອະນຸປາທາປະຣິນິບພານ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຄະຕິຂອງບຸຣຸດ ໗ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ ປະຕິບັດດ້ວຍຄິດຢ່າງນີ້ວ່າ "ຖ້າກໍາບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຖ້າກຳຈັກບໍ່ມີ ອັດຕະພາບຂອງເຮົາກໍຈັກບໍ່ມີ ເຮົາຍ່ອມລະປັນຈະຂັນທີ່ມີຢູ່ເປັນຢູ່ໄດ້" ຍ່ອມໄດ້ອຸເປກຂາ ທ່ານບໍ່ຕິດໃຈໃນພົບ ບໍ່ຕິດໃຈໃນສົມພົບ ເຫັນທາງທີ່ສະງົບຢ່າງຍິ່ງດ້ວຍປັນຍາອັນຊອບ ທ່ານຍັງ ບໍ່ໄດ້ເຮັດໃຫ້ແຈ້ງທາງທີ່ສະງົບນັ້ນໂດຍປະການທັງປວງ ຍັງບໍ່ໄດ້ລະມານານຸໄສ (ອະນຸໄສຄືຄວາມຖືຕົວ) ໂດຍປະການທັງປວງ ຍັງບໍ່ໄດ້ລະພະວະຣາຄານຸໄສ (ອະນຸໄສຄືຄວາມຕິດໃຈໃນພົບ)ໂດຍປະການທັງປວງ ຍັງບໍ່ໄດ້ລະອະວິດຊານຸໄສ (ອະນຸໄສຄືອະວິດຊາ) ໂດຍປະການທັງປວງ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ ພິກຂຸທັງຫຼາຍ ເມື່ອຊ່າງຕີແຜ່ນເຫຼັກທີ່ຖືກເຜົາຕະຫຼອດວັນ ມີສະເກັດປິວອອກແລ້ວດັບໄປ ແມ່ນສັນໃດ ພິກຂຸ ກໍສັນນັ້ນຄືກັນ ປະຕິບັດດ້ວຍຄິດຢ່າງນີ້ວ່າ "ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຖ້າກຳຈັກບໍ່ມີ ອັດຕະພາບຂອງເຮົາກໍຈັກບໍ່ມີ ເຮົາຍ່ອມລະ

ປັນຈະຂັນທີ່ມີຢູ່ເປັນຢູ່ໄດ້" ຍ່ອມໄດ້ອຸເປກຂາ ທ່ານບໍ່ຕິດໃຈໃນພົບ ບໍ່ຕິດໃຈໃນສົມພົບ ເຫັນທາງທີ່ສະງົບຢ່າງຍິ່ງດ້ວຍປັນຍາອັນຊອບ ທ່ານຍັງບໍ່ໄດ້ເຮັດໃຫ້ແຈ້ງທາງທີ່ສະງົບນັ້ນໂດຍປະການທັງປວງ ຍັງບໍ່ໄດ້ລະມານານຸໄສໂດຍປະການທັງປວງ ຍັງບໍ່ໄດ້ລະພະວະຣາຄານຸໄສໂດຍປະການທັງປວງ ຍັງບໍ່ໄດ້ລະອະວິດຊານຸໄສໂດຍປະການທັງປວງ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ

໔. ພິກຂຸໃນທຳວິໄນນີ້ປະຕິບັດດ້ວຍຄິດຢ່າງນີ້ວ່າ "ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຖ້າກຳຈັກບໍ່ມີ ອັດຕະພາບຂອງເຮົາກໍຈັກບໍ່ມີ ເຮົາຍ່ອມລະປັນຈະຂັນທີ່ມີຢູ່ເປັນຢູ່ໄດ້" ຍ່ອມໄດ້ອຸເປກຂາ ທ່ານບໍ່ຕິດໃຈໃນພົບ ບໍ່ຕິດໃຈໃນສົມພົບ ເຫັນທາງທີ່ສະງົບຢ່າງຍິ່ງດ້ວຍປັນຍາ ອັນຊອບ ຍັງບໍ່ໄດ້ເຮັດໃຫ້ແຈ້ງທາງທີ່ສະງົບນັ້ນໂດຍປະການທັງປວງ ຍັງບໍ່ໄດ້ລະມານານຸໄສໂດຍປະການທັງປວງ ຍັງບໍ່ໄດ້ລະພະວະຣາຄານຸໄສໂດຍປະການທັງປວງ ຍັງບໍ່ໄດ້ລະອະວິດຊານຸໄສໂດຍປະການທັງປວງ ເພາະສັງໂຍດ ເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ ພິກຂຸທັງຫຼາຍ ເມື່ອຊ່າງຕີແຜ່ນເຫຼັກທີ່ຖືກເຜົາຕະຫຼອດວັນ ມີສະເກັດປິ່ວພົ້ງອອກແລ້ວດັບໄປ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດ ເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ

໓. ພິກຂຸໃນທຳວິໄນນີ້ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບ ຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ ພິກຂຸທັງຫຼາຍ ເມື່ອຊ່າງຕີແຜ່ນເຫຼັກ ທີ່ຖືກເຜົາຕະຫຼອດວັນ ສະເກັດປິ່ວພົ້ງອອກຕົກລົງບໍ່ເຖິງພື້ນແລ້ວດັບໄປ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອັນຕະຣາປະຣິນິບພາຍີ

໔. ພິກຂຸໃນທຳວິໄນນີ້ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອຸປະຫັດຈະປະຣິນິບພາຍີ ພິກຂຸທັງຫຼາຍ ເມື່ອຊ່າງຕີ ແຜ່ນເຫຼັກທີ່ຖືກເຜົາຕະຫຼອດວັນ ມີສະເກັດພົ້ງອອກຕົກລົງເຖິງພື້ນແລ້ວດັບໄປ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອຸປະຫັດຈະປະຣິນິບພາຍີ

໕. ພິກຂຸໃນທຳວິໄນນີ້ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບ ຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອະສັງຂາຣະປະຣິນິບ

ພາຍິ ພິກຂຸທັງຫຼາຍ ເມື່ອຊ່າງຕີແຜ່ນເຫຼັກທີ່ຖືກເຜົາຕະຫຼອດວັນ ສະເກັດປິວພົ້ງອອກແລ້ວຕົກລົງທີ່ ກອງຫຍ້າ ຫຼື ກອງໄມ້ນ້ອຍ ໆ ເຮັດໃຫ້ເກີດໄຟແດ່ ເຮັດໃຫ້ເກີດຄວັນແດ່ ໄໝ້ກອງຫຍ້າ ຫຼື ກອງໄມ້ນ້ອຍໆ ນັ້ນໃຫ້ໝົດໄປແລ້ວຈຶ່ງດັບໄປເພາະໝົດເຊື້ອ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການ ສິ້ນໄປ ທ່ານຈຶ່ງເປັນອະສັງຂາຣະປະຣິນິບພາຍີ

໖. ພິກຂຸໃນທຳວິໄນນີ້ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບ ຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນສະສັງຂານປະຣິນິບພາຍີ ພິກຂຸທັງຫຼາຍ ເມື່ອຊ່າງຕີແຜ່ນເຫຼັກ ທີ່ຖືກເຜົາຕະຫຼອດວັນ ສະເກັດປິວພົ້ງອອກແລ້ວຕົກລົງທີ່ກອງຫຍ້າຫຼື ກອງໄມ້ເຂື່ອງໆ ເຮັດໃຫ້ເກີດໄຟແດ່ ເຮັດໃຫ້ເກີດຄວັນແດ່ ໄໝ້ກອງຫຍ້າຫຼືກອງໄມ້ເຂື່ອງໆ ນັ້ນໃຫ້ ໝົດໄປແລ້ວຈຶ່ງດັບໄປເພາະໝົດເຊື້ອ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນສະສັງຂາຣະປະຣິນິບພາຍີ

໗. ພິກຂຸໃນທຳວິໄນນີ້ປະຕິບັດດ້ວຍຄິດຢ່າງນີ້ວ່າ "ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຖ້າກຳຈັກບໍ່ມີ ອັດຕະພາບຂອງເຮົາກໍຈັກບໍ່ມີ ເຮົາຍ່ອມລະປັນຈະຂັນທີ່ມີຢູ່ເປັນຢູ່ໄດ້" ຍ່ອມໄດ້ອຸເປກຂາ ທ່ານບໍ່ຕິດໃຈ ໃນພົບ ບໍ່ຕິດໃຈໃນສົມພົບ ເຫັນທາງທີ່ສະງົບຢ່າງຍິ່ງດ້ວຍປັນຍາອັນຊອບ ທ່ານຍັງບໍ່ໄດ້ເຮັດໃຫ້ແຈ້ງທາງທີ່ສະງົບນັ້ນໂດຍປະການທັງປວງ ຍັງບໍ່ໄດ້ລະມານານຸໄສໂດຍປະການທັງປວງ ຍັງບໍ່ໄດ້ລະພະວະຣາຄານຸໄສໂດຍປະການທັງປວງ ຍັງບໍ່ໄດ້ລະອະວິດຊານຸໄສໂດຍປະການທັງປວງ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອຸດທັງໂສຕະອະກະນິດຖະຄາມີ ພິກຂຸທັງຫຼາຍ ເມື່ອຊ່າງຕີແຜ່ນເຫຼັກທີ່ຖືກເຜົາຕະຫຼອດວັນ ສະເກັດປິວພົ້ງອອກແລ້ວຕົກລົງທີ່ກອງຫຍ້າ ຫຼື ກອງໄມ້ໃຫຍ່ໆ ເຮັດໃຫ້ເກີດໄຟແດ່ ເຮັດໃຫ້ເກີດຄວັນແດ່ ໄໝ້ກອງຫຍ້າຫຼືກອງໄມ້ນັ້ນໃຫ້ໝົດໄປ ໄໝ້ກໍໄມ້ແດ່ ໄໝ້ປ່າໄມ້ແດ່ ເມື່ອແລ້ວຈຶ່ງລາມມາເຖິງຍອດຫຍ້າສົດ ປາຍທາງ ຈອມພູ ແຄມນ້ຳ ຫຼື ພູມີພາກທີ່ໜ້າຮື່ນຮົມແລ້ວຈຶ່ງດັບໄປເພາະໝົດເຊື້ອ ແມ່ນສັນໃດ ພິກຂຸ ກໍສັນນັ້ນຄືກັນ ປະຕິບັດດ້ວຍຄິດຢ່າງນີ້ວ່າ ຖ້າກຳບໍ່ມີແລ້ວອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຯລຯ ເພາະສັງໂຍດ ເບື້ອງຕ່ຳ ໕ ປະການສິ້ນໄປ ທ່ານຈຶ່ງເປັນອຸດທັງໂສຕະອະກະນິດຖະຄາມີ

ພິກຂຸທັງຫຼາຍ ຄະຕິຂອງບຸຣຸດ ໗ ປະການນີ້ແລ

ອະນຸປາທາປະຣິນິບພານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ປະຕິບັດດ້ວຍຄິດຢ່າງນີ້ວ່າ "ຖ້າກຳບໍ່ມີແລ້ວ ອັດຕະພາບຂອງເຮົາກໍບໍ່ເພິ່ງມີ ຖ້າກຳຈັກບໍ່ມີ ອັດຕະພາບຂອງເຮົາກໍຈັກບໍ່ມີ ເຮົາຍ່ອມລະປັນຈະຂັນທີ່ມີຢູ່ເປັນຢູ່ໄດ້"

ຍ່ອມໄດ້ອຸເປກຂາ ທ່ານບໍ່ຕິດໃຈໃນພົບ ບໍ່ຕິດໃຈໃນສົມພົບ ເຫັນທາງທີ່ສະງົບຢ່າງຍິ່ງດ້ວຍປັນຍາອັນຊອບ ທ່ານເຮັດໃຫ້ແຈ້ງທາງທີ່ສະງົບນັ້ນໂດຍປະການທັງປວງ ລະມານານຸໄສ ໂດຍປະການທັງປວງໄດ້ ລະພະວະຣາຄານຸໄສໂດຍປະການທັງປວງໄດ້ ລະອະວິດຊານຸໄສໂດຍປະການທັງປວງໄດ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປດ້ວຍ ປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ຮຽກວ່າ ອະນຸປາທາປະຣິນິບພານ

ພິກຂຸທັງຫຼາຍ ຄະຕິຂອງບຸຣຸດ ໗ ປະການ ແລະອະນຸປາທາປະຣິນິບພານເປັນແນວນີ້ແລ

**ປຸຣິສະຄະຕິສູດທີ ໘ ຈົບ**

# ໙. ຕິດສະພົມສູດ

## ວ່າດ້ວຍຕິດສະພົມ[໑]

[໕໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພູຄິດຊະກູດ ເຂດເມືອງຣາດຊະຄຶ ຄັ້ງນັ້ນເມື່ອຣາຕີຜ່ານໄປ ເທວະດາ ໘ ອົງມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພູຄິດຊະກູດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ

ເທວະດາອົງໜຶ່ງໄດ້ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນພິກຂຸນີເຫຼົ່ານີ້ລຸດພົ້ນແລ້ວ"

ເທວະດາອີກອົງໜຶ່ງຂາບທູນວ່າ "ພິກຂຸນີເຫຼົ່ານີ້ລຸດພົ້ນດີແລ້ວ ເພາະບໍ່ມີອຸປາທານຂັນເຫຼືອຢູ່"

ເທວະດາ ໘ ອົງນັ້ນ ໄດ້ຂາບທູນດັ່ງນີ້ແລ້ວ ພຣະສາດສະດາຊົງພໍພຣະຫະໄທ ເມື່ອເທວະດາ ໘ ອົງນັ້ນຮູ້ວ່າ ພຣະສາດສະດາຊົງພໍພຣະຫະໄທເຮົາ ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຫາຍໄປໃນທີ່ນັ້ນ

ເມື່ອຄືນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາ ໘ ອົງມີວັນນະງົດງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພູຄິດຊະກູດ ເຂົ້າມາຫາເຮົາເຖິງທີ່ຢູ່ ໄຫວ້ເຮົາແລ້ວຢືນຢູ່ບ່ອນທີ່ສົມຄວນ ເທວະດາ

ອົງໜຶ່ງໄດ້ກ່າວກັບເຮົາດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸນີເຫຼົ່ານີ້ ລຸດພົ້ນແລ້ວ" ເທວະດາອີກອົງໜຶ່ງກ່າວວ່າ "ພິກຂຸນີເຫຼົ່ານີ້ລຸດພົ້ນດີແລ້ວ ເພາະບໍ່ມີອຸປາທານຂັນເຫຼືອຢູ່" ເທວະດາ ໔ ອົງນັ້ນ ເມື່ອກ່າວດັ່ງນີ້ແລ້ວ ຈຶ່ງໄຫວ້ເຮົາທຳປະທັກຂິນແລ້ວຫາຍໄປ ໃນທີ່ນັ້ນ"

ສະໄໝນັ້ນ ທ່ານພຣະມະຫາໂມກຄັນລານະນັ່ງຢູ່ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ໄດ້ມີຄວາມຄິດດັ່ງນີ້ວ່າ "ເທວະດາເຫຼົ່າໃດ ມີຍານຢ່າງນີ້ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼື ໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

ສະໄໝນັ້ນ ພິກຂຸຊື່ຕິດສະມໍຣະນະພາບໄດ້ບໍ່ດົນ ກໍເຂົ້າເຖິງພົມມະໂລກຊັ້ນໃດຊັ້ນໜຶ່ງ ແມ່ນໃນພົມມະໂລກນັ້ນ ພວກພົມກໍຮູ້ຈັກທ່ານຢ່າງນີ້ວ່າ "ຕິດສະພົມ ມີລິດຫຼາຍ ມີອານຸພາບຫຼາຍ"

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ຫາຍຈາກພູຄິດຊະກູດໄປຜາກົດທີ່ພົມມະໂລກນັ້ນ ເໝືອນບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າ ສະນັ້ນ

ຕິດສະພົມໄດ້ເຫັນທ່ານພຣະມະຫາໂມກຄັນລານະກຳລັງມາແຕ່ໄກ ຈຶ່ງກ່າວກັບທ່ານຢ່າງນີ້ວ່າ "ນິມົນເຂົ້າມາເທີ້ນ ທ່ານໂມກຄັນລານະຜູ້ນິຣະທຸກ ຂໍຕ້ອນຮັບທ່ານ ດົນ ໆ ທ່ານຈະມີເວລາແວ່ມາໃນທີ່ນີ້ ນິມົນນັ່ງເທິງອາສະນະທີ່ປູລາດໄວ້ເທີ້ນ"

ທ່ານພຣະມະຫາໂມກຄັນລານະຈຶ່ງນັ່ງເທິງອາສະນະທີ່ປູລາດໄວ້ ຝ່າຍຕິດສະພົມໄດ້ອະພິວາດ ທ່ານແລ້ວນັ່ງໃນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະຈຶ່ງໄດ້ກ່າວດັ່ງນີ້ວ່າ "ຕິດສະ ເທວະດາເຫຼົ່າໃດ ມີຍານຢ່າງນີ້ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼື ໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

"ທ່ານໂມກຄັນລານະຜູ້ນິຣະທຸກ ເຫຼົ່າເທວະດາຊັ້ນພົມກາຍິກາ ມີຍານຢ່າງນີ້ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼື ໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

"ຕິດສະ ເຫຼົ່າເທວະດາຊັ້ນພົມກາຍິກາທັງໝົດເລີຍບໍ ທີ່ມີຍານຢ່າງນີ້ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼືໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

"ບໍ່ແມ່ນເລີຍ ທ່ານໂມກຄັນລານະຜູ້ນິຣະທຸກ ທີ່ເຫຼົ່າເທວະດາຊັ້ນພົມກາຍິກາທັງໝົດ ມີຍານຢ່າງນີ້ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼື ໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

ທ່ານໂມກຄັນລານະຜູ້ມີຣະທຸກ ເຫຼົ່າເທວະດາຊັ້ນພົມກາຍິກາ ຜູ້ຍິນດີດ້ວຍອາຍຸທີ່ເປັນຂອງພົມ ຍິນດີດ້ວຍວັນນະທີ່ເປັນຂອງພົມ ຍິນດີດ້ວຍສຸກທີ່ເປັນຂອງພົມ ຍິນດີດ້ວຍຍົດທີ່ເປັນຂອງພົມ ຍິນດີດ້ວຍຄວາມເປັນໃຫຍ່ທີ່ເປັນຂອງພົມ ບໍ່ຮູ້ແຈ້ງອຸບາຍເປັນເຄື່ອງສະລັດອອກທີ່ຍິ່ງຂຶ້ນໄປຕາມຄວາມເປັນຈິງ ເທວະດາເຫຼົ່ານັ້ນ ບໍ່ມີຍານຢ່າງນີ້ໃນບຸກຄົນ ຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼືໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

ທ່ານໂມກຄັນລານະຜູ້ມີຣະທຸກ ສ່ວນເຫຼົ່າເທວະດາຊັ້ນພົມກາຍິກາ ຜູ້ບໍ່ຍິນດີດ້ວຍອາຍຸທີ່ເປັນຂອງພົມ ບໍ່ຍິນດີດ້ວຍວັນນະທີ່ເປັນຂອງພົມ ບໍ່ຍິນດີດ້ວຍສຸກທີ່ເປັນຂອງພົມ ບໍ່ຍິນດີດ້ວຍຍົດທີ່ເປັນຂອງພົມ ບໍ່ຍິນດີດ້ວຍຄວາມເປັນໃຫຍ່ທີ່ເປັນຂອງພົມ ຮູ້ແຈ້ງເຊິ່ງອຸບາຍເປັນເຄື່ອງສະລັດອອກທີ່ຍິ່ງຂຶ້ນໄປຕາມຄວາມເປັນຈິງ ເທວະດາເຫຼົ່ານັ້ນມີຍານຢ່າງນີ້ ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼືໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

ທ່ານໂມກຄັນລານະຜູ້ມີຣະທຸກ ພິກຂຸໃນທຳວິໄນນີ້ເປັນອຸພະໂຕພາຄະວິມຸດ ເທວະດາເຫຼົ່ານັ້ນຍ່ອມຮູ້ຈັກພິກຂຸນັ້ນຢ່າງນີ້ວ່າ "ທ່ານຜູ້ນີ້ເປັນອຸພະໂຕພາຄະວິມຸດ ກາຍຂອງທ່ານຈັກດຳຣົງຢູ່ພຽງໃດ ເຫຼົ່າເທວະດາ ແລະມະນຸດຈັກເຫັນທ່ານພຽງນັ້ນ ແຕ່ເມື່ອທ່ານນິຣະນະພາບໄປ ເຫຼົ່າເທວະດາແລະມະນຸດຈັກບໍ່ເຫັນທ່ານ" ເທວະດາເຫຼົ່ານັ້ນມີຍານຢ່າງນີ້ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼືໃນບຸກຄົນຜູ້ບໍ່ມີອຸປາທານຂັນ ເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

ທ່ານໂມກຄັນລານະຜູ້ມີຣະທຸກ ພິກຂຸໃນທຳວິໄນນີ້ເປັນປັນຍາວິມຸດ ເທວະດາເຫຼົ່ານັ້ນຍ່ອມຮູ້ຈັກພິກຂຸນັ້ນຢ່າງນີ້ວ່າ "ທ່ານຜູ້ນີ້ເປັນປັນຍາວິມຸດ ກາຍຂອງທ່ານຈັກດຳຣົງຢູ່ພຽງໃດ ເຫຼົ່າເທວະດາແລະມະນຸດຈັກເຫັນທ່ານພຽງນັ້ນ ແຕ່ເມື່ອທ່ານນິຣະນະພາບໄປ ເຫຼົ່າເທວະດາ ແລະມະນຸດຈັກບໍ່ເຫັນທ່ານ" ເທວະດາເຫຼົ່ານັ້ນມີຍານຢ່າງນີ້ ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼືໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

ທ່ານໂມກຄັນລານະຜູ້ມີຣະທຸກ ພິກຂຸໃນທຳວິໄນນີ້ເປັນກາຍະສັກຂີ ເທວະດາເຫຼົ່ານັ້ນຍ່ອມຮູ້ຈັກພິກຂຸນັ້ນຢ່າງນີ້ວ່າ "ທ່ານຜູ້ນີ້ເປັນກາຍະສັກຂີ ເປັນການດີຖ້າທ່ານຜູ້ນີ້ໃຊ້ສອຍ ເສນາສະນະທີ່ ສົມຄວນ ຄົບກັບລະຍານະມິດ ອົບຮົມອິນຊີ ເພື່ອເຮັດໃຫ້ແຈ້ງເຊິ່ງປະໂຫຍດ ປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຊອບຕ້ອງການ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເທວະດາເຫຼົ່ານັ້ນມີຍານຢ່າງນີ້ໃນບຸກ

ຄົນຜູ້ຍັງມີອຸປາທານ ຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼື ໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາ ທານຂັນເຫຼືອຢູ່"

ທ່ານໂມກຄັນລານະຜູ້ນິຣະທຸກ ພິກຂຸໃນທຳວິໄນນີ້ ເປັນທິດຖິປັດຕະ ຯລຯ

ທ່ານໂມກຄັນລານະຜູ້ນິຣະທຸກ ພິກຂຸໃນທຳວິໄນນີ້ ເປັນສັດທາວິມຸດ ຯລຯ

ທ່ານໂມກຄັນລານະຜູ້ນິຣະທຸກ ພິກຂຸໃນທຳວິໄນນີ້ເປັນທຳມານຸສາຣີ ເທວະດາເຫຼົ່ານັ້ນຍ່ອມຮູ້ຈັກພິກຂຸນັ້ນຢ່າງນີ້ວ່າ "ທ່ານຜູ້ນີ້ເປັນທຳມານຸສາຣີ ເປັນການດີ ຖ້າທ່ານຜູ້ນີ້ໃຊ້ສອຍເສນາສະນະທີ່ ສົມຄວນ ຄົບກັນລະຍານະມິດ ອົບຣົມອິນຊີ ເພິ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຊອບຕ້ອງການ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເທວະດາເຫຼົ່ານັ້ນມີຍານຢ່າງນີ້ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼືໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ຊື່ນຊົມ ອະນຸໂມທະນາພາສິດຂອງຕິດສະພົມແລ້ວໄດ້ຫາຍຈາກພົມມະໂລກໄປຜາກົດທີ່ພູຄິດຊະກູດ ເໝືອນບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າເຖິງຖ້ອຍຄຳສົນທະນາປາໄສ ກັບຕິດສະພົມທັງໝົດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມກຄັນລານະ ຕິດສະພົມບໍ່ໄດ້ສະແດງບຸກຄົນທີ ໗ ຜູ້ມີທຳເປັນເຄື່ອງຢູ່ອັນຫານິມິດບໍ່ໄດ້ແກ່ທ່ານບໍ?"

ທ່ານພຣະມະຫາໂມກຄັນລານະຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການ ຂ້າແດ່ ພຣະສຸຄົດເຈົ້າ ບັດນີ້ ເປັນການທີ່ພຣະຜູ້ມີພຣະພາກເຈົ້າຈະຊົງສະແດງບຸກຄົນທີ ໗ ຜູ້ມີທຳເປັນເຄື່ອງຢູ່ອັນຫານິມິດບໍ່ໄດ້ ພິກຂຸທັງຫຼາຍ ຟັງຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂມກຄັນລານະ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ"

ທ່ານພຣະມະຫາໂມກຄັນລານະ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ "ໂມກຄັນລານະ ພິກຂຸໃນທຳວິໄນນີ້ ບັນລຸເຈໂຕສະມາທິອັນຫານິມິດບໍ່ໄດ້ ເພາະບໍ່ ມະນະສິການເຖິງນິມິດທັງປວງຢູ່ ເທວະດາເຫຼົ່ານັ້ນຍ່ອມຮູ້ຈັກພິກຂຸນັ້ນຢ່າງນີ້ວ່າ "ທ່ານຜູ້ນີ້ບັນລຸເຈໂຕສະມາທິອັນຫານິມິດບໍ່ໄດ້ ເພາະບໍ່ມະນະສິການເຖິງນິມິດທັງປວງຢູ່ເປັນການດີ ຖ້າທ່ານຜູ້ນີ້ໃຊ້ສອຍເສນາສະນະທີ່ສົມຄວນ ຄົບກັນລະຍານະມິດ ອົບຣົມອິນຊີ ເພິ່ງເຮັດໃຫ້ແຈ້ງ ເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນ ບວດເປັນບັນພະຊິດໂດຍຊອບຕ້ອງການ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ໂມກຄັນລານະ ເທວະດາເຫຼົ່ານັ້ນມີຍານຢ່າງນີ້ແລ ໃນບຸກຄົນຜູ້ຍັງມີອຸປາທານຂັນເຫຼືອຢູ່ວ່າ "ຍັງມີອຸປາທານຂັນເຫຼືອຢູ່" ຫຼືໃນບຸກຄົນຜູ້ບໍ່ມີອຸປາທານຂັນເຫຼືອຢູ່ວ່າ "ບໍ່ມີອຸປາທານຂັນເຫຼືອຢູ່"

**ຕິດສະພົມສູດທີ ໓ ຈົບ**

# ໔. ສີຫະເສນາປະຕິສູດ

## ວ່າດ້ວຍສີຫະເສນາບໍດີ

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ ຄັ້ງນັ້ນ ສີຫະເສນາບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ພຣະຜູ້ມີພຣະພາກເຈົ້າຊົງບັນຍັດຜົນແຫ່ງທານທີ່ຈະເພິ່ງເຫັນເອງໄດ້ບໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີຫະ ຖ້າຢ່າງນັ້ນ ເຮົາຈະຍ້ອນຖາມທ່ານໃນບັນຫານັ້ນ ທ່ານເພິ່ງຕອບບັນຫານັ້ນຕາມທີ່ທ່ານພໍໃຈ ສີຫະ ທ່ານເຂົ້າໃຈເລື້ອງນັ້ນຢ່າງໃດ ຄື ໃນເມືອງເວສາລີນີ້ ມີຄົນ ໔ ຄົນ ຄົນໜຶ່ງບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ອີກຄົນໜຶ່ງມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ

ສີຫະ ທ່ານເຂົ້າໃຈເລື້ອງນັ້ນຢ່າງໃດ ຄື ພຣະອະຣະຫັນເມື່ອຈະອະນຸເຄາະ ເພິ່ງອະນຸເຄາະໃຜກ່ອນ ລະຫວ່າງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ກັບຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ"

"ຂ້າແດ່ພຣະອົງຜູ້ຈະເລີນ ພຣະອະຣະຫັນເມື່ອຈະອະນຸເຄາະ ຈັກອະນຸເຄາະຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດກ່ອນໄດ້ຢ່າງໃດ ພຣະອະຣະຫັນເມື່ອຈະອະນຸເຄາະ ເພິ່ງອະນຸເຄາະຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີກ່ອນຢ່າງແນ່ນອນ"

"ສີຫະ ທ່ານເຂົ້າໃຈເລື່ອງນັ້ນຢ່າງໃດ ຄື ພຣະອະຣະຫັນເມື່ອຈະເຂົ້າໄປຫາ ເພິ່ງເຂົ້າໄປຫາໃຜກ່ອນ ລະຫວ່າງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ກັບຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ"

"ຂ້າແດ່ພຣະອົງຜູ້ຈະເລີນ ພຣະອະຣະຫັນເມື່ອຈະເຂົ້າໄປຫາ ຈັກເຂົ້າໄປຫາຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດກ່ອນໄດ້ຢ່າງໃດ ພຣະອະຣະຫັນເມື່ອຈະເຂົ້າໄປຫາ ເພິ່ງເຂົ້າໄປຫາຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີກ່ອນ"

"ສີຫະ ທ່ານເຂົ້າໃຈເລື່ອງນັ້ນຢ່າງໃດ ຄື ພຣະອະຣະຫັນເມື່ອຈະຮັບທານ ເພິ່ງຮັບທານຂອງໃຜກ່ອນ ລະຫວ່າງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ກັບຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ"

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣະຫັນເມື່ອຈະຮັບທານ ຈັກຮັບທານຂອງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດກ່ອນໄດ້ຢ່າງໃດ ພຣະອະຣະຫັນເມື່ອຈະຮັບທານ ເພິ່ງຮັບທານຂອງຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີກ່ອນ"

"ສີຫະ ທ່ານເຂົ້າໃຈເລື່ອງນັ້ນຢ່າງໃດ ຄື ພຣະອະຣະຫັນເມື່ອຈະສະແດງທຳ ເພິ່ງສະແດງທຳແກ່ໃຜກ່ອນ ລະຫວ່າງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ກັບຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ"

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣະຫັນເມື່ອຈະສະແດງທຳ ຈັກສະແດງທຳແກ່ຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດກ່ອນໄດ້ຢ່າງໃດ ພຣະອະຣະຫັນເມື່ອຈະສະແດງທຳ ເພິ່ງສະແດງທຳແກ່ຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີກ່ອນ"

"ສີຫະ ທ່ານເຂົ້າໃຈເລື່ອງນັ້ນຢ່າງໃດ ຄື ກິດຕິສັບອັນງາມຂອງໃຜນໍຄວນຂະຈອນໄປ ລະຫວ່າງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ກັບຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ"

"ຂ້າແດ່ ພຣະອົງຜູ້ຈະເລີນ ກິດຕິສັບອັນງາມຂອງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດຈັກຂະຈອນໄປໄດ້ຢ່າງໃດ ກິດຕິສັບອັນງາມຂອງຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີເທົ່ານັ້ນເພິ່ງຂະຈອນໄປ"

"ສີຫະ ທ່ານເຂົ້າໃຈເລື້ອງນັ້ນຢ່າງໃດ ຄື ໃຜກັນນໍລະຫວ່າງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ກັບຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ເພິ່ງເປັນຜູ້ແກ່ກ້າ ບໍ່ເກີ້ເຂີນເຂົ້າໄປສູ່ບໍລິສັດນັ້ນ ໆ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຈັກເປັນຜູ້ແກ່ກ້າ ບໍ່ເກີ້ເຂີນ ເຂົ້າໄປສູ່ບໍລິສັດນັ້ນ ໆ ໄດ້ຢ່າງໃດ ຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ ເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ເພິ່ງເປັນຜູ້ແກ່ກ້າ ບໍ່ເກີ້ເຂີນເຂົ້າໄປສູ່ບໍລິສັດນັ້ນ ໆ"

"ສີຫະ ທ່ານເຂົ້າໃຈເລື້ອງນັ້ນຢ່າງໃດ ຄື ໃຜກັນນໍລະຫວ່າງຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ກັບຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ ຫຼັງຈາກຕາຍແລ້ວ ເພິ່ງໄປເກີດໃນສຸກຄະຕິໂລກສະຫວັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຄົນບໍ່ມີສັດທາ ຂີ້ຖີ່ໜຽວແໜ້ນ ມັກດ່າບໍຣິພາດ ຫຼັງຈາກຕາຍແລ້ວ ຈັກໄປເກີດໃນສຸກຄະຕິໂລກສະຫວັນໄດ້ຢ່າງໃດ ຄົນມີສັດທາ ເປັນທານະບໍດີ ຍິນດີໃຫ້ທານສະໝ່ຳສະເໝີ ຫຼັງຈາກຕາຍແລ້ວ ເພິ່ງໄປເກີດໃນສຸກຄະຕິໂລກສະຫວັນ"

ຂ້າແດ່ ພຣະອົງຜູ້ຈະເລີນ ຜົນແຫ່ງທານທີ່ຈະເພິ່ງເຫັນເອງ ໔ ປະການພຣະຜູ້ມີພຣະພາກເຈົ້າຕັດບອກແລ້ວ ໃນຜົນແຫ່ງທານທີ່ຈະເພິ່ງເຫັນເອງ ໔ ປະການນັ້ນ ຂ້າພຣະອົງບໍ່ພຽງແຕ່ເຊື່ອພຣະຜູ້ມີພຣະພາກເຈົ້າເທົ່ານັ້ນ ແຕ່ຍັງຮູ້ອີກດ້ວຍ ຂ້າພຣະອົງເປັນທາຍົກ ເປັນທານະບໍດີ ພຣະອະຣະຫັນເມື່ອຈະອະນຸເຄາະ ຍ່ອມອະນຸເຄາະຂ້າພຣະອົງກ່ອນ ຂ້າພຣະອົງເປັນທາຍົກ ເປັນທານະບໍດີ ພຣະອະຣະຫັນເມື່ອຈະເຂົ້າໄປຫາ ຍ່ອມເຂົ້າໄປຫາຂ້າພຣະອົງກ່ອນ ຂ້າພຣະອົງເປັນທາຍົກ ເປັນທານະບໍດີ ພຣະອະຣະຫັນເມື່ອຈະຮັບທານ ຍ່ອມຮັບທານຂອງຂ້າພຣະອົງກ່ອນ ຂ້າພຣະອົງເປັນທາຍົກ ເປັນທານະບໍດີ ພຣະອະຣະຫັນເມື່ອຈະສະແດງທຳ ຍ່ອມສະແດງທຳແກ່ຂ້າພຣະອົງກ່ອນ ຂ້າພຣະອົງເປັນທາຍົກ ເປັນທານະບໍດີ ກິດຕິສັບອັນງາມຂອງຂ້າພຣະອົງຂະຈອນໄປແລ້ວວ່າ "ສີຫະເສນາບໍດີ ເປັນກາຣະກະບຸກຄົນ ເປັນຜູ້ອຸປັດຖາກພຣະສົງ" ຂ້າພຣະອົງເປັນທາຍົກ ເປັນທານະບໍດີ ເຂົ້າໄປສູ່ບໍລິສັດໃດໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມເປັນຜູ້ແກ່ກ້າ ບໍ່ເກີ້ເຂີນເຂົ້າໄປສູ່ບໍລິສັດນັ້ນໆ

ຂ້າແດ່ ພຣະອົງຜູ້ຈະເລີນ ຜົນແຫ່ງທານທີ່ຈະເພິ່ງເຫັນເອງ ໕ ປະການພຣະຜູ້ມີພຣະພາກເຈົ້າ ຕັດບອກແລ້ວ ໃນຜົນແຫ່ງທານທີ່ຈະເພິ່ງເຫັນເອງ ໕ ປະການນັ້ນ ຂ້າພຣະອົງບໍ່ພຽງແຕ່ເຊື່ອພຣະຜູ້ມີພຣະພາກເຈົ້າເທົ່ານັ້ນ ແຕ່ຍັງຮູ້ອີກດ້ວຍ ສ່ວນຜົນແຫ່ງທານທີ່ຈະເພິ່ງເຫັນເອງປະການທີ ໆ ທີ່ພຣະຜູ້ມີພຣະພາກເຈົ້າຕັດບອກຂ້າພຣະອົງຢ່າງນີ້ວ່າ "ສີຫະ ທາຍົກ ທານະບໍດີ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ" ຂ້າພຣະອົງຍັງບໍ່ຮູ້ ແຕ່ໃນຂໍ້ນີ້ ຂ້າພຣະອົງເຊື່ອພຣະຜູ້ມີພຣະພາກເຈົ້າ"

"ຂໍ້ນັ້ນ ເປັນຢ່າງນັ້ນ ສີຫະ ຂໍ້ນັ້ນເປັນຢ່າງນັ້ນ ສີຫະ ຄື ທາຍົກ ທານະບໍດີ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ"

**ສີຫະເສນາປະຕິສູດທີ ໔ ຈົບ**

# ໕. ອະຣັກເຂີຍຍະສູດ

## ວ່າດ້ວຍຖານະທີ່ພຣະຕະຖາຄົດບໍ່ຕ້ອງຮັກສາ

[໕໗] ພິກຂຸທັງຫຼາຍ ຖານະ ໔ ປະການນີ້ ທີ່ຕະຖາຄົດບໍ່ຕ້ອງຮັກສາ ແລະຕະຖາຄົດ ບໍ່ຖືກຕິຕຽນດ້ວຍຖານະ ໓ ປະການ

ຖານະ ໔ ປະການທີ່ຕະຖາຄົດບໍ່ຕ້ອງຮັກສາ ອັນໃດແດ່ ຄື

໑. ຕະຖາຄົດມີຄວາມປະພຶດທາງກາຍບໍລິສຸດ ບໍ່ມີກາຍທຸດຈະຣິດທີ່ຈະຕ້ອງຮັກສາວ່າ "ຄົນອື່ນຢ່າໄດ້ຮູ້ກຳນີ້ຂອງເຮົາ"

໒. ຕະຖາຄົດມີຄວາມປະພຶດທາງວາຈາບໍລິສຸດ ບໍ່ມີວະຈີທຸດຈະຣິດທີ່ຈະຕ້ອງຮັກສາວ່າ "ຄົນອື່ນຢ່າໄດ້ຮູ້ກຳນີ້ຂອງເຮົາ"

໓. ຕະຖາຄົດມີຄວາມປະພຶດທາງໃຈບໍລິສຸດ ບໍ່ມີມະໂນທຸດຈະຣິດທີ່ຈະຕ້ອງຮັກສາວ່າ "ຄົນອື່ນຢ່າໄດ້ຮູ້ກຳນີ້ຂອງເຮົາ"

໔. ຕະຖາຄົດມີອາຊີວະບໍລິສຸດ ບໍ່ມີມິດສາອາຊີວະ (ລ້ຽງຊີບຜິດ) ທີ່ຈະຕ້ອງຮັກສາວ່າ "ຄົນອື່ນຢ່າໄດ້ຮູ້ກຳນີ້ຂອງເຮົາ"

ນີ້ຄືຖານະ ໔ ປະການທີ່ຕະຖາຄົດບໍ່ຕ້ອງຮັກສາ

ຕະຖາຄົດບໍ່ຖືກຕິຕຽນດ້ວຍຖານະ ໓ ປະການ ອັນໃດແດ່ ຄື

໑. ຕະຖາຄົດມີທຳທີ່ກ່າວໄວ້ດີແລ້ວ ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ພົມ ຫຼື ໃຜ ໆ ໃນໂລກ ຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດຜົນ ໃນທຳນັ້ນວ່າ ແມ່ນຍ້ອນເຫດນີ້ ທ່ານຈຶ່ງບໍ່ແມ່ນເປັນຜູ້ມີທຳທີ່ກ່າວໄວ້ດີແລ້ວ" ເຮົາເມື່ອບໍ່ເຫັນນິມິດແມ່ນນັ້ນ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານແກ່ກ້າຢູ່

໒. ເຮົາໄດ້ບັນຍັດໄວ້ດີແລ້ວເຊິ່ງຂໍ້ປະຕິບັດທີ່ໃຫ້ເຖິງນິບພານໂດຍວິທີທີ່ສາວົກທັງຫຼາຍຂອງເຮົາປະຕິບັດຕາມແລ້ວ ຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ພົມ ຫຼື ໃຜໆ ໃນໂລກ ຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດຜົນໃນທຳນັ້ນວ່າ ແມ່ນຍ້ອນເຫດນີ້ ທ່ານບໍ່ໄດ້ບັນຍັດໄວ້ດີແລ້ວເຊິ່ງຂໍ້ປະຕິບັດທີ່ໃຫ້ເຖິງນິບພານ ໂດຍວິທີທີ່ສາວົກທັງຫຼາຍຂອງທ່ານປະຕິບັດຕາມແລ້ວ ຍ່ອມເຮັດໃຫ້ແຈ້ງ ເຈໂຕວິມຸດຕິ ປັນຍາວິມຸດຕິ ຯລຯ" ເຮົາເມື່ອບໍ່ເຫັນນິມິດແມ່ນນັ້ນ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານແກ່ກ້າຢູ່

໓. ສາວົກບໍລິສັດຂອງເຮົາຫຼາຍຮ້ອຍ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ຯລຯ ເຮົາບໍ່ເຫັນນິມິດນີ້ວ່າ "ສະມະນະ ພາມ ເທວະດາ ພົມ ຫຼື ໃຜ ໆ ໃນໂລກ ຈັກທັກທ້ວງເຮົາດ້ວຍຄຳເວົ້າທີ່ມີເຫດຜົນໃນທຳນັ້ນວ່າ ແມ່ນຍ້ອນເຫດນີ້ ສາວົກບໍລິສັດຫຼາຍຮ້ອຍຂອງທ່ານ ບໍ່ໄດ້ເຮັດໃຫ້ແຈ້ງ ເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ເຮົາເມື່ອບໍ່ເຫັນນິມິດແມ່ນນັ້ນ ຈຶ່ງເຖິງຄວາມກະເສມ ບໍ່ມີຄວາມຢ້ານແກ່ກ້າຢູ່

ຕະຖາຄົດບໍ່ຖືກຕິຕຽນດ້ວຍຖານະ ໓ ປະການນີ້

ພິກຂຸທັງຫຼາຍ ຖານະ ໔ ປະການທີ່ຕະຖາຄົດບໍ່ຕ້ອງຮັກສາ ແລະ ຕະຖາຄົດບໍ່ຖືກຕິຕຽນດ້ວຍຖານະ ໓ ປະການນີ້ແລ

**ອະຣັກເຂີຍຍະສູດທີ ໔ ຈົບ**

# ໕. ກິມິລະສູດ

## ວ່າດ້ວຍພຣະກິມິລະ

[໔໗] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນປ່າໄຜ່ ເຂດເມືອງກິມິລາ ຄັ້ງນັ້ນ ທ່ານພຣະກິມິລະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ພຣະສັດທຳບໍ່ດຳຣົງຢູ່ໄດ້ນານ ໃນເມື່ອພຣະຕະຖາຄົດປະຣິນິບພານແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ກິມິລະ ເມື່ອຕະຖາຄົດປະຣິນິບພານແລ້ວ ເຫຼົ່າພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໃນທຳວິໄນນີ້

໑. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສາດສະດາ
໒. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນທຳ
໓. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສົງ
໔. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສິກຂາ
໕. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນສະມາທິ
໖. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນຄວາມບໍ່ຜະໝາດ
໗. ຢູ່ຢ່າງບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນປະຕິສັນຖານ

ກິມິລະ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດທຳດຳຣົງຢູ່ໄດ້ບໍ່ດົນ ໃນເມື່ອຕະຖາຄົດປະຣິນິບພານແລ້ວ"

ທ່ານພຣະກິມິລະທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ພຣະສັດທຳດຳຣົງຢູ່ໄດ້ນານ ໃນເມື່ອພຣະຕະຖາຄົດປະຣິນິບພານແລ້ວ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ກິມິລະ ເມື່ອຕະຖາຄົດປະຣິນິບພານແລ້ວ ເຫຼົ່າພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາໃນທຳວິໄນນີ້

໑. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສາດສະດາ
໒. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນທຳ
໓. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສົງ
໔. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສິກຂາ
໕. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນສະມາທິ
໖. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນຄວາມບໍ່ຜະໝາດ
໗. ຢູ່ຢ່າງມີຄວາມເຄົາລົບ ມີຄວາມຢຳເກງໃນປະຕິສັນຖານ

ກິມິລະ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດທຳດຳຣົງຢູ່ໄດ້ນານ ໃນເມື່ອຕະຖາຄົດປະຣິນິບພານແລ້ວ”

**ກິມິລະສູດທີ ໖ ຈົບ**

# ໗. ສັດຕະທຳມະສູດ

## ວ່າດ້ວຍທຳ ໗ ປະການທີ່ເປັນເຫດໃຫ້ບັນລຸວິມຸດຕິ

[໖໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ບໍ່ດົນປານໃດ ກໍຈະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາ ອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນພະຫູສູດ
໔. ເປັນຜູ້ຫຼີບຫຼີກ
໕. ເປັນຜູ້ຜາຣົບຄວາມພຽນ
໖. ເປັນຜູ້ມີສະຕິ
໗. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ ບໍ່ດົນປານໃດ ກໍຈະເຮັດໃຫ້ແຈ້ງເຈໂຕວິ ມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ສັດຕະທຳມະສູດທີ ໗ ຈົບ**

# ໘. ຈະປະລາຍະມານະສູດ

## ວ່າດ້ວຍອຸບາຍແກ້ຄວາມງ່ວງ

[໖໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ເພສະກະລາມິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວັ້ນພັກຄະ ສະໄໝນັ້ນແລ ທ່ານພຣະມະຫາໂມກຄັນລານະ ກຳລັງນັ່ງງ່ວງເຫງົານອນຢູ່ທີ່ໝູ່ບ້ານກັນລະວາລະມຸດຕະຄາມ ແຄວັ້ນມະຄົດ ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນທ່ານ ພຣະມະຫາໂມກຄັນລານະກຳລັງນັ່ງງ່ວງຢູ່ ໃກ້ໝູ່ບ້ານກັນລະວາລະມຸດຕະຄາມ ແຄວັ້ນມະຄົດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ແລ້ວໄດ້ຊົງຫາຍໄປຈາກປ່າເພສະກະລາມິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວັ້ນພັກຄະ ໄປຜາກົດຕໍ່ໜ້າທ່ານພຣະມະຫາໂມກຄັນລານະໃກ້ໝູ່ບ້ານກັນລະວາລະມຸດຕະຄາມ ແຄວັ້ນມະຄົດ ເໝືອນບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ

ພຣະຜູ້ມີພຣະພາກເຈົ້າໄດ້ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດກັບທ່ານພຣະມະຫາໂມກຄັນລານະດັ່ງນີ້ວ່າ "ທ່ານງ່ວງນອນບໍ? ໂມກຄັນລານະ ທ່ານງ່ວງນອນບໍ? ໂມກຄັນລານະ"

ທ່ານພຣະມະຫາໂມກຄັນລານະຂາບທູນວ່າ "ເປັນຢ່າງນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

໑. ເມື່ອທ່ານມີສັນຍາຢູ່ຢ່າງໃດ ຄວາມງ່ວງນອນນັ້ນ ຍ່ອມຄອບງຳທ່ານໄດ້ ທ່ານຢ່າໄດ້ມະນະສິການເຖິງສັນຍານັ້ນ ຢ່າໄດ້ເຮັດສັນຍານັ້ນໃຫ້ຫຼາຍ ເປັນໄປໄດ້ທີ່ເມື່ອທ່ານຢູ່ຢ່າງນັ້ນ ຈະລະຄວາມງ່ວງນອນນັ້ນໄດ້

໒. ຖ້າເມື່ອທ່ານຢູ່ຢ່າງນັ້ນ ຍັງລະຄວາມງ່ວງນອນນັ້ນບໍ່ໄດ້ ທ່ານເພິ່ງນຶກຕອງພິຈາລະນາທຳຕາມທີ່ໄດ້ສະດັບມາ ໄດ້ຮ່ຳຮຽນມາ ເປັນໄປໄດ້ທີ່ເມື່ອທ່ານຢູ່ຢ່າງນັ້ນ ຈະລະຄວາມງ່ວງນອນນັ້ນໄດ້

໓. ຖ້າເມື່ອທ່ານຢູ່ຢ່າງນັ້ນ ຍັງລະຄວາມງ່ວງນອນນັ້ນບໍ່ໄດ້ ທ່ານເພິ່ງສາທະຍາຍທຳຕາມທີ່ໄດ້ສະດັບມາ ໄດ້ຮ່ຳຮຽນມາໂດຍພິດສະດານ ເປັນໄປໄດ້ທີ່ເມື່ອທ່ານຢູ່ຢ່າງນັ້ນ ຈະລະຄວາມງ່ວງນັ້ນໄດ້

໔. ຖ້າເມື່ອທ່ານຢູ່ຢ່າງນັ້ນ ຍັງລະຄວາມງ່ວງນອນນັ້ນບໍ່ໄດ້ ທ່ານເພິ່ງຍອນຫູທັງ ໒ ຂ້າງ ໃຊ້ມືບີບນວດຕົວ ເປັນໄປໄດ້ທີ່ເມື່ອທ່ານຢູ່ຢ່າງນັ້ນ ຈະລະຄວາມງ່ວງນອນນັ້ນໄດ້

໕. ຖ້າເມື່ອທ່ານຢູ່ຢ່າງນັ້ນ ຍັງລະຄວາມງ່ວງນອນນັ້ນບໍ່ໄດ້ ທ່ານເພິ່ງລຸກຂຶ້ນຢືນ ໃຊ້ນ້ຳລູບຕາ ຫຼຽວເບິ່ງທິດທັງຫຼາຍ ແຫງນເບິ່ງດາວນັກສັດ ເປັນໄປໄດ້ທີ່ເມື່ອທ່ານຢູ່ຢ່າງນັ້ນ ຈະລະຄວາມງ່ວງນອນນັ້ນໄດ້

໖. ຖ້າເມື່ອທ່ານຢູ່ຢ່າງນັ້ນ ຍັງລະຄວາມງ່ວງນັ້ນບໍ່ໄດ້ ທ່ານເພິ່ງມະນະສິການເຖິງອາໂລກະ-ສັນຍາ (ຄວາມກຳນົດໝາຍແສງສະຫວ່າງ) ຕັ້ງສັນຍາວ່າເປັນກາງເວັນໄວ້ ຄືກາງເວັນ ຢ່າງໃດກາງຄືນກໍຢ່າງນັ້ນ ກາງຄືນຢ່າງໃດ ກາງເວັນກໍຢ່າງນັ້ນ ມີໃຈເປີດເຜີຍ ບໍ່ມີອັນໃດຫຸ້ມຫໍ່ ເຮັດຈິດໃຫ້ໂປ່ງໃສ ເປັນໄປໄດ້ທີ່ເມື່ອທ່ານຢູ່ຢ່າງນັ້ນ ຈະລະຄວາມງ່ວງນັ້ນໄດ້

໗. ຖ້າເມື່ອທ່ານຢູ່ຢ່າງນັ້ນ ຍັງລະຄວາມງ່ວງນັ້ນບໍ່ໄດ້ ທ່ານເພິ່ງອະທິຖານຈົງກົມກຳນົດໝາຍຢ່າງກັບໄປກັບມາ ສັງລວມອິນຊີພາຍໃນ ມີໃຈບໍ່ຄິດໄປພາຍນອກ ເປັນໄປໄດ້ທີ່ເມື່ອທ່ານຢູ່ຢ່າງນັ້ນ ຈະລະຄວາມງ່ວງນັ້ນໄດ້

ຖ້າເມື່ອທ່ານຢູ່ຢ່າງນັ້ນ ທ່ານຍັງລະຄວາມງ່ວງນັ້ນບໍ່ໄດ້ ກໍເພິ່ງສຳເລັດສີຫະໄສຍາ (ການນອນເໝືອນຣາດຊະສີ) ໂດຍຕະແຄງຂ້າງຂວາ ຊ້ອນຂາເຫຼື່ອມຂາ ມີສະຕິສຳປະຊັນຍະ ເຮັດອຸດຖານະ-ສັນຍາ (ກຳນົດໝາຍວ່າຈະລຸກຂຶ້ນ) ໄວ້ໃນໃຈ ພໍຕື່ນ ກໍຟ້າວລຸກຂຶ້ນດ້ວຍຕັ້ງໃຈວ່າ "ເຮົາຈັກບໍ່ປະກອບຄວາມສຸກໃນການນອນ ບໍ່ປະກອບຄວາມສຸກໃນການເອນຫຼັງ ບໍ່ປະກອບຄວາມສຸກໃນການຫຼັບ" ໂມກຄັນລານະ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

ໂມກຄັນລານະ ເພາະເຫດນັ້ນ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ "ເຮົາຈັກບໍ່ຊູງວງ ເຂົ້າໄປສູ່ຕະກູນ" ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້

ໂມກຄັນລານະ ຖ້າພິກຂຸຊູງວງເຂົ້າໄປສູ່ຕະກູນ ແລະໃນຕະກູນກໍມີກິດທີ່ຈະຕ້ອງເຮັດຫຼາຍຢ່າງ ເຮັດໃຫ້ຜູ້ຄົນບໍ່ໃສ່ໃຈເຖິງພິກຂຸຜູ້ມາເຖິງແລ້ວ ເພາະເຫດນັ້ນ ພິກຂຸຈຶ່ງມີຄວາມຄິດຢ່າງນີ້ວ່າ "ດຽວນີ້ ໃຜກັນຍຸຍົງໃຫ້ເຮົາແຕກກັບຕະກູນນີ້ ດຽວນີ້ ຄົນເຫຼົ່ານີ້ ເບື່ອໜ່າຍເຮົາ" ດັ່ງນັ້ນ ທ່ານຈຶ່ງມີຄວາມເກີ້ເຂີນເພາະບໍ່ໄດ້ອັນໃດ ເມື່ອເກີ້ເຂີນ ຈຶ່ງມີຄວາມຟຸ້ງຊ່ານ ເມື່ອຟຸ້ງຊ່ານ ຈຶ່ງມີຄວາມບໍ່ສັງລວມ ເມື່ອບໍ່ສັງລວມ ຈິດຈຶ່ງຫ່າງຈາກສະມາທິ

ໂມກຄັນລານະ ເພາະເຫດນັ້ນແລ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ "ເຮົາຈັກບໍ່ກ່າວຖ້ອຍຄຳທີ່ເປັນເຫດໃຫ້ຖືກຖຽງກັນ" ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

ໂມກຄັນລານະ ເມື່ອມີຖ້ອຍຄຳທີ່ເປັນເຫດໃຫ້ຖົກຖຽງກັນ ກໍຈຳຕ້ອງເວົ້າຫຼາຍ ເມື່ອມີການເວົ້າຫຼາຍ ຄວາມຟຸ້ງຊ່ານຈຶ່ງມີ ເມື່ອຟຸ້ງຊ່ານ ຈຶ່ງມີຄວາມບໍ່ສັງລວມ ເມື່ອບໍ່ສັງລວມ ຈິດຈຶ່ງຫ່າງຈາກສະມາທິ

ໂມກຄັນລານະ ເຮົາບໍ່ສັນເສີນການຄຸກຄີກັບຄົນທັງປວງ ເຮົາຈະບໍ່ສັນເສີນການຄຸກຄີໂດຍປະການທັງປວງເລີຍກໍບໍ່ແມ່ນ ຄື ເຮົາບໍ່ສັນເສີນການຄຸກຄີດ້ວຍໝູ່ຊົນ ທັງຄະລືຫັດ ແລະບັນພະຊິດ ແຕ່ເຮົາສັນເສີນການຄຸກຄີດ້ວຍເສນາສະນະທີ່ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດສົມຄວນເປັນທີ່ຫຼີບຫຼີກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນັ້ນແລ້ວ ທ່ານພຣະມະຫາໂມກຄັນລານະຈຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້ານ້ອຍ ວ່າໂດຍຫຍໍ້ ດ້ວຍຂໍ້ປະຕິບັດເທົ່າໃດນໍ? ພິກຂຸຈຶ່ງຊື່ວ່າເປັນຜູ້ລຸດພົ້ນເພາະຄວາມສິ້ນໄປແຫ່ງຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ປະເສີດກວ່າເທວະດາ ແລະມະນຸດທັງຫຼາຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ໂມກຄັນລານະ ພິກຂຸໃນທຳວິໄນນີ້ໄດ້ສະດັບມາວ່າ ທຳທັງປວງບໍ່ຄວນຍຶດໝັ້ນ ພິກຂຸໄດ້ສະດັບມາຢ່າງນັ້ນວ່າ ທຳທັງປວງບໍ່ຄວນຍຶດໝັ້ນ ພິກຂຸນັ້ນຍ່ອມຮູ້ແຈ້ງທຳທັງປວງ ເມື່ອຮູ້ແຈ້ງທຳທັງປວງແລ້ວ ຈຶ່ງກຳນົດຮູ້ທຳທັງປວງ ເມື່ອກຳນົດຮູ້ທຳທັງປວງແລ້ວ ຈຶ່ງສະເຫວີຍເວທະນາຢ່າງໃດຢ່າງໜຶ່ງ ຄື ສຸກຂະເວທະນາ ທຸກຂະເວທະນາ ຫຼືອະທຸກຂະມະສຸກຂະເວທະນາ ທ່ານພິຈາລະນາເຫັນຄວາມບໍ່ທ່ຽງໃນເວທະນາເຫຼົ່ານັ້ນຢູ່ພິຈາລະນາເຫັນຄວາມຄາຍອອກໃນເວທະນາເຫຼົ່ານັ້ນຢູ່ ພິຈາລະນາເຫັນຄວາມດັບໄປໃນເວທະນາເຫຼົ່ານັ້ນຢູ່ ພິຈາລະນາເຫັນຄວາມສະລະຄືນໃນເວທະນາເຫຼົ່ານັ້ນຢູ່ ເມື່ອພິຈາລະນາເຫັນຄວາມບໍ່ທ່ຽງໃນເວທະນາເຫຼົ່ານັ້ນຢູ່ ພິຈາລະນາເຫັນຄວາມຄາຍອອກໃນເວທະນາເຫຼົ່ານັ້ນຢູ່ພິຈາລະນາເຫັນຄວາມດັບໄປໃນເວທະນາເຫຼົ່ານັ້ນຢູ່ ພິຈາລະນາເຫັນຄວາມສະລະຄືນໃນເວທະນາເຫຼົ່ານັ້ນຢູ່ ທ່ານກໍບໍ່ຍຶດໝັ້ນອັນໃດໃນໂລກ ເມື່ອບໍ່ຍຶດໝັ້ນ ກໍບໍ່ສະດຸ້ງ ເມື່ອບໍ່ສະດຸ້ງ ກໍປະຣິນິບພານສະເພາະຕົນ ທ່ານຍ່ອມຮູ້ແຈ້ງວ່າ “ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ

ໂມກຄັນລານະ ວ່າໂດຍຫຍໍ້ ດ້ວຍຂໍ້ປະຕິບັດເທົ່ານີ້ແລ ພິກຂຸຈຶ່ງຊື່ວ່າເປັນຜູ້ລຸດພົ້ນເພາະຄວາມສິ້ນໄປແຫ່ງຕັນຫາ ມີຄວາມສຳເລັດສູງສຸດ ມີຄວາມກະເສມຈາກໂຍຄະສູງສຸດ ປະພຶດພົມມະຈັນເຖິງທີ່ສຸດ ມີທີ່ສຸດອັນສູງສຸດ ປະເສີດກວ່າເທວະດາ ແລະມະນຸດທັງຫຼາຍ”

**ຈະປະລາຍະມານະສູດທີ ໘ ຈົບ**

# ໙. ເມດຕະສູດ

## ວ່າດ້ວຍການຈະເລີນເມດຕາຈິດ

[໙໘] ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າຢ້ານບຸນເລີຍ ຄຳວ່າ ບຸນນີ້ ເປັນຊື່ຂອງຄວາມສຸກ ເຮົາຍ່ອມຮູ້ແຈ້ງວ່າບຸນທີ່ເຮົາເຮັດແລ້ວຕະຫຼອດການລະນານ ມີຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ອັນເຮົາສະເຫວີຍມາແລ້ວຕະຫຼອດການລະນານ ເຮົາຈະເລີນເມດຕາຈິດຕະຫຼອດ ໗ ປີ ບໍ່ໄດ້ກັບມາສູ່ໂລກນີ້ອີກຕະຫຼອດ ໗ ສັງວັດຕະກັບ ແລະວິວັດຕະກັບ ພິກຂຸທັງຫຼາຍ ເມື່ອໂລກເສື່ອມ ເຮົາເຂົ້າເຖິງພົມມະໂລກຊັ້ນອາພັດສະ ເມື່ອໂລກຈະເລີນ ເຮົາເຂົ້າເຖິງພົມວິມານອັນວ່າງເປົ່າ

ພິກຂຸທັງຫຼາຍ ໃນພົມວິມານນັ້ນ ເຮົາເປັນພົມ ເປັນມະຫາພົມ ເປັນຜູ້ຄອບງຳ ບໍ່ຖືກໃຜໆຄອບງຳ ເປັນຜູ້ເຫັນແນ່ນອນ ມີອຳນາດ ເຮົາໄດ້ເປັນທ້າວສັກກະ ຜູ້ເປັນຈອມເທບເຖິງ ໓໖ ຄັ້ງ ໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳຣາຊາ ມີມະຫາສະມຸດທັງ ໔ ເປັນຂອບເຂດ ເປັນຜູ້ຊະນະສົງຄາມ ມີຊົນນະບົດທີ່ເຖິງຄວາມໝັ້ນຄົງ ປະກອບດ້ວຍຣັດຕະນະ ໗ ປະການ ຕັ້ງຫຼາຍຮ້ອຍຄັ້ງ ເຮົານັ້ນມີຣັດຕະນະ ໗ ປະການນີ້[໑] ຄື

໑. ຈັກແກ້ວ
໒. ຊ້າງແກ້ວ
໓. ມ້າແກ້ວ
໔. ມະນີແກ້ວ
໕. ນາງແກ້ວ
໖. ຄະຫະບໍດີແກ້ວ
໗. ຂຸນພົນແກ້ວ

ເຮົາເຄີຍມີບຸດຫຼາຍກວ່າພັນຄົນ ລ້ວນແຕ່ເປັນຄົນກ້າຫານຊານໄຊ ສາມາດຍ່ຳຍີຂ້າເສິກໄດ້ ເຮົານັ້ນປົກຄອງແຜ່ນດິນນີ້ອັນມີມະຫາສະມຸດເປັນຂອບເຂດໂດຍທຳ ໂດຍບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ອາວຸດ

ຈົ່ງເບິ່ງວິບາກແຫ່ງບຸນກຸສົນ
ຂອງບຸກຄົນຜູ້ສະແຫວງຫາຄວາມສຸກ
ພິກຂຸທັງຫຼາຍ ເຮົາຈະເລີນເມດຕາຈິດມາ ໗ ປີ
ບໍ່ມາສູ່ໂລກນີ້ອີກຕະຫຼອດ ໗ ສັງວັດຕະກັບ ແລະວິວັດຕະກັບ
ເມື່ອໂລກເສື່ອມ ເຮົາເຂົ້າເຖິງພົມມະໂລກຊັ້ນອາພັດສະ
ເມື່ອໂລກຈະເລີນ ເຮົາເຂົ້າເຖິງພົມວິມານອັນວ່າງເປົ່າ
ໃນການນັ້ນ ເຮົາເປັນມະຫາພົມຜູ້ມີອຳນາດເຖິງ ໗ ຄັ້ງ

ເປັນທ້າວສັກກະຜູ້ເປັນຈອມເທບ ສະເຫວີຍເທບສົມບັດ ໓໖ ຄັ້ງ
ເປັນພຣະເຈົ້າຈັກກະພັດຜູ້ເປັນໃຫຍ່ແຫ່ງຊົນຊາວຊົມພູທະວີບ
ເປັນກະສັດຕາທິຣາດຜູ້ໄດ້ຮັບມູດທາພິເສກ ເປັນໃຫຍ່ໃນໝູ່ມະນຸດ

ປົກຄອງປະຖະພີມົນທົນນີ້ໂດຍບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ອາວຸດ
ສັ່ງສອນຄົນໃນປະຖະພີມົນທົນນັ້ນໂດຍທຳສະໝ່ຳສະເໝີ ບໍ່ຜຸນຜັນ
ເມື່ອໄດ້ຄອງຣາດຊະສົມບັດໃນປະຖະພີມົນທົນນີ້ໂດຍທຳແລ້ວ
ໄດ້ເກີດໃນຕະກູນຮັ່ງມີ ມີຊັບຫຼາຍ ມີໂພຄະສົມບັດຫຼາຍ
ພຽບພ້ອມດ້ວຍຣັດຕະນະ ໗ ປະການ
ທີ່ອຳນວຍຄວາມປະສົງໄດ້ທຸກຢ່າງ

ຖານະນີ້ ພຣະພຸດທະເຈົ້າທັງຫຼາຍຜູ້ຊົງສົງເຄາະໂລກ
ຊົງສະແດງໄວ້ດີແລ້ວ
ເຫດທີ່ເຂົາຮຽກວ່າ ເຈົ້າແຜ່ນດິນ ກໍເພາະເປັນໃຫຍ່
ເຮົາເປັນພຣະຣາຊາຜູ້ເຮືອງເດດ
ມີຊັບອັນເປັນອຸປະກອນເຄື່ອງພໍໃຈຫຼວງຫຼາຍ

ມີລິດ ມີຍົດ ເປັນໃຫຍ່ແຫ່ງຊົນຊາວຊົມພູທະວີບ
ໃຜນໍ? ໄດ້ຟັງແລ້ວຈະບໍ່ເຫຼື້ອມໃສ ແມ່ນຊົນຊັ້ນກັນຫາພິຊາດ
ເພາະສະນັ້ນແລ ຜູ້ມຸ້ງປະໂຫຍດ ມຸ້ງຄວາມເປັນໃຫຍ່
ເມື່ອຣະນຶກເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ເພິ່ງເຄົາລົບສັດທຳເທີ້ນ

**ເມດຕະສູດທີ ໙ ຈົບ**

# ໑໐. ພະຣິຍາສູດ

## ວ່າດ້ວຍພັນລະຍາ

[໖໐] ຄັ້ງນັ້ນແລ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດ ແລະຈີວອນ ສະເດັດເຂົ້າໄປສູ່ນິເວດຂອງອະນາຖະບິນທິກະຄະຫະບໍດີ ແລ້ວປະທັບນັ່ງເທິງພຸດທະອາດ ທີ່ປູລາດໄວ້ແລ້ວ ສະໄໝນັ້ນແລ ໃນນິເວດຂອງອະນາຖະບິນທິກະຄະຫະບໍດີ ມີເຫຼົ່າມະນຸດສົ່ງສຽງ ດັງພຶດພື້ນ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມອະນາຖະບິນທິກະຄະຫະບໍດີດັ່ງນີ້ ວ່າ

"ຄະຫະບໍດີ ເຫດໃດນໍ? ເຫຼົ່າມະນຸດໃນນິເວດຂອງທ່ານຈຶ່ງສົ່ງສຽງດັງພຶດພື້ນ ເໝືອນຊາວປະມົງຍາດປາກັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ນາງສຸຊາດານີ້ ຂ້າພຣະອົງພາມາຈາກຕະກູນຮັ່ງມີ ເປັນສະໃພ້ໃນເຮືອນ ນາງບໍ່ເຊື່ອຟັງແມ່ຜົວ ບໍ່ເຊື່ອຟັງພໍ່ຜົວ ບໍ່ເຊື່ອຟັງສາມີ ແມ່ນແຕ່ພຣະຜູ້ມີພຣະພາກເຈົ້າ ນາງກໍບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກນາງສຸຊາດາຍິງສະໃພ້ໃນເຮືອນມາ ຕັດວ່າ "ມານີ້ ສຸຊາດາ" ນາງສຸຊາດາຍິງສະໃພ້ໃນເຮືອນທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບນາງສຸຊາດາຍິງສະໃພ້ໃນເຮືອນດັ່ງນີ້ວ່າ

ສຸຊາດາ ພັນລະຍາ ໗ ຈຳພວກນີ້

ພັນລະຍາ ໗ ຈຳພວກໃດແດ່ ຄື

໑. ພັນລະຍາເໝືອນເພດຊະຄາດ
໒. ພັນລະຍາເໝືອນນາງໂຈນ
໓. ພັນລະຍາເໝືອນນາຍຍິງ
໔. ພັນລະຍາເໝືອນມານດາ
໕. ພັນລະຍາເໝືອນເອື້ອຍສາວນ້ອງສາວ
໖. ພັນລະຍາເໝືອນເພື່ອນ
໗. ພັນລະຍາເໝືອນທາສີ

ສຸຊາດາ ພັນລະຍາ ໗ ຈຳພວກນີ້ແລ

ບັນດາພັນລະຍາ ໗ ຈຳພວກນັ້ນ ທ່ານເປັນພັນລະຍາຈຳພວກໃດ

ນາງສຸຊາດາຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍບໍ່ເຂົ້າໃຈຄວາມໝາຍແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ຢ່າງພິດສະດານ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງສະແດງທຳແກ່ຂ້ານ້ອຍ ໂດຍວິທີທີ່ຂ້ານ້ອຍຈະເຂົ້າໃຈຄວາມໝາຍແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ໄດ້ຢ່າງພິດສະດານ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສຸຊາດາ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອນາງສຸຊາດາຍິງສະໃພ້ໃນເຮືອນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

ພັນລະຍາໃດຄິດປະທຸດສະຮ້າຍ ບໍ່ເກື້ອກູນອະນຸເຄາະ
ຍິນດີຕໍ່ຊາຍເຫຼົ່າອື່ນ ດູໝິ່ນສາມີ

ເປັນຍິງທີ່ເຂົາຊື້ມາດ້ວຍຊັບ ພະຍາຍາມຂ້າສາມີ
ພັນລະຍາເຊັ່ນນີ້ ຮຽກວ່າ ພັນລະຍາເໝືອນເພດຊະຄາດ

ພັນລະຍາໃດມຸ້ງຈະຍັກຍອກຊັບແມ່ນມີຈຳນວນໜ້ອຍ
ທີ່ສາມີປະກອບສິລະປະກຳ ພານິດຊະກຳ ແລະກະສິກຳໄດ້ມາ
ພັນລະຍາເຊັ່ນນີ້ ຮຽກວ່າ ພັນລະຍາເໝືອນນາງໂຈນ

ພັນລະຍາໃດບໍ່ສົນໃຈວຽກງານ ຂີ້ຄ້ານ ກິນຫຼາຍ
ຫຍາບຄາຍ ດຸຮ້າຍ ມັກເວົ້າຄຳຊົ່ວຫຍາບ
ຂົ່ມຂີ່ສາມີຜູ້ຂະຫຍັນໝັ່ນພຽນ
ພັນລະຍາເຊັ່ນນີ້ ຮຽກວ່າ ພັນລະຍາເໝືອນນາຍຍິງ

ພັນລະຍາໃດເປັນຜູ້ເກື້ອກູນອະນຸເຄາະທຸກເມື່ອ
ຄອຍຖ້າຖະນຸຖະໜອມສາມີ ເໝືອນມານດາຄອຍຖ້າຖະນຸຖະໜອມບຸດ
ຮັກສາຊັບທີ່ສາມີຫາມາໄດ້ໄວ້
ພັນລະຍາເຊັ່ນນີ້ ຮຽກວ່າ ພັນລະຍາເໝືອນມານດາ

ພັນລະຍາໃດເປັນເໝືອນເອື້ອຍສາວນ້ອງສາວ
ມີຄວາມເຄົາລົບໃນສາມີຂອງຕົນ
ມີໃຈລະອາຍຕໍ່ບາບ ປະພຶດໄປຕາມອຳນາດສາມີ
ພັນລະຍາເຊັ່ນນີ້ ຮຽກວ່າ ພັນລະຍາເໝືອນເອື້ອຍສາວນ້ອງສາວ

ພັນລະຍາໃດເຫັນສາມີແລ້ວຊື່ນຊົມຍິນດີ
ເໝືອນເພື່ອນເຫັນເພື່ອນຜູ້ຈາກໄປນານແລ້ວກັບມາ
ເປັນຍິງມີຕະກູນ ມີສິນ ມີຂໍ້ວັດປະຕິບັດຕໍ່ສາມີ
ພັນລະຍາເຊັ່ນນີ້ ຮຽກວ່າ ພັນລະຍາເໝືອນເພື່ອນ

ພັນລະຍາໃດຖືກສາມີຂູ່ຈະຂ້າຈະຄຽນຕີ ກໍບໍ່ໂກດ ສະຫງົບສະຫງ່ຽມ
ບໍ່ຄິດຂຸ່ນເຄືອງສາມີ ອົດທົນໄດ້
ບໍ່ໂກດ ປະພຶດໄປຕາມອຳນາດສາມີ
ພັນລະຍາເຊັ່ນນີ້ ຮຽກວ່າ ພັນລະຍາເໝືອນທາສີ

ພັນລະຍາໃດໃນໂລກນີ້ ທີ່ຮຽກວ່າ ພັນລະຍາເໝືອນເພດຊະຄາດ
ພັນລະຍາເໝືອນນາງໂຈນ ແລະພັນລະຍາເໝືອນນາຍຍິງ
ພັນລະຍານັ້ນ ເປັນຜູ້ທຸສິນ ຫຍາບຄາຍ ບໍ່ເອື້ອເຟື້ອ
ເມື່ອຕາຍໄປ ຍ່ອມໄປສູ່ນະຮົກ

ສ່ວນພັນລະຍາໃດໃນໂລກນີ້ ທີ່ຮຽກວ່າ ພັນລະຍາເໝືອນມານດາ
ພັນລະຍາເໝືອນເອື້ອຍສາວນ້ອງສາວ

ພັນລະຍາເໝືອນເພື່ອນ ພັນລະຍາເໝືອນທາສີ
ພັນລະຍານັ້ນ ເພາະເປັນຜູ້ຕັ້ງຢູ່ໃນສີນ
ຍິນດີແລະສັງລວມມາດົນ
ເມື່ອຕາຍໄປ ຍ່ອມໄປສູ່ສຸກຄະຕິໂລກສະຫວັນ

ສຸຊາດາ ພັນລະຍາ ໗ ຈຳພວກນີ້ແລ
ບັນດາພັນລະຍາ ໗ ຈຳພວກນັ້ນ ທ່ານຈັກເປັນພັນລະຍາຈຳພວກໃດ?

ນາງສຸຊາດາຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຕັ້ງແຕ່ວັນນີ້ເປັນຕົ້ນໄປ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຈື່ຂ້ານ້ອຍໄວ້ວ່າ ເປັນພັນລະຍາເໝືອນທາສີ"

**ພະຣິຍາສູດທີ ໑໐ ຈົບ**

# ໑໑. ໂກທະນະສູດ

## ວ່າດ້ວຍບຸກຄົນຜູ້ມັກໂກດ

[໖໔] ພິກຂຸທັງຫຼາຍ ທຳ ໗ ປະການນີ້ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ ຍ່ອມມາເຖິງບຸກຄົນຜູ້ມັກໂກດ ຈະເປັນສະຕີ ຫຼື ບຸຣຸດກໍຕາມ

ທຳ ໗ ປະການ ອັນໃດແດ່ ຄື

໑. ສັດຕູໃນໂລກນີ້ຍ່ອມປາຖະໜາຕໍ່ສັດຕູຢ່າງນີ້ວ່າ "ຂໍໃຫ້ເຈົ້າຄົນນີ້ມີຜິວພັນຊາມເທີ້ນ" ຂໍ້ນັ້ນເພາະເຫດໃດ ເພາະສັດຕູຍ່ອມບໍ່ຍິນດີໃຫ້ສັດຕູມີຜິວພັນງາມ ພິກຂຸທັງຫຼາຍ ບຸກຄົນຜູ້ມັກໂກດ ຖືກຄວາມໂກດ ຄອບງຳ ໂກດຈັດນີ້ ແມ່ນອາບນ້ຳດີແລ້ວ ທາດີແລ້ວ ຕັດຜົມ ແຖໜວດແລ້ວນຸ່ງຜ້າຂາວກໍຕາມ ແຕ່ບຸກຄົນຜູ້ຖືກຄວາມໂກດຄອບງຳນັ້ນ ກໍເປັນຄົນມີຜິວພັນຊາມຢູ່ນັ້ນເອງ ນີ້ເປັນທຳປະການທີ ໑ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ

໒. ສັດຕູໃນໂລກນີ້ຍ່ອມປາຖະໜາຕໍ່ສັດຕູຢ່າງນີ້ວ່າ "ຂໍໃຫ້ເຈົ້າຄົນນີ້ນອນເປັນທຸກເທີ້ນ" ຂໍ້ນັ້ນເພາະເຫດໃດ ເພາະສັດຕູຍ່ອມບໍ່ຍິນດີໃຫ້ສັດຕູນອນສະບາຍ ພິກຂຸທັງຫຼາຍ ບຸກຄົນຜູ້ມັກໂກດ ຖືກຄວາມໂກດຄອບງຳ ໂກດຈັດນີ້ ແມ່ນນອນຢູ່ເທິງຕຽງມີຂາເປັນຮູບສັດຮ້າຍ ປູລາດດ້ວຍພົມຂົນສັດ ປູລາດດ້ວຍເຄື່ອງລາດມີລາຍຮູບດອກໄມ້ ມີເຄື່ອງປູລາດໜັງຊະມົດ ເຄື່ອງລາດມີເພດານ ເຄື່ອງລາດມີໝອນ ໒ ຂ້າງກໍຈິງ ແຕ່ບຸກຄົນຜູ້ຖືກຄວາມໂກດຄອບງຳນັ້ນ ກໍນອນເປັນທຸກ ຢູ່ນັ້ນເອງ ນີ້ເປັນທຳ ປະການທີ ໒ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ

໓. ສັດຕູໃນໂລກນີ້ຍ່ອມປາຖະໜາຕໍ່ສັດຕູຢ່າງນີ້ວ່າ "ຂໍໃຫ້ເຈົ້າຄົນນີ້ ຢ່າໄດ້ ມີຄວາມຈະເລີນເລີຍ" ຂໍ້ນັ້ນ ເພາະເຫດໃດ ເພາະສັດຕູຍ່ອມບໍ່ຍິນດີໃຫ້ສັດຕູມີຄວາມຈະເລີນ ພິກຂຸທັງຫຼາຍ ບຸກຄົນຜູ້ມັກໂກດ ຖືກຄວາມໂກດຄອບງຳ ໂກດຈັດນີ້ ແມ່ນໄດ້ຄວາມເສື່ອມກໍເຂົ້າໃຈວ່າ "ຕົນໄດ້ຄວາມຈະເລີນ" ແມ່ນໄດ້ຄວາມຈະເລີນກໍເຂົ້າໃຈວ່າ "ຕົນໄດ້ຄວາມເສື່ອມ" ທຳເຫຼົ່ານີ້ເປັນຂ້າເສິກຕໍ່ກັນແລະກັນ ທີ່ບຸກຄົນຜູ້ຖືກຄວາມໂກດຄອບງຳນັ້ນຢຶດຖືແລ້ວ ຍ່ອມເປັນໄປເພື່ອບໍ່ເກື້ອກູນ ເພື່ອທຸກສິ້ນການລະນານ ນີ້ເປັນທຳປະການທີ່ ໓ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ

໔. ສັດຕູໃນໂລກນີ້ຍ່ອມປາຖະໜາຕໍ່ສັດຕູຢ່າງນີ້ວ່າ "ຂໍໃຫ້ເຈົ້າຄົນນີ້ເປັນຄົນບໍ່ມີໂພຄະຊັບເທີ້ນ" ຂໍ້ນັ້ນເພາະເຫດໃດ ເພາະສັດຕູຍ່ອມບໍ່ຍິນດີໃຫ້ສັດຕູມີໂພຄະຊັບ ພິກຂຸທັງຫຼາຍ ບຸກຄົນຜູ້ມັກໂກດ ຖືກຄວາມໂກດ ຄອບງຳ ໂກດຈັດນີ້ ແມ່ນມີໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບລວບລວມດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທຳ ໄດ້ມາໂດຍທຳກໍຕາມ ແຕ່ພຣະຣາຊາກໍຮັບສັ່ງໃຫ້ຢຶດໂພຄະຊັບຂອງບຸກຄົນ ຜູ້ຖືກຄວາມໂກດຄອບງຳນີ້ເປັນທຳປະການທີ ໔ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ

໕. ສັດຕູໃນໂລກນີ້ຍ່ອມປາຖະໜາຕໍ່ສັດຕູຢ່າງນີ້ວ່າ "ຂໍໃຫ້ເຈົ້າຄົນນີ້ເປັນຄົນບໍ່ມີຍົດເທີ້ນ" ຂໍ້ນັ້ນເພາະເຫດໃດ ເພາະສັດຕູຍ່ອມບໍ່ຍິນດີໃຫ້ສັດຕູ ມີຍົດ ພິກຂຸທັງຫຼາຍ ບຸກຄົນຜູ້ມັກໂກດ ຖືກຄວາມໂກດຄອບງຳ ໂກດຈັດນີ້ ແມ່ນມີຍົດທີ່ໄດ້ມາດ້ວຍຄວາມບໍ່ຜະໝາດກໍຈິງ ແຕ່ບຸກຄົນຜູ້ຖືກຄວາມໂກດຄອບງຳກໍເສື່ອມຈາກຍົດນັ້ນ ນີ້ເປັນທຳປະການທີ ໕ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ

໖. ສັດຕູໃນໂລກນີ້ຍ່ອມປາຖະໜາຕໍ່ສັດຕູຢ່າງນີ້ວ່າ "ຂໍໃຫ້ເຈົ້າຄົນນີ້ເປັນຄົນບໍ່ມີມິດເທີ້ນ" ຂໍ້ນັ້ນເພາະເຫດໃດ ເພາະສັດຕູຍ່ອມບໍ່ຍິນດີໃຫ້ສັດຕູມີມິດ ພິກຂຸທັງຫຼາຍ ບຸກຄົນຜູ້ມັກໂກດ ຖືກຄວາມໂກດຄອບງຳ ໂກດຈັດນີ້ ແມ່ນມີມິດ ອຳມາດ ຍາດ ສາໂລຫິດ°ກໍຈິງ ແຕ່ຄົນເຫຼົ່ານັ້ນກໍພາກັນຫຼີກລ້ຽງບຸກຄົນຜູ້ຖືກຄວາມໂກດຄອບງຳນັ້ນໄປຫ່າງໄກ ນີ້ເປັນທຳປະການທີ ໖ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ

໗. ສັດຕູໃນໂລກນີ້ຍ່ອມປາຖະໜາຕໍ່ສັດຕູຢ່າງນີ້ວ່າ "ຂໍໃຫ້ເຈົ້າຄົນນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກເທີ້ນ" ຂໍ້ນັ້ນເພາະເຫດໃດ ເພາະສັດຕູຍ່ອມບໍ່ຍິນດີໃຫ້ສັດຕູໄປສູ່ສຸກຄະຕິ ພິກຂຸທັງຫຼາຍ ບຸກຄົນຜູ້ມັກໂກດ ຖືກຄວາມໂກດຄອບງຳ ໂກດຈັດນີ້ ປະພຶດທຸດຈະຣິດທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ນີ້ເປັນທຳປະການທີ ໗ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ

ພິກຂຸທັງຫຼາຍ ທຳ ໆ ປະການນີ້ແລ ທີ່ສັດຕູມຸ້ງໝາຍ ທີ່ສັດຕູເພິ່ງເຮັດ ຍ່ອມມາເຖິງບຸກຄົນຜູ້ມັກໂກດ ຈະເປັນສະຕີ ຫຼື ບຸຣຸດກໍຕາມ

ບຸກຄົນຜູ້ມັກໂກດນັ້ນ
ມີຜິວພັນຊາມ ນອນເປັນທຸກ
ໄດ້ຄວາມຈະເລີນແລ້ວ ກໍເຮັດໃຫ້ເຖິງຄວາມເສື່ອມ
ບຸກຄົນຜູ້ມັກໂກດ ຖືກຄວາມໂກດຄອບງຳ
ທຳການເຂັ່ນຂ້າທາງກາຍ ວາຈາ
ຍ່ອມປະສົບຄວາມເສື່ອມຊັບ
ບຸກຄົນຜູ້ມົວເມົາດ້ວຍຄວາມມົວເມົາເພາະໂກດ
ຍ່ອມເຖິງຄວາມເສື່ອມຍົດ
ຍາດມິດແລະສະຫາຍ ຍ່ອມຫຼີກເວັ້ນບຸກຄົນຜູ້ມັກໂກດ
ຄວາມໂກດກໍ່ຄວາມເສຍຫາຍ
ຄວາມໂກດເຮັດຈິດໃຫ້ກຳເຣີບ
ບຸກຄົນຜູ້ມັກໂກດຍ່ອມບໍ່ຮູ້ໄພທີ່ເກີດຈາກພາຍໃນ
ບຸກຄົນຜູ້ໂກດຍ່ອມບໍ່ຮູ້ອັດຖະ
ບຸກຄົນຜູ້ໂກດຍ່ອມບໍ່ເຫັນທຳ
ຄວາມໂກດຄອບງຳນໍຣະຊົນໃນການໃດ
ຄວາມມືດຍ່ອມມີໃນການນັ້ນ
ບຸກຄົນຜູ້ໂກດຍ່ອມກໍ່ກຳທີ່ເຮັດໄດ້ຍາກເໝືອນເຮັດໄດ້ງ່າຍ
ພາຍຫຼັງເມື່ອຫາຍໂກດແລ້ວ
ເຂົາຍ່ອມເດືອດຮ້ອນເໝືອນຖືກໄຟໄໝ້
ບຸກຄົນຜູ້ໂກດຍ່ອມສະແດງຄວາມດື້ດ້ານກ່ອນ
ເໝືອນໄຟສະແດງຄວັນກ່ອນ
ຄວາມໂກດເກີດຂຶ້ນໃນການໃດ
ຄົນທັງຫຼາຍຍ່ອມໂກດໃນການນັ້ນ
ບຸກຄົນຜູ້ໂກດບໍ່ມີຫິຣິ ບໍ່ມີໂອດຕັບປະ
ບໍ່ມີຄຳເວົ້າທີ່ໜ້າເຄົາລົບ
ບຸກຄົນຜູ້ຖືກຄວາມໂກດຄອບງຳບໍ່ມີຄວາມສະຫວ່າງແມ່ນແຕ່ໜ້ອຍ
ກຳເຫຼົ່າໃດຫ່າງໄກຈາກທຳ ເປັນເຫດໃຫ້ເດືອດຮ້ອນ
ເຮົາຈັກບອກກຳເຫຼົ່ານັ້ນ
ທ່ານທັງຫຼາຍຈົ່ງຟັງທຳນັ້ນໄປຕາມລຳດັບ

ບຸກຄົນຜູ້ໂກດ ຂ້າບິດາກໍໄດ້
ບຸກຄົນຜູ້ໂກດ ຂ້າມານດາກໍໄດ້
ບຸກຄົນຜູ້ໂກດ ຂ້າພາມກໍໄດ້
ບຸກຄົນຜູ້ໂກດ ຂ້າປຸຖຸຊົນກໍໄດ້

ລູກທີ່ມານດາລ້ຽງໄວ້ຈົນໄດ້ມືນຕາແນມເບິ່ງໂລກນີ້
ເປັນຜູ້ມີກິເລດໜາ ໂກດຂຶ້ນມາ
ຍ່ອມຂ້າແມ່ນມານດາຜູ້ໃຫ້ຊີວິດນັ້ນໄດ້

ສັດເຫຼົ່ານັ້ນມີຕົນເປັນເຄື່ອງປຽບທຽບ
ເພາະຕົນເປັນທີ່ຮັກຢ່າງຍິ່ງ
ຜູ້ໂກດມີກມຸ່ນໃນຮູບຕ່າງໆ ຍ່ອມຂ້າຕົນເອງເພາະເຫດຕ່າງໆ
ຄືຂ້າຕົນເອງດ້ວຍດາບແດ່ ກິນຢາພິດຕາຍແດ່
ໃຊ້ເຊືອກຜູກຄໍຕາຍແດ່ ໂດດລົງໃນຮ່ອມພູຕາຍແດ່

ຄົນເຫຼົ່ານັ້ນເມື່ອເຮັດກໍາ
ອັນມີແຕ່ຄວາມເສື່ອມແລະທໍາລາຍຕົນ ກໍບໍ່ຮູ້ສຶກ
ຄວາມເສື່ອມເກີດຈາກຄວາມໂກດ
ຕາມທີ່ກ່າວມາ ຄວາມໂກດນີ້ ເປັນບ້ວງແຫ່ງມັດຈຸ

ມີຖໍ້າເປັນທີ່ຢູ່ອາໄສ ໂດຍຮູບຂອງຄວາມໂກດ
ເພິ່ງຕັດຄວາມໂກດນັ້ນດ້ວຍທະມະ (ຄວາມຂົ່ມໃຈ)
ຄືປັນຍາ ຄວາມພຽນ ແລະທິດຖິ

ບັນດິດເພິ່ງຕັດອະກຸສົນທໍາແຕ່ລະຢ່າງ
ເພິ່ງສຶກສາໃນທໍາເໝືອນຢ່າງນັ້ນ
ທ່ານທັງຫຼາຍປາຖະໜາຢູ່ວ່າ

"ຂໍຄວາມເປັນຜູ້ດື້ດ້ານຢ່າໄດ້ມີແກ່ເຮົາທັງຫຼາຍ"
ບຸກຄົນຜູ້ປາສະຈາກຄວາມໂກດ ບໍ່ມີຄວາມຄັບແຄ້ນໃຈ
ປາສະຈາກຄວາມໂລບ ບໍ່ມີຄວາມຣິດສະຫຍາ
ເຝິກຝົນຕົນແລ້ວ ລະຄວາມໂກດໄດ້ແລ້ວ
ເປັນຜູ້ບໍ່ມີອາສະວະ ປະຣິນິບພານ

**ໂກທະນະສູດທີ ໑໑ ຈົບ**

**ອັບພະຍາກະຕະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໗. ມະຫາວັກ

## ໝວດວ່າດ້ວຍເລື້ອງໃຫຍ່

# ໑. ຫິຣິໂອດຕັບປະສູດ

## ວ່າດ້ວຍຜົນແຫ່ງຫິຣິແລະໂອດຕັບປະ

[໖໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເມື່ອຫິຣິແລະໂອດຕັບປະບໍ່ມີ ອິນຊີສັງວອນຂອງບຸກຄົນຜູ້ມີຫິຣິ ແລະໂອດຕັບປະວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອອິນຊີສັງວອນບໍ່ມີ ສີນຂອງບຸກຄົນຜູ້ມີອິນຊີສັງວອນວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອສີນບໍ່ມີ ສຳມາສະມາທິຂອງບຸກຄົນຜູ້ມີສີນວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາ ແລະວິຣາຄະຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອນິບພິທາ ແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາ ແລະວິຣາຄະວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ

ພິກຂຸທັງຫຼາຍ ຕົ້ນໄມ້ທີ່ມີງ່າ ແລະໃບວິບັດແລ້ວ ສະເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນ ແມ່ນສັນໃດ ພິກຂຸທັງຫຼາຍ ເມື່ອຫິຣິ ແລະໂອດຕັບປະ ບໍ່ມີອິນຊີສັງວອນຂອງບຸກຄົນຜູ້ມີຫິຣິ ແລະໂອດຕັບປະວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ຯລຯ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາ ແລະວິຣາຄະວິບັດ ຊື່ວ່າ ມີເຫດຖືກກຳຈັດແລ້ວ ສັນນັ້ນຄືກັນ

ພິກຂຸທັງຫຼາຍ ເມື່ອຫິຣິ ແລະໂອດຕັບປະມີ ອິນຊີສັງວອນຂອງບຸກຄົນຜູ້ສົມບູນດ້ວຍຫິຣິ ແລະໂອດຕັບປະ ຊື່ວ່າ ມີເຫດສົມບູນ ເມື່ອອິນຊີສັງວອນມີ ສີນຂອງບຸກຄົນຜູ້ສົມບູນດ້ວຍອິນຊີສັງວອນ ຊື່ວ່າ ມີເຫດສົມບູນ ເມື່ອສີນມີ ສຳມາສະມາທິຂອງບຸກຄົນສົມບູນດ້ວຍສີນ ຊື່ວ່າ ມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິ ຊື່ວ່າ ມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາ ແລະວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະ ຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາ ແລະວິຣາຄະ ຊື່ວ່າ ມີເຫດສົມບູນ

ພິກຂຸທັງຫຼາຍ ຕົ້ນໄມ້ທີ່ມີງ່າ ແລະໃບສົມບູນ ສະເກັດ ເປືອກ ນອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມເຖິງຄວາມບໍລິບູນ ແມ່ນສັນໃດ ພິກຂຸທັງຫຼາຍ ເມື່ອຫິຣິ ແລະໂອດຕັບປະມີ ອິນຊີສັງວອນຂອງບຸກຄົນຜູ້ສົມບູນດ້ວຍຫິຣິ ແລະໂອດຕັບປະ ຊື່ວ່າ ມີເຫດສົມບູນ ຯລຯ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາ ແລະວິຣາຄະ ຊື່ວ່າ ມີເຫດສົມບູນ ສັນນັ້ນຄືກັນ

**ຫິຣິໂອດຕັບປະສູດທີ ໑ ຈົບ**

# ໘. ສັດຕະສຸຣິຍະສູດ

## ວ່າດ້ວຍດວງອາທິດ ໗ ດວງ

[໖໒] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ອັມພະປາລີວັນ ເຂດເມືອງເວສາລີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ “ພິກຂຸທັງຫຼາຍ” ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ສັງຂານທັງຫຼາຍເປັນສະພາວະບໍ່ທ່ຽງ ບໍ່ຍັ້ງຍືນ ບໍ່ໜ້າຊື່ນຊົມ ນີ້ເປັນຂໍ້ກຳນົດຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນລຸດພົ້ນໃນສັງຂານທັງປວງ

ພິກຂຸທັງຫຼາຍ ຂຸນເຂົາສິເນຣຸ ຍາວ ໘໔,໐໐໐ ໂຍດ ກວ້າງ ໘໔,໐໐໐ ໂຍດ ຢັ່ງລົງໃນມະຫາສະມຸດ ໘໔,໐໐໐ ໂຍດ ສູງຈາກມະຫາສະມຸດຂຶ້ນໄປ ໘໔,໐໐໐ ໂຍດ ມີສະໄໝທີ່ເວລາຜ່ານໄປຍາວນານ ບາງເທື່ອບາງເວລາ ຝົນບໍ່ຕົກຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີ ເມື່ອຝົນບໍ່ຕົກ ພືຊະຄາມ ພູຕະຄາມ ແລະຕິນນະຊາດທີ່ໃຊ້ເຂົ້າຢາ ປ່າໄມ້ໃຫຍ່ ຍ່ອມເສົາ ຫ່ຽວແຫ້ງ ເປັນຢູ່ບໍ່ໄດ້ ສັນໃດ?

ສັງຂານທັງຫຼາຍກໍສັນນັ້ນ ເປັນສະພາວະບໍ່ທ່ຽງ ບໍ່ຍັ້ງຍືນ ບໍ່ໜ້າຊື່ນຊົມ ນີ້ເປັນຂໍ້ກຳນົດ ຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນລຸດພົ້ນໃນສັງຂານທັງປວງ

ມີສະໄໝທີ່ເວລາຜ່ານໄປຍາວນານ ບາງເທື່ອບາງເວລາ ມີດວງອາທິດດວງທີ ໒ ຜາກົດ ເພາະດວງອາທິດດວງທີ ໒ ຜາກົດ ແມ່ນ້ຳນ້ອຍ ໜອງນ້ຳທຸກແຫ່ງ ລະເຫີຍ ເຫືອດແຫ້ງ ບໍ່ມີນ້ຳ ສັນໃດ?

ສັງຂານທັງຫຼາຍກໍສັນນັ້ນ ເປັນສະພາວະບໍ່ທ່ຽງ ຯລຯ ຄວນລຸດພົ້ນໃນສັງຂານທັງປວງ

ມີສະໄໝທີ່ເວລາຜ່ານໄປຍາວນານ ບາງເທື່ອບາງເວລາ ມີດວງອາທິດດວງທີ ໓ ຜາກົດ ເພາະດວງອາທິດດວງທີ ໓ ຜາກົດ ແມ່ນ້ຳສາຍໃຫຍ່ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ທຸກແຫ່ງ ລະເຫີຍ ເຫືອດແຫ້ງ ບໍ່ມີນ້ຳ ສັນໃດ?

ສັງຂານທັງຫຼາຍກໍສັນນັ້ນ ເປັນສະພາວະບໍ່ທ່ຽງ ຯລຯ ຄວນລຸດພົ້ນໃນສັງຂານທັງປວງ

ມີສະໄໝທີ່ເວລາຜ່ານໄປຍາວນານ ບາງເທື່ອບາງເວລາ ມີດວງອາທິດດວງທີ ໔ ຜາກົດ ເພາະດວງອາທິດດວງທີ ໔ ຜາກົດ ແຫຼ່ງນ້ຳໃຫຍ່ ທີ່ເປັນແດນໄຫຼມາລວມກັນຂອງແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ສະອະໂນດາດ ສະສີຫະປະປາຕະ ສະຣະຖະກະຣະ ສະກັນນະມຸນທະ ສະກຸນາລາ ສະສັດທັນ ສະມັນທາກິນີ ທຸກແຫ່ງ ລະເຫີຍ ເຫືອດແຫ້ງ ບໍ່ມີນ້ຳ ສັນໃດ

ສັງຂານທັງຫຼາຍກໍສັນນັ້ນ ເປັນສະພາວະບໍ່ທ່ຽງ ຯລຯ ຄວນລຸດພົ້ນໃນສັງຂານທັງປວງ

ມີສະໄໝທີ່ເວລາຜ່ານໄປຍາວນານ ບາງເທື່ອບາງເວລາ ມີດວງອາທິດດວງທີ ໕ ຜາກົດ ເພາະດວງອາທິດດວງທີ ໕ ຜາກົດ ນ້ຳໃນມະຫາສະມຸດເລິກ ໑໐໐ ໂຍດກໍດີ ໒໐໐ ໂຍດ ກໍດີ ໓໐໐ ໂຍດກໍດີ ໔໐໐ ໂຍດກໍດີ ໕໐໐ ໂຍດກໍດີ ໖໐໐ ໂຍດກໍດີ ໗໐໐ ໂຍດກໍດີ ລົດລົງເຫຼືອຢູ່ພຽງ ໗ ຊົ່ວຕົ້ນຕານກໍມີ ໖ ຊົ່ວຕົ້ນຕານກໍມີ ໕ ຊົ່ວຕົ້ນຕານກໍມີ ໔ ຊົ່ວຕົ້ນຕານກໍມີ ໓ ຊົ່ວຕົ້ນຕານກໍມີ ໒ ຊົ່ວຕົ້ນຕານກໍມີ ຊົ່ວຕົ້ນຕານດຽວກໍມີ ເຫຼືອຢູ່ພຽງ ໗ ຊົ່ວຄົນ ໖ ຊົ່ວຄົນ ໕ ຊົ່ວຄົນ ໔ ຊົ່ວຄົນ ໓ ຊົ່ວຄົນ ໒ ຊົ່ວຄົນ ຊົ່ວຄົນດຽວ ຊົ່ວເຄິ່ງຄົນພຽງແອວ ພຽງເຂົ່າ ພຽງແຄ່ຂໍ້ຕີນ ພິກຂຸທັງຫຼາຍ ນ້ຳໃນມະຫາສະມຸດຍັງເຫຼືອຢູ່ພຽງໃນຮອຍຕີນງົວໃນທີ່ນັ້ນ ໆ ປຽບເໝືອນໃນລະດູແລ້ງ ເມື່ອຝົນເມັດໃຫຍ່ ໆ ຕົກລົງມາ ນ້ຳເຫຼືອຢູ່ໃນຮອຍຕີນງົວໃນທີ່ນັ້ນ ໆ ເພາະດວງອາທິດດວງທີ ໕ ຜາກົດ ນ້ຳໃນ ມະຫາສະມຸດແມ່ນພຽງຂໍ້ນີ້ວກໍບໍ່ມີ ສັນໃດ

ສັງຂານທັງຫຼາຍກໍສັນນັ້ນ ເປັນສະພາວະບໍ່ທ່ຽງ ຯລຯ ຄວນລຸດພົ້ນໃນສັງຂານທັງປວງ

ມີສະໄໝທີ່ເວລາຜ່ານໄປຍາວນານ ບາງເທື່ອບາງເວລາ ມີດວງອາທິດດວງທີ ໖ ຜາກົດ ເພາະດວງອາທິດດວງທີ ໖ ຜາກົດ ແຜ່ນດິນໃຫຍ່ນີ້ ແລະຂຸນເຂົາສິເນຣຸ ຍ່ອມມີກຸ່ມຄວັນພວຍພຸ່ງຂຶ້ນ ພິກຂຸທັງຫຼາຍ ນາຍຊ່າງໝໍ້ເຜົາໝໍ້ທີ່ເຂົາປັ້ນດີແລ້ວ ຍ່ອມມີຄວັນພວຍພຸ່ງຂຶ້ນ ສັນໃດ ພິກຂຸທັງຫຼາຍ ເພາະດວງອາທິດດວງທີ ໖ ຜາກົດ ແຜ່ນດິນໃຫຍ່ນີ້ ແລະຂຸນເຂົາສິເນຣຸ ຍ່ອມມີກຸ່ມຄວັນພວຍພຸ່ງຂຶ້ນ ສັນນັ້ນ

ສັງຂານທັງຫຼາຍກໍສັນນັ້ນ ເປັນສະພາວະບໍ່ທ່ຽງ ຯລຯ ຄວນລຸດພົ້ນໃນສັງຂານທັງປວງ

ມີສະໄໝທີ່ເວລາຜ່ານໄປຍາວນານ ບາງເທື່ອບາງເວລາ ມີດວງອາທິດດວງທີ ໗ ຜາກົດ ເພາະດວງອາທິດດວງທີ ໗ ຜາກົດ ແຜ່ນດິນໃຫຍ່ນີ້ ແລະຂຸນເຂົາສິເນຣຸ ເກີດໄຟລຸກເປັນແປວ ມີແສງເພີງເປັນອັນດຽວກັນ ເມື່ອແຜ່ນດິນໃຫຍ່ນີ້ ແລະຂຸນເຂົາສິເນຣຸຖືກໄຟເຜົາຜານຢູ່ ນ້ຳໄຟຖືກລົມພັດຂຶ້ນໄປຈົນເຖິງພົມມະໂລກ ເມື່ອຂຸນເຂົາສິເນຣຸຖືກໄຟເຜົາໄໝ້ ກຳລັງພິນາດ ຖືກກອງເພີງໃຫຍ່ເຜົາທົ່ວຕະຫຼອດແລ້ວ ຍອດເຂົາແມ່ນຂະໜາດ ໑໐໐ ໂຍດ ໘໐໐ ໂຍດ ໓໐໐ ໂຍດ ໔໐໐ ໂຍດ ໕໐໐ ໂຍດ ຍ່ອມພັງທະລາຍ ເມື່ອແຜ່ນດິນໃຫຍ່ນີ້ ແລະຂຸນເຂົາ ສິເນຣຸຖືກໄຟເຜົາຜານຢູ່ ຂີ້ເຖົ່າແລະຂະເມົ່າຄວັນຍ່ອມບໍ່ຜາກົດ ພິກຂຸທັງຫຼາຍ ເມື່ອເນີຍໃສ ຫຼື ນ້ຳມັນຖືກໄຟເຜົາຜານຢູ່ ຂີ້ເຖົ່າແລະຂະເມົ່າຄວັນຍ່ອມບໍ່ຜາກົດ ສັນໃດ ເມື່ອແຜ່ນດິນໃຫຍ່ນີ້ ແລະຂຸນເຂົາສິເນຣຸຖືກໄຟເຜົາຜານຢູ່ ຂີ້ເຖົ່າແລະຂະເມົ່າຄວັນ ກໍຍ່ອມບໍ່ຜາກົດ ສັນນັ້ນ

ສັງຂານທັງຫຼາຍກໍສັນນັ້ນ ເປັນສະພາວະບໍ່ທ່ຽງ ບໍ່ຍັ້ງຍືນ ບໍ່ໜ້າຊື່ນຊົມ ນີ້ເປັນຂໍ້ກຳນົດ ຄວນເບື່ອໜ່າຍ ຄວນຄາຍກຳໜັດ ຄວນລຸດພົ້ນໃນສັງຂານທັງປວງ

ໃນຂໍ້ນັ້ນ ໃຜນໍ? ຊື່ວ່າເປັນຜູ້ຮູ້ ໃຜນໍ? ຊື່ວ່າເປັນຜູ້ເຊື່ອວ່າ "ແຜ່ນດິນໃຫຍ່ນີ້ ແລະຂຸນເຂົາສິເນຣຸຖືກໄຟເຜົາຜານ ພິນາດ ບໍ່ເຫຼືອຢູ່" ນອກຈາກອະຣິຍະສາວົກຜູ້ມີບົດອັນເຫັນແລ້ວ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ຄູຊື່ສຸເນດ ເປັນເຈົ້າລັດທິຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີສາວົກຫຼາຍຮ້ອຍຄົນ ໄດ້ສະແດງທຳແກ່ສາວົກທັງຫຼາຍ ເພື່ອຄວາມເປັນຜູ້ເກີດຮ່ວມກັບເທວະດາຊັ້ນພົມມະໂລກ ແລະເມື່ອຄູສຸເນດສະແດງທຳເພື່ອຄວາມເປັນຜູ້ເກີດຮ່ວມກັບເທວະດາຊັ້ນພົມມະໂລກ ເຫຼົ່າສາວົກຜູ້ຮູ້ແຈ້ງຄຳສອນຢ່າງດີຍິ່ງ ຫຼັງຈາກຕາຍແລ້ວ ໄດ້ໄປເກີດໃນສຸກຄະຕິພົມມະໂລກ ສ່ວນເຫຼົ່າສາວົກຜູ້ບໍ່ຮູ້ແຈ້ງຄຳສອນ ຢ່າງດີຍິ່ງ ຫຼັງຈາກຕາຍແລ້ວ ບາງພວກໄດ້ໄປເກີດຮ່ວມກັບເທວະດາຊັ້ນປະຣະນິມມິຕະວະສະວັດດີ ບາງພວກໄດ້ໄປເກີດຮ່ວມກັບເທວະດາຊັ້ນນິມມານະຣະດີ ບາງພວກໄດ້ໄປເກີດຮ່ວມກັບເທວະດາຊັ້ນດຸສິດ ບາງພວກໄດ້ໄປເກີດຮ່ວມກັບເທວະດາຊັ້ນຈາຕຸມະຫາຣາດ ບາງພວກໄດ້ໄປເກີດຮ່ວມກັບຂັດຕິຍະມະຫາສານ ບາງພວກໄດ້ໄປເກີດຮ່ວມກັບພາມມະນະມະຫາສານ ບາງພວກໄດ້ໄປເກີດຮ່ວມກັບຄະຫະບໍດີມະຫາສານ

ຄັ້ງນັ້ນແລ ຄູສຸເນດໄດ້ມີຄວາມຄິດຢ່າງນີ້ວ່າ "ການທີ່ເຮົາມີຄະຕິໃນສຳປະຣາຍະພົບສະເໝີເໝືອນກັບເຫຼົ່າສາວົກ ບໍ່ສົມຄວນເລີຍ ທາງທີ່ດີ ເຮົາຄວນຈະເລີນເມດຕາໃຫ້ຍິ່ງຂຶ້ນ"

ຕໍ່ຈາກນັ້ນ ຄູສຸເນດໄດ້ຈະເລີນເມດຕາຈິດຕະຫຼອດ ໗ ປີ ແລ້ວບໍ່ມາສູ່ໂລກນີ້ຕະຫຼອດ ໗ ສັງວັດຕະກັບ ແລະວິວັດຕະກັບ ພິກຂຸທັງຫຼາຍ ເມື່ອໂລກເສື່ອມ ຄູສຸເນດເຂົ້າເຖິງພົມມະໂລກຊັ້ນອາພັດສະ ເມື່ອໂລກຈະເລີນຄູສຸເນດເຂົ້າເຖິງພົມວິມານອັນວ່າງເປົ່າ

ພິກຂຸທັງຫຼາຍ ໃນພົມວິມານນັ້ນ ຄູສຸເນດເປັນພົມ ເປັນມະຫາພົມ ເປັນຜູ້ຄອບງຳ ບໍ່ແມ່ນຖືກໃຜໆ ຄອບງຳ ເປັນຜູ້ເຫັນແນ່ນອນ ມີອຳນາດ ຄູສຸເນດໄດ້ເປັນທ້າວສັກກະ ຜູ້ເປັນຈອມເທບເຖິງ ໓໖ ຄັ້ງ ໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ເປັນທຳຣາຊາ ມີມະຫາສະມຸດທັງ ໔ ເປັນຂອບເຂດ ເປັນຜູ້ຊະນະສົງຄາມ ມີຊົນນະບົດທີ່ເຖິງຄວາມໝັ້ນຄົງ ປະກອບດ້ວຍຣັດຕະນະ ໗ ປະການ ຕັ້ງຫຼາຍຮ້ອຍຄັ້ງ ຄູສຸເນດເຄີຍມີ ບຸດຫຼາຍກວ່າພັນຄົນ ລ້ວນແຕ່ເປັນຄົນກ້າຫານຊານໄຊ ຍ່ຳຍີຂ້າເສິກໄດ້ ຄູສຸເນດນັ້ນປົກຄອງແຜ່ນດິນນີ້ອັນມີມະຫາສະມຸດເປັນຂອບເຂດ ໂດຍທຳ ໂດຍບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງ ໃຊ້ອາວຸດ

ພິກຂຸທັງຫຼາຍ ຄູສຸເນດນັ້ນເປັນຜູ້ມີອາຍຸຍືນຍາວຢ່າງນີ້ ເປັນຜູ້ດຳຣົງຢູ່ໄດ້ນານຢ່າງນີ້ ແຕ່ກໍບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ເຮົາຈຶ່ງກ່າວວ່າ ບໍ່ລຸດພົ້ນຈາກທຸກ

ຂໍ້ນັ້ນ ເພາະເຫດໃດ ເພາະບໍ່ຮູ້ແຈ້ງແທງຕະຫຼອດທຳ ໔ ປະການ

ທຳ ໔ ປະການ ອັນໃດແດ່ ຄື

໑. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສີນ
໒. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ
໓. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະປັນຍາ
໔. ເພາະບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ

ພິກຂຸທັງຫຼາຍ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສີນ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະສະມາທິ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະປັນຍາ ເຮົາໄດ້ຮູ້ແຈ້ງແທງຕະຫຼອດອະຣິຍະວິມຸດຕິ ເຮົາຖອນພະວະຕັນຫາໄດ້ແລ້ວ ພະວະເນດຕິ°ສິ້ນໄປແລ້ວ ບັດນີ້ພົບໃໝ່ບໍ່ມີອີກ

ພຣະຜູ້ມີພຣະພາກເຈົ້າຜູ້ພຣະສຸຄົດສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ພຣະໂຄດົມຜູ້ມີຍົດຕັດສະຮູ້ທຳເຫຼົ່ານີ້ ຄື
ສີນ ສະມາທິ ປັນຍາ ແລະວິມຸດຕິອັນປະເສີດ
ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຕັດບອກທຳ
ແກ່ພິກຂຸທັງຫຼາຍເພື່ອຄວາມຮູ້ຍິ່ງ
ພຣະສາດສະດາຜູ້ມີພຣະຈັກຂຸຊົງເຮັດບ່ອນສຸດແຫ່ງທຸກ ປະຣິນິບພານແລ້ວ

**ສັດຕະສຸຣິຍະສູດທີ ໘ ຈົບ**

# ໓. ນະຄະໂຣປະມະສູດ

## ວ່າດ້ວຍທຳປຽບດ້ວຍເຄື່ອງປ້ອງກັນນະຄອນ

[໖໗] ພິກຂຸທັງຫຼາຍ ໃນກາລໃດ ປັດຈັນຕະນະຄອນ (ເມືອງຊາຍແດນ) ຂອງພຣະຣາຊາ ເປັນນະຄອນທີ່ປ້ອງກັນໄວ້ດີດ້ວຍເຄື່ອງປ້ອງກັນນະຄອນ ໗ ປະກາລ ແລະໄດ້ອາຫານ ໔ ຢ່າງ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ໃນກາລນັ້ນ ເຮົາຈຶ່ງຮຽກປັດຈັນຕະນະຄອນຂອງພຣະຣາຊານີ້ວ່າ ສັດຕູໝູ່ປັດຈາມິດພາຍນອກເຮັດຫຍັງບໍ່ໄດ້ ປັດຈັນຕະນະຄອນຊື່ວ່າ ປ້ອງກັນດີດ້ວຍເຄື່ອງປ້ອງກັນນະຄອນ ໗ ປະກາລ ອັນໃດແດ່ ຄື

໑. ປັດຈັນຕະນະຄອນຂອງພຣະຣາຊາມີເສົາຣະນຽດຂຸດຂຸມຝັງເລິກໄວ້ເປັນຢ່າງດີ ບໍ່ຫວັ່ນໄຫວ ບໍ່ຄອນແຄນ ປັດຈັນຕະນະຄອນຂອງພຣະຣາຊາຊື່ວ່າປ້ອງກັນດີ ເພື່ອຄຸ້ມກັນໄພພາຍໃນແລະປ້ອງກັນອັນຕະລາຍພາຍນອກ ດ້ວຍເຄື່ອງປ້ອງກັນນະຄອນປະກາລທີ ໑ ນີ້

໒. ປັດຈັນຕະນະຄອນຂອງພຣະຣາຊາມີຄູຄອງເລິກແລະກວ້າງ ປັດຈັນຕະນະຄອນຂອງພຣະຣາຊາ ຊື່ວ່າປ້ອງກັນດີເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ດ້ວຍເຄື່ອງປ້ອງກັນນະຄອນປະກາລທີ ໒ ນີ້

໓. ປັດຈັນຕະນະຄອນຂອງພຣະຣາຊາມີທາງຍ່າງໄດ້ຮອບ ທັງສູງແລະກວ້າງ ປັດຈັນຕະ ນະຄອນຂອງພຣະຣາຊາຊື່ວ່າປ້ອງກັນດີ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ດ້ວຍເຄື່ອງປ້ອງກັນນະຄອນປະກາລທີ ໓ ນີ້

໔. ປັດຈັນຕະນະຄອນຂອງພຣະຣາຊາມີການສະສົມອາວຸດໄວ້ຫຼາຍ ທັງທີ່ເປັນອາວຸດແຫຼມຍາວແລະອາວຸດມີຄົມ ປັດຈັນຕະນະຄອນຂອງພຣະຣາຊາຊື່ວ່າປ້ອງ

ກັນດີ ເພື່ອຄຸ້ມກັນໄພພາຍໃນແລະປ້ອງກັນອັນຕະລາຍພາຍນອກ ດ້ວຍເຄື່ອງປ້ອງກັນນະຄອນປະການທີ ໔ ນີ້

໕. ປັດຈັນຕະນະຄອນຂອງພຣະຣາຊາມີກອງພົນຕັ້ງອາໄສຢູ່ຫຼາຍ ຄື ພົນຊ້າງ ພົນມ້າ ພົນລົດ ພົນທະນູ ໜ່ວຍເຊີນທຸງ ໜ່ວຍຈັດກະບວນທັບ ໜ່ວຍພະລາທິການ ໜ່ວຍເສນາທິການ ໜ່ວຍຈູ່ໂຈມ ໜ່ວຍທະຫານກ້າ ໜ່ວຍກ້າຕາຍ ໜ່ວຍທະຫານເກາະໜັງ ໜ່ວຍທະຫານທາດ ປັດຈັນຕະນະຄອນຂອງພຣະຣາຊາຊື່ວ່າປ້ອງກັນດີ ເພື່ອຄຸ້ມກັນໄພພາຍໃນແລະປ້ອງກັນອັນຕະລາຍພາຍນອກ ດ້ວຍເຄື່ອງປ້ອງກັນນະຄອນປະການທີ ໕ ນີ້

໖. ປັດຈັນຕະນະຄອນຂອງພຣະຣາຊາມີທະຫານຍາມສະຫຼາດ ສຽບແຫຼມ ມີປັນຍາຄອຍຖ້າກັນຄົນທີ່ບໍ່ຮູ້ຈັກບໍ່ໃຫ້ເຂົ້າໄປ ໃຫ້ຄົນທີ່ຮູ້ຈັກເຂົ້າໄປ ປັດຈັນຕະນະຄອນຂອງພຣະຣາຊາຊື່ວ່າປ້ອງກັນດີ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ດ້ວຍເຄື່ອງປ້ອງກັນນະຄອນປະການທີ ໖ ນີ້

໗. ປັດຈັນຕະນະຄອນຂອງພຣະຣາຊາມີກຳແພງສູງແລະກວ້າງ ພ້ອມດ້ວຍປ້ອມກໍ່ດິນຈີ່ ໂບກປູນປັດຈັນຕະນະຄອນຂອງພຣະຣາຊາຊື່ວ່າປ້ອງກັນດີ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ດ້ວຍເຄື່ອງປ້ອງກັນນະຄອນປະການທີ ໗ ນີ້

ອາຫານ ໔ ຢ່າງທີ່ໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກມີອັນໃດແດ່ ຄື

໑. ປັດຈັນຕະນະຄອນຂອງພຣະຣາຊານີ້ ມີການສະສົມຫຍ້າ ໄມ້ ແລະນ້ຳໄວ້ຫຼາຍ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງປະຊາຊົນພາຍໃນ ແລະເພື່ອປ້ອງກັນອັນຕະລາຍພາຍນອກ

໒. ປັດຈັນຕະນະຄອນຂອງພຣະຣາຊາ ມີການສະສົມເຂົ້າສາລີ ແລະເຂົ້າໜຽວໄວ້ຫຼາຍ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກ ຂອງປະຊາຊົນພາຍໃນ ແລະເພື່ອປ້ອງກັນອັນຕະລາຍພາຍນອກ

໓. ປັດຈັນຕະນະຄອນຂອງພຣະຣາຊາ ມີການສະສົມປະຣັນນະຊາດ ຄື ງາ ຖົ່ວຂຽວ ຖົ່ວເຫຼືອງໄວ້ຫຼາຍ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງປະຊາຊົນພາຍໃນ ແລະເພື່ອປ້ອງກັນອັນຕະລາຍພາຍນອກ

໔. ປັດຈັນຕະນະຄອນຂອງພຣະຣາຊາ ມີການສະສົມເພສັດ ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍ ເກືອ ໄວ້ຫຼາຍ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງປະຊາຊົນພາຍໃນ ແລະເພື່ອປ້ອງກັນອັນຕະລາຍພາຍນອກ

ພິກຂຸທັງຫຼາຍ ອາຫານ ໔ ຢ່າງນີ້ແລ ທີ່ໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ພິກຂຸທັງຫຼາຍ ໃນການໃດ ປັດຈັນຕະນະຄອນຂອງພຣະຣາຊາເປັນນະຄອນປ້ອງກັນໄວ້ດີ ດ້ວຍເຄື່ອງປ້ອງກັນນະຄອນ ໗ ປະການນີ້ ແລະໄດ້ອາຫານ ໔ ປະການນີ້ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ໃນການນັ້ນ ເຮົາຈຶ່ງຮຽກປັດຈັນຕະນະຄອນຂອງພຣະຣາຊານີ້ວ່າ ສັດຕູໝູ່ປັດຈາມິດພາຍນອກເຮັດຫຍັງບໍ່ໄດ້

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ໃນການໃດ ອະຣິຍະສາວົກປະກອບດ້ວຍສັດທຳ ໗ ປະການ ແລະໄດ້ຊານ ໔ ປະການ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ໃນການນັ້ນ ເຮົາຈຶ່ງຮຽກອະຣິຍະສາວົກນີ້ວ່າ ມານຜູ້ມີບາບກໍເຮັດຫຍັງບໍ່ໄດ້

ອະຣິຍະສາວົກປະກອບດ້ວຍສັດທຳ ໗ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກເປັນຜູ້ມີສັດທາ ຄືເຊື່ອປັນຍາເຄື່ອງຕັດສະຮູ້ຂອງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ປຽບເໝືອນປັດຈັນຕະນະຄອນຂອງພຣະຣາຊາ ມີເສົາຣະນຽດຂຸດຂຸມຝັງເລິກໄວ້ເປັນຢ່າງດີ ບໍ່ຫວັ່ນໄຫວ ບໍ່ຄອນແຄນ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ພິກຂຸທັງຫຼາຍ ອະຣິຍະສາວົກເປັນຜູ້ມີສັດທາເໝືອນເສົາຣະນຽດ ຍ່ອມລະອະກຸສົນ ຈະເລີນກຸສົນ ລະທຳທີ່ມີໂທດ ຈະເລີນທຳທີ່ບໍ່ມີໂທດ ບໍລິຫານຕົນໃຫ້ບໍລິສຸດ ອະຣິຍະສາວົກປະກອບດ້ວຍສັດທຳປະການທີ ໑ ນີ້

໒. ອະຣິຍະສາວົກເປັນຜູ້ມີຫິຣິ ຄື ລະອາຍຕໍ່ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ລະອາຍຕໍ່ການປະກອບບາບອະກຸສົນທຳ ປຽບເໝືອນປັດຈັນຕະນະຄອນ ຂອງພຣະຣາຊາ ມີຄູເລິກແລະກວ້າງ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ມີຫິຣິເໝືອນຄູຄອງ ຍ່ອມລະອະກຸສົນ ຈະເລີນກຸສົນ ລະທຳທີ່ມີໂທດ ຈະເລີນທຳທີ່ບໍ່ມີ

ໂທດ ບໍລິຫານຕົນໃຫ້ບໍລິສຸດ ອະຣິຍະສາວົກປະກອບດ້ວຍສັດທຳປະການທີ ໔ ນີ້

໖. ອະຣິຍະສາວົກເປັນຜູ້ມີໂອດຕັບປະ ຄື ສະດຸ້ງຢ້ານຕໍ່ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ສະດຸ້ງຢ້ານຕໍ່ການປະກອບບາບອະກຸສົນທຳ ປຽບເໝືອນ ປັດຈັນຕະນະຄອນຂອງພຣະຣາຊາ ມີທາງເດີນໄດ້ຮອບ ທັງສູງແລະກວ້າງ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ມີໂອດຕັບປະເໝືອນທາງເດີນຮອບກຳແພງ ຍ່ອມລະອະກຸສົນ ຈະເລີນກຸສົນ ລະທຳທີ່ມີໂທດ ຈະເລີນທຳທີ່ບໍ່ມີໂທດ ບໍລິຫານຕົນໃຫ້ບໍລິສຸດ ອະຣິຍະສາວົກປະກອບດ້ວຍສັດທຳປະການທີ ໖ ນີ້

໔. ອະຣິຍະສາວົກເປັນພະຫູສູດ ໆລໆ ແທງຕະຫຼອດດີດ້ວຍທິດຖິ ປຽບເໝືອນ ປັດຈັນຕະ ນະຄອນຂອງພຣະຣາຊາ ມີການສະສົມອາວຸດໄວ້ຫຼາຍ ທັງທີ່ເປັນອາວຸດແຫຼມຍາວແລະອາວຸດມີຄົມ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ມີສຸຕະ ເໝືອນອາວຸດ ຍ່ອມລະອະກຸສົນ ຈະເລີນກຸສົນ ລະທຳທີ່ມີໂທດ ຈະເລີນທຳທີ່ບໍ່ມີໂທດ ບໍລິຫານຕົນໃຫ້ບໍລິສຸດ ອະຣິຍະສາວົກປະກອບດ້ວຍສັດທຳປະການທີ ໔ ນີ້

໕. ອະຣິຍະສາວົກເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳທັງຫຼາຍຢູ່ ປຽບເໝືອນປັດຈັນຕະນະຄອນຂອງພຣະຣາຊາ ມີກອງພົນຕັ້ງອາໄສຢູ່ຫຼາຍ ຄື ພົນຊ້າງ ພົນມ້າ ພົນລົດ ພົນທະນູ ໜ່ວຍເຊີນທຸງ ໜ່ວຍຈັດກະບວນທັບ ໜ່ວຍພະລາທິການ ໜ່ວຍເສນາທິການ ໜ່ວຍຈູ່ໂຈມ ໜ່ວຍທະຫານກ້າ ໜ່ວຍກ້າຕາຍ ໜ່ວຍທະຫານເກາະໜັງ ໜ່ວຍທະຫານທາດ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ພິກຂຸທັງຫຼາຍ ອະຣິຍະສາວົກມີຄວາມພຽນ ເໝືອນກອງທັບ ຍ່ອມລະອະກຸສົນ ຈະເລີນກຸສົນ ລະທຳທີ່ມີໂທດ ຈະເລີນທຳທີ່ບໍ່ມີໂທດ ບໍລິຫານຕົນໃຫ້ບໍລິສຸດ ອະຣິຍະສາວົກປະກອບດ້ວຍສັດທຳປະການທີ ໕ ນີ້

໖. ອະຣິຍະສາວົກເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາເຄື່ອງຮັກສາຕົນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດ ຄຳທີ່ເວົ້າແມ່ນຜ່ານໄປດົນແລ້ວໄດ້ ປຽບເໝືອນປັດຈັນຕະນະຄອນຂອງພຣະຣາຊາ ມີທະຫານຍາມສະຫຼາດສຸຂຸມ ມີປັນຍາ ຄອຍຖ້າກັນຄົນທີ່ບໍ່ຮູ້ຈັກບໍ່ໃຫ້ເຂົ້າໄປ ໃຫ້ຄົນທີ່ຮູ້ຈັກ ເຂົ້າໄປ ເພື່ອຄຸ້ມກັນໄພ

ພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ມີສະຕິເໝືອນທະຫານຍາມ ຍ່ອມລະອະກຸສົນ ຈະເລີນກຸສົນ ລະທຳທີ່ມີໂທດ ຈະເລີນທຳທີ່ບໍ່ມີໂທດ ບໍລິຫານຕົນໃຫ້ບໍລິສຸດ ອະຣິຍະສາວົກປະກອບດ້ວຍສັດທຳປະການທີ ຜ ນີ້

ກ. ອະຣິຍະສາວົກກໍສັນນັ້ນຄືກັນ ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ປຽບເໝືອນປັດຈັນຕະນະຄອນຂອງພຣະຣາຊາ ມີກຳແພງສູງແລະກວ້າງ ພ້ອມດ້ວຍປ້ອມກໍ່ດິນຈີ່ໂບກປູນດີ ເພື່ອຄຸ້ມກັນໄພພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ ພິກຂຸທັງຫຼາຍ ອະຣິຍະສາວົກເຖິງພ້ອມດ້ວຍປັນຍາເໝືອນປ້ອມທີ່ກໍ່ດິນຈີ່ໂບກປູນດີ ຍ່ອມລະອະກຸສົນ ຈະເລີນກຸສົນ ລະທຳທີ່ມີໂທດ ຈະເລີນທຳທີ່ບໍ່ມີໂທດ ບໍລິຫານຕົນໃຫ້ບໍລິສຸດ ອະຣິຍະສາວົກປະກອບດ້ວຍສັດທຳປະການທີ ກ ນີ້

ພິກຂຸທັງຫຼາຍ ອະຣິຍະສາວົກປະກອບດ້ວຍສັດທຳ ກ ປະການນີ້

ຊານ ໔ ປະການ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ທີ່ອະຣິຍະສາວົກໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ອັນໃດແດ່ ຄື

໑. ອະຣິຍະສາວົກສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວບັນລຸປະຖົມຊານ ຯລຯ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງຕົນ ເພື່ອກ້າວລົງສູ່ນິບພານ ປຽບເໝືອນປັດຈັນຕະນະຄອນຂອງພຣະຣາຊາ ມີການສະສົມຫຍ້າ ໄມ້ ແລະນ້ຳໄວ້ຫຼາຍເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງປະຊາຊົນພາຍໃນ ແລະເພື່ອປ້ອງກັນອັນຕະລາຍພາຍນອກ

໒. ອະຣິຍະສາວົກ ເພາະວິຕົກວິຈານສະງົບຣະງັບໄປ ບັນລຸທຸຕິຍະຊານ ຯລຯ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງຕົນ ເພື່ອກ້າວລົງສູ່ນິບພານ ປຽບເໝືອນ ປັດຈັນຕະ ນະຄອນຂອງພຣະຣາຊາ ມີການສະສົມເຂົ້າສາລີແລະເຂົ້າໜຽວໄວ້ຫຼາຍເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງປະຊາຊົນພາຍໃນ ແລະເພື່ອປ້ອງກັນອັນຕະລາຍພາຍນອກ

໓. ອະຣິຍະສາວົກ ເພາະປີຕິຄາຍອອກ ບັນລຸຕະຕິຍະຊານ ຯລຯ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງຕົນ ເພື່ອກ້າວລົງສູ່ນິບພານ ປຽບເໝືອນປັດຈັນຕະ ນະຄອນຂອງພຣະຣາຊາ ມີການສະສົມປະຣັນນະຊາດ ຄື ງາ ຖົ່ວຂຽວ ຖົ່ວເຫຼືອງ ໄວ້ຫຼາຍເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງປະຊາຊົນພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ

໔. ອະຣິຍະສາວົກ ເພາະລະສຸກແລະທຸກໄດ້ ເພາະໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ຯລຯ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງຕົນ ເພື່ອກ້າວລົງສູ່ນິບພານ ປຽບເໝືອນປັດຈັນຕະນະຄອນຂອງພຣະຣາຊາ ມີການສະສົມເພສັດ ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍ ເກືອ ໄວ້ຫຼາຍ ເພື່ອຄວາມອຸ່ນໃຈ ເພື່ອຄວາມບໍ່ສະດຸ້ງຢ້ານ ເພື່ອຄວາມຢູ່ຜາສຸກຂອງປະຊາຊົນພາຍໃນ ແລະປ້ອງກັນອັນຕະລາຍພາຍນອກ

ຊານ ໔ ປະການນີ້ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ທີ່ອະຣິຍະສາວົກໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ພິກຂຸທັງຫຼາຍ ໃນການໃດ ອະຣິຍະສາວົກປະກອບດ້ວຍສັດທຳ ໗ ປະການນີ້ ແລະໄດ້ຊານ ໔ ປະການ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນນີ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ພິກຂຸທັງຫຼາຍ ໃນການນັ້ນ ເຮົາຈຶ່ງຮຽກອະຣິຍະສາວົກນີ້ວ່າມານຜູ້ມີບາບກໍເຮັດຫຍັງບໍ່ໄດ້

**ນະຄະໂຣປະມະສູດທີ ໓ ຈົບ**

# ໔. ທຳມັນຍະສູດ

## ວ່າດ້ວຍບຸກຄົນຜູ້ຮູ້ທຳ

[໖໕] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນທຳມັນຍູ

໒. ເປັນອັດຖັນຍູ

໓. ເປັນອັດຕັນຍູ

໔. ເປັນມັດຕັນຍູ

໕. ເປັນກາລັນຍູ

໖. ເປັນປະຣິສັນຍູ

໗. ເປັນປຸກຄະລະປະໂຣປະຣັນຍູ

ພິກຂຸເປັນທຳມັນຍູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ທຳຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ຫາກພິກຂຸບໍ່ຮູ້ທຳຄື ສຸດຕະ ຯລຯ ເວທັນລະເລີຍ ເຮົາບໍ່ເພິ່ງຮຽກທ່ານວ່າເປັນທຳມັນຍູໃນທີ່ນີ້ ແຕ່ເພາະພິກຂຸຮູ້ທຳຄື ສຸດຕະ ຯລຯ ເວທັນລະ ສະນັ້ນ ເຮົາຈຶ່ງຮຽກທ່ານວ່າເປັນທຳມັນຍູ ພິກຂຸຊື່ວ່າເປັນທຳມັນຍູ ດ້ວຍປະການດັ່ງນີ້

ພິກຂຸເປັນອັດຖັນຍູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ຄວາມໝາຍແຫ່ງພາສິດນັ້ນ ໆ ນັ້ນແລວ່າ “ນີ້ເປັນຄວາມໝາຍແຫ່ງພາສິດນີ້ ນີ້ເປັນຄວາມໝາຍແຫ່ງພາສິດນີ້” ຫາກພິກຂຸບໍ່ຮູ້ເນື້ອຄວາມແຫ່ງພາສິດນັ້ນ ໆ ເລີຍວ່າ “ນີ້ເປັນຄວາມໝາຍແຫ່ງພາສິດນີ້ ນີ້ເປັນຄວາມໝາຍແຫ່ງພາສິດນີ້” ເຮົາບໍ່ເພິ່ງຮຽກທ່ານວ່າ “ເປັນອັດຖັນຍູ”ໃນທີ່ນີ້ ແຕ່ເພາະພິກຂຸຮູ້ຄວາມໝາຍແຫ່ງພາສິດນັ້ນ ໆ ວ່າ “ນີ້ເປັນຄວາມໝາຍແຫ່ງພາສິດນີ້ ນີ້ເປັນຄວາມໝາຍແຫ່ງພາສິດນີ້” ສະນັ້ນ ເຮົາຈຶ່ງຮຽກທ່ານວ່າ ເປັນອັດຖັນຍູ ພິກຂຸຊື່ວ່າເປັນທຳມັນຍູ ອັດຖັນຍູ ດ້ວຍປະການດັ່ງນີ້

ພິກຂຸເປັນອັດຕັນຍູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ຈັກຕົນວ່າ “ໂດຍສັດທາ ສີນ ສຸຕະ ຈາຄະ ປັນຍາ ປະຕິພານ ເຮົາມີຢູ່ປະມານເທົ່ານີ້” ຫາກພິກຂຸບໍ່ຮູ້ຈັກຕົນວ່າ “ໂດຍສັດທາ ສີນ ສຸຕະ ຈາຄະ ປັນຍາ ປະຕິພານ ເຮົາມີ ຢູ່ປະມານເທົ່ານີ້” ເຮົາບໍ່ເພິ່ງຮຽກທ່ານວ່າເປັນອັດຕັນຍູ ໃນທີ່ນີ້ ແຕ່ເພາະພິກຂຸຮູ້ຈັກຕົນວ່າ “ໂດຍສັດທາ ສີນ ສຸຕະ ຈາຄະ ປັນຍາ ປະຕິພານ ເຮົາມີຢູ່ປະມານເທົ່ານີ້” ສະນັ້ນ ເຮົາຈຶ່ງຮຽກທ່ານວ່າ ເປັນອັດຕັນຍູ ພິກຂຸ ຊື່ວ່າເປັນທຳມັນຍູ ອັດຖັນຍູ ອັດຕັນຍູ ດ້ວຍປະການດັ່ງນີ້

ພິກຂຸເປັນມັດຕັນຍູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ຈັກປະມານໃນການຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ຫາກພິກຂຸບໍ່ຮູ້ຈັກປະມານໃນການຮັບຈີວອນ ບິນທະບາດ ເສນາ

ສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ເຮົາບໍ່ເພິ່ງຮຽກທ່ານວ່າເປັນມັດຕັນຍູໃນທີ່ນີ້ ແຕ່ເພາະພິກຂຸຮູ້ຈັກປະມານໃນການຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ສະນັ້ນ ເຮົາຈຶ່ງຮຽກທ່ານວ່າເປັນມັດຕັນຍູ ພິກຂຸຊື່ວ່າເປັນທຳມັນຍູ ອັດຖັນຍູ ອັດຕັນຍູ ມັດຕັນຍູ ດ້ວຍປະການດັ່ງນີ້

ພິກຂຸເປັນກາລັນຍູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ຈັກການວ່າ "ນີ້ເປັນການແຫ່ງອຸດເທດ ນີ້ເປັນການແຫ່ງປະຣິປຸດສາ ນີ້ເປັນການພ່ຳເພັງພຽນ ນີ້ເປັນການຫຼີບຫຼີກ" ຫາກພິກຂຸບໍ່ຮູ້ຈັກການວ່າ "ນີ້ເປັນການແຫ່ງອຸດເທດ ນີ້ເປັນການແຫ່ງປະຣິປຸດສາ ນີ້ເປັນການພ່ຳເພັງພຽນ ນີ້ເປັນການຫຼີບຫຼີກ" ເຮົາບໍ່ຮຽກທ່ານວ່າເປັນກາລັນຍູໃນທີ່ນີ້ ແຕ່ເພາະພິກຂຸຮູ້ຈັກການວ່າ "ນີ້ເປັນການແຫ່ງອຸດເທດ ນີ້ເປັນການແຫ່ງປະຣິປຸດສາ ນີ້ເປັນການພ່ຳເພັງພຽນ ນີ້ເປັນການຫຼີບຫຼີກ" ສະນັ້ນ ເຮົາຈຶ່ງຮຽກທ່ານວ່າເປັນກາລັນຍູ ພິກຂຸຊື່ວ່າເປັນທຳມັນຍູ ອັດຖັນຍູ ອັດຕັນຍູ ມັດຕັນຍູ ກາລັນຍູ ດ້ວຍປະການດັ່ງນີ້

ພິກຂຸເປັນປະຣິສັນຍູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ຈັກບໍລິສັດວ່າ "ນີ້ຂັດຕິຍະບໍລິສັດ ນີ້ພາມມະນະບໍລິສັດ ນີ້ຄະຫະບໍດີບໍລິສັດ ນີ້ສະມະນະບໍລິສັດ ໃນບໍລິສັດນັ້ນເຮົາຄວນເຂົ້າໄປຫາຢ່າງນີ້ ຄວນຢືນຢ່າງນີ້ ຄວນເຮັດຢ່າງນີ້ ຄວນນັ່ງຢ່າງນີ້ ຄວນກ່າວຢ່າງນີ້ ຄວນສະງົບນິ່ງຢ່າງນີ້" ຫາກພິກຂຸ ບໍ່ຮູ້ຈັກບໍລິສັດວ່າ "ນີ້ຂັດຕິຍະບໍລິສັດ ຯລຯ ຄວນສະງົບນິ່ງຢ່າງນີ້" ເຮົາບໍ່ຮຽກທ່ານວ່າເປັນ ປະຣິສັນຍູໃນທີ່ນີ້ ແຕ່ເພາະພິກຂຸຮູ້ຈັກບໍລິສັດວ່າ "ນີ້ຂັດຕິຍະບໍລິສັດ ຯລຯ ຄວນສະງົບນິ່ງ ຢ່າງນີ້" ສະນັ້ນ ເຮົາຈຶ່ງຮຽກທ່ານວ່າເປັນປະຣິສັນຍູ ພິກຂຸຊື່ວ່າ ເປັນທຳມັນຍູ ອັດຖັນຍູ ອັດຕັນຍູ ມັດຕັນຍູ ກາລັນຍູ ປະຣິສັນຍູ ດ້ວຍປະການດັ່ງນີ້

ພິກຂຸເປັນປຸກຄະລະປະໂຣປະຣັນຍູ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ຈັກບຸກຄົນ ໒ ຈຳພວກ ບຸກຄົນ ໒ ຈຳພວກ ຄື ພວກໜຶ່ງຕ້ອງການເຫັນພຣະອະຣິຍະ ອີກພວກໜຶ່ງບໍ່ຕ້ອງການເຫັນພຣະອະຣິຍະ ບຸກຄົນພວກທີ່ບໍ່ຕ້ອງການ ເຫັນພຣະອະຣິຍະ ກໍຖືກຕິຕຽນດ້ວຍເຫດນັ້ນຢ່າງນີ້ ບຸກຄົນພວກທີ່ ຕ້ອງການເຫັນພຣະອະຣິຍະ ກໍໄດ້ຮັບການສັນເສີນດ້ວຍເຫດນັ້ນຢ່າງນີ້

ບຸກຄົນຜູ້ຕ້ອງການເຫັນພຣະອະຣິຍະກໍມີ ໒ ຈຳພວກ ຄື ພວກໜຶ່ງຕ້ອງການຟັງສັດທຳ ອີກພວກໜຶ່ງບໍ່ຕ້ອງການຟັງສັດທຳ ບຸກຄົນພວກທີ່ບໍ່ຕ້ອງການຟັງສັດທຳ ກໍຖືກຕິຕຽນ ດ້ວຍເຫດນັ້ນ ຢ່າງນີ້ ບຸກຄົນພວກທີ່ຕ້ອງການຟັງສັດທຳ ກໍໄດ້ຮັບການສັນເສີນດ້ວຍເຫດນັ້ນ ຢ່າງນີ້

ບຸກຄົນຜູ້ຕ້ອງການຟັງສັດທຳກໍມີ ໔ ຈຳພວກ ຄື ພວກໜຶ່ງງຽງໂສດຟັງທຳ ອີກພວກໜຶ່ງບໍ່ງຽງໂສດຟັງທຳ ບຸກຄົນພວກທີ່ບໍ່ງຽງໂສດຟັງທຳ ກໍຖືກຕິຕຽນດ້ວຍເຫດນັ້ນ ຢ່າງນີ້ ບຸກຄົນພວກທີ່ ງຽງໂສດຟັງທຳ ກໍໄດ້ຮັບການສັນເສີນດ້ວຍເຫດນັ້ນ ຢ່າງນີ້

ບຸກຄົນງຽງໂສດຟັງສັດທຳກໍມີ ໔ ຈຳພວກ ຄື ພວກໜຶ່ງຟັງແລ້ວຊົງຈຳທຳໄວ້ໄດ້ ອີກພວກໜຶ່ງຟັງແລ້ວຊົງຈຳທຳບໍ່ໄດ້ ບຸກຄົນພວກທີ່ ຟັງແລ້ວຊົງຈຳທຳບໍ່ໄດ້ ກໍຖືກຕິຕຽນດ້ວຍເຫດນັ້ນ ຢ່າງນີ້ ບຸກຄົນພວກທີ່ ຟັງແລ້ວຊົງຈຳທຳໄວ້ໄດ້ ກໍໄດ້ຮັບການສັນເສີນ ດ້ວຍເຫດນັ້ນ ຢ່າງນີ້

ບຸກຄົນຟັງແລ້ວຊົງຈຳທຳໄວ້ໄດ້ກໍມີ ໔ ຈຳພວກ ຄື ພວກໜຶ່ງພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ອີກພວກໜຶ່ງບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ບຸກຄົນພວກທີ່ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ກໍຖືກຕິຕຽນດ້ວຍເຫດນັ້ນຢ່າງນີ້ ບຸກຄົນ ພວກທີ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ກໍໄດ້ຮັບການສັນເສີນດ້ວຍເຫດນັ້ນ ຢ່າງນີ້

ບຸກຄົນພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ກໍມີ ໔ ຈຳພວກ ຄື ພວກໜຶ່ງ ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ອີກພວກໜຶ່ງຮູ້ອັດຖະຮູ້ທຳແລ້ວບໍ່ປະຕິບັດ ທຳສົມຄວນແກ່ທຳ ບຸກຄົນພວກທີ່ ຮູ້ອັດຖະຮູ້ທຳແລ້ວບໍ່ປະຕິບັດທຳສົມຄວນແກ່ທຳ ກໍຖືກຕິຕຽນດ້ວຍເຫດນັ້ນ ຢ່າງນີ້ ບຸກຄົນພວກທີ່ ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນ ແກ່ທຳ ກໍໄດ້ຮັບການສັນເສີນດ້ວຍເຫດນັ້ນ ຢ່າງນີ້

ບຸກຄົນຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳກໍມີ ໔ ຈຳພວກ ຄື ພວກໜຶ່ງປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ອີກພວກໜຶ່ງປະຕິບັດ ເພື່ອເກື້ອກູນຕົນເອງແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ບຸກຄົນພວກທີ່ ປະຕິບັດເພື່ອເກື້ອກູນຕົນເອງແຕ່ບໍ່ປະຕິບັດເພື່ອເກື້ອ ກູນຜູ້ອື່ນ ກໍຖືກຕິຕຽນດ້ວຍເຫດນັ້ນ ຢ່າງນີ້ ພວກທີ່ປະຕິບັດເພື່ອເກື້ອກູນຕົນເອງ ແລະປະຕິບັດເພື່ອເກື້ອກູນຜູ້ອື່ນ ກໍໄດ້ຮັບການສັນເສີນດ້ວຍເຫດນັ້ນ ຢ່າງນີ້

ພິກຂຸທັງຫຼາຍ ພິກຂຸເປັນຜູ້ຮູ້ຈັກບຸກຄົນ ໔ ຝ່າຍດ້ວຍປະການດັ່ງນີ້ແລ ພິກຂຸຊື່ວ່າເປັນປຸກຄະລະປະໂຣປະຣັນຍູ ເປັນຢ່າງນີ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ຈຶ່ງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ທຳມັນຍະສູດທີ່ ໘ ຈົບ**

# ໕. ປາຣິສັດຕະກະສູດ

## ວ່າດ້ວຍອະຣິຍະສາວົກປຽບໄດ້ກັບຕົ້ນປາຣິສັດ

[໖໙] ພິກຂຸທັງຫຼາຍ

໑. ສະໄໝໃດ ຕົ້ນໄມ້ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາມີໃບເຫຼືອງ ສະໄໝນັ້ນ ເທວະດາຊັ້ນຕາວະຕິງສາຕ່າງກໍດີໃຈກັນວ່າ "ບັດນີ້ ຕົ້ນໄມ້ສະຫວັນຊື່ປາຣິສັດມີໃບເຫຼືອງ ອີກບໍ່ດົນປານໃດ ດ່ຽວໃບກໍຈັກຣ່ວງຫຼົ່ນ"

໒. ສະໄໝໃດ ຕົ້ນໄມ້ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາຜັດໃບ ສະໄໝນັ້ນ ເທວະດາຊັ້ນຕາວະຕິງສາຕ່າງກໍດີໃຈວ່າ "ບັດນີ້ ຕົ້ນໄມ້ສະຫວັນຊື່ປາຣິສັດຜັດໃບແລ້ວ ອີກບໍ່ດົນປານໃດ ດ່ຽວກໍຈັກແຕກດອກອອກໃບ"

໓. ສະໄໝໃດ ຕົ້ນໄມ້ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາແຕກດອກອອກໃບ ສະໄໝນັ້ນ ເທວະດາຊັ້ນຕາວະຕິງສາຕ່າງກໍດີໃຈວ່າ "ບັດນີ້ ຕົ້ນໄມ້ສະຫວັນຊື່ປາຣິສັດແຕກດອກອອກໃບແລ້ວ ອີກບໍ່ດົນປານໃດ ດ່ຽວກໍຈັກເປັນຊໍ່ໃບຊໍ່ດອກ"

໔. ສະໄໝໃດ ຕົ້ນໄມ້ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາເປັນຊໍ່ໃບຊໍ່ດອກແລ້ວ ສະໄໝນັ້ນ ເທວະດາຊັ້ນຕາວະຕິງສາຕ່າງກໍດີໃຈວ່າ "ບັດນີ້ ຕົ້ນໄມ້ ສະຫວັນຊື່ປາຣິສັດເປັນຊໍ່ໃບຊໍ່ດອກແລ້ວ ອີກບໍ່ດົນປານໃດ ດ່ຽວກໍຈັກມີດອກຕູມ"

໕. ສະໄໝໃດ ຕົ້ນໄມ້ສະຫວັນຊື່ປາຣິສັດ ຂອງເທວະດາຊັ້ນຕາວະຕິງສາມີດອກຕູມແລ້ວ ສະໄໝນັ້ນ ເທວະດາຊັ້ນຕາວະຕິງສາຕ່າງກໍດີໃຈວ່າ "ບັດນີ້ ຕົ້ນໄມ້ສະຫວັນຊື່ ປາຣິສັດມີດອກຕູມແລ້ວ ອີກບໍ່ດົນປານໃດດ່ຽວກໍຈັກແຍ້ມດອກອອກມາ"

໖. ສະໄໝໃດ ຕົ້ນໄມ້ສະຫວັນຊື່ປາຣິສັດ ຂອງເທວະດາຊັ້ນຕາວະຕິງສາມີດອກແຍ້ມແລ້ວ ສະໄໝນັ້ນ ເທວະດາຊັ້ນຕາວະຕິງສາຕ່າງກໍດີໃຈວ່າ "ບັດນີ້ ຕົ້ນໄມ້ສະຫວັນຊື່ ປາຣິສັດມີດອກແຍ້ມແລ້ວ ອີກບໍ່ດົນປານໃດ ດ່ຽວກໍຈັກບານສະພັ່ງ"

ກ. ສະໄໝໃດ ຕົ້ນໄມ້ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາອອກດອກບານສະພັ່ງແລ້ວ ສະໄໝນັ້ນ ເທວະດາຊັ້ນຕາວະຕິງສາຕ່າງກໍດີໃຈ ເອີບອີ່ມພັ່ງພ້ອມດ້ວຍກາມມະຄຸນ ໕ ບຳເຣີຕົນຢູ່ຕະຫຼອດ ໔ ເດືອນທິບ ໃນເຫງົ້າຕົ້ນໄມ້ສະຫວັນຊື່ປາຣິສັດ

ເມື່ອຕົ້ນໄມ້ສະຫວັນ ຊື່ ປາຣິສັດອອກດອກບານສະພັ່ງແລ້ວ ແຜ່ຣັດສະໝີໄປໄດ້ ໕໐ ໂຍດໃນບໍລິເວນຮອບ ໆ ສົ່ງກິ່ນໄຊຍໄປຕາມລົມໄດ້ ໑໐໐ ໂຍດ ນີ້ເປັນອານຸພາບຂອງຕົ້ນໄມ້ສະຫວັນຊື່ ປາຣິສັດ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ

໑. ສະໄໝໃດ ອະຣິຍະສາວົກຄິດອອກຈາກເຮືອນບວດເປັນບັນພະຊິດ ສະໄໝນັ້ນ ອະຣິຍະສາວົກ ຈຶ່ງປຽບເໝືອນຕົ້ນປາຣິສັດຂອງເທວະດາຊັ້ນຕາວະຕິງສາທີ່ມີໃບເຫຼືອງ

໒. ສະໄໝໃດ ອະຣິຍະສາວົກແຖຜົມແລະໜວດ ນຸ່ງຫົ່ມກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ ສະໄໝນັ້ນ ອະຣິຍະສາວົກຈຶ່ງປຽບເໝືອນຕົ້ນໄມ້ສະຫວັນຊື່ປາຣິສັດ ຂອງເທວະດາຊັ້ນຕາວະຕິງສາທີ ຜັດໃບແລ້ວ

໓. ສະໄໝໃດ ອະຣິຍະສາວົກສະຫງັດຈາກກາມແລະອະກຸສົນທັງຫຼາຍແລ້ວ ບັນລຸປະຖົມຊານ ฯລฯ ສະໄໝນັ້ນ ອະຣິຍະສາວົກຈຶ່ງປຽບເໝືອນຕົ້ນໄມ້ສະຫວັນຊື່ປາຣິສັດ ຂອງເທວະດາຊັ້ນຕາວະຕິງສາ ທີ່ແຕກດອກອອກໃບແລ້ວ

໔. ສະໄໝໃດ ອະຣິຍະສາວົກ ເພາະວິຕົກວິຈານສະງົບຣະງັບໄປ ບັນລຸທຸຕິຍະຊານ ฯລฯ ສະໄໝນັ້ນ ອະຣິຍະສາວົກຈຶ່ງປຽບເໝືອນຕົ້ນໄມ້ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາທີ່ເປັນຊໍ່ໃບຊໍ່ດອກແລ້ວ

໕. ສະໄໝໃດ ອະຣິຍະສາວົກ ເພາະປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິ ສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ฯລฯ ສະໄໝນັ້ນ ອະຣິຍະສາວົກ ຈຶ່ງປຽບເໝືອນຕົ້ນໄມ້ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາທີ່ມີດອກຕູມແລ້ວ

໖. ສະໄໝໃດ ອະຣິຍະສາວົກ ເພາະລະສຸກແລະທຸກໄດ້ ເພາະໂສມະນັດແລະໂທມະນັດ ດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ฯລฯ ສະໄໝນັ້ນ ອະຣິຍະ

ສາວົກຈຶ່ງປຽບເໝືອນຕົ້ນປາຣິສັດຂອງເທວະດາຊັ້ນຕາວະຕິງສາທີ່ມີດອກແຍ້ມ ແລ້ວ

ກ. ສະໄໝໃດ ອະຣິຍະສາວົກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ໆລໆ ສະໄໝນັ້ນ ອະຣິຍະສາວົກຈຶ່ງປຽບເໝືອນຕົ້ນໄມ້ ສະຫວັນຊື່ປາຣິສັດຂອງເທວະດາຊັ້ນຕາວະຕິງສາທີ່ອອກດອກບານສະພັ່ງແລ້ວ

ພິກຂຸທັງຫຼາຍ ສະໄໝນັ້ນ ພຸມມະເທວະດາກະຈາຍຂ່າວວ່າ "ທ່ານອົງນີ້ມີຊື່ຢ່າງນີ້ ເປັນສັດທິວິຫາຣິກຂອງທ່ານຜູ້ມີຊື່ນີ້ ໄດ້ອອກຈາກເຮືອນບວດເປັນບັນພະຊິດ ຈາກບ້ານຫຼືນິຄົມຊື່ນັ້ນ ໄດ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນຢ່າງແນ່ນອນ"

ເທວະດາຊັ້ນຈາຕຸມະຫາຣາດ ສະດັບສຽງຂອງພຸມມະເທວະດາແລ້ວ ໄດ້ກະຈາຍຂ່າວຕໍ່ໄປ ໆລໆ

ເທວະດາຊັ້ນຕາວະຕິງສາ ໆລໆ
ເທວະດາຊັ້ນຍາມາ ໆລໆ
ເທວະດາຊັ້ນດຸສິດ ໆລໆ
ເທວະດາຊັ້ນນິມມານະຣະດີ ໆລໆ
ເທວະດາຊັ້ນປະຣະນິມມິຕະວະສະວັດດີ ໆລໆ

ເທວະດາຊັ້ນພົມກາຍິກາ ສະດັບສຽງຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີແລ້ວ ກໍກະຈາຍ ຂ່າວວ່າ "ທ່ານອົງນີ້ມີຊື່ຢ່າງນີ້ ເປັນສັດທິວິຫາຣິກຂອງທ່ານຜູ້ມີຊື່ນີ້ ໄດ້ອອກຈາກເຮືອນບວດເປັນບັນພະຊິດ ຈາກບ້ານຫຼືນິຄົມຊື່ນັ້ນ ໄດ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

ພຽງແຕ່ບຶດດຽວເທົ່ານັ້ນ ສຽງປ່າວປະກາດໄດ້ກະຈາຍຂຶ້ນໄປເຖິງພົມມະໂລກ ດ້ວຍປະການ ຢ່າງນີ້ ນີ້ເປັນອານຸພາບຂອງພິກຂຸຜູ້ເປັນຂີນາສົບ

**ປາຣິສັດຕະກະສູດທີ ໕ ຈົບ**

# ໖. ສັກກັດຈະສູດ

## ວ່າດ້ວຍຄວາມເຄົາລົບ

[໗໐] ຄັ້ງນັ້ນ ທ່ານພຣະສາຣີບຸດຫຼີບຫຼີກຢູ່ໃນທີ່ສະຫງັດ ໄດ້ເກີດຄວາມຄິດຄຳນຶງຂຶ້ນຢ່າງນີ້ວ່າ “ພິກຂຸສັກກາຣະ ເຄົາລົບ ອາໄສອັນໃດນໍຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້”

ລຳດັບນັ້ນແລ ທ່ານພຣະສາຣີບຸດຈຶ່ງມີຄວາມຄິດດັ່ງນີ້ ວ່າ

໑. ພິກຂຸສັກກາຣະເຄົາລົບ ອາໄສພຣະສາດສະດາຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້
໒. ພິກຂຸສັກກາຣະ ເຄົາລົບ ອາໄສພຣະທຳ ຯລຯ
໓. ພິກຂຸສັກກາຣະ ເຄົາລົບ ອາໄສພຣະສົງ ຯລຯ
໔. ພິກຂຸສັກກາຣະ ເຄົາລົບ ອາໄສສິກຂາ ຯລຯ
໕. ພິກຂຸສັກກາຣະ ເຄົາລົບ ອາໄສສະມາທິ ຯລຯ
໖. ພິກຂຸສັກກາຣະ ເຄົາລົບ ອາໄສຄວາມບໍ່ຜະໝາດ ຯລຯ
໗. ພິກຂຸສັກກາຣະ ເຄົາລົບ ອາໄສປະຕິສັນຖານຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້

ຕໍ່ມາ ທ່ານພຣະສາຣີບຸດໄດ້ມີຄວາມຄິດດັ່ງນີ້ວ່າ “ທຳຂອງເຮົາເຫຼົ່ານີ້ ບໍລິສຸດຜຸດຜ່ອງທາງທີ່ດີ ເຮົາຄວນຈະໄປຂາບທູນທຳເຫຼົ່ານີ້ແດ່ ພຣະຜູ້ມີພຣະພາກເຈົ້າ ທຳຂອງເຮົາ ເຫຼົ່ານີ້ຈັກບໍລິສຸດ ແລະນັບວ່າບໍລິສຸດຍິ່ງຂຶ້ນ ດ້ວຍອາການຢ່າງນີ້ ປຽບເໝືອນບຸຣຸດໄດ້ຄຳແທ່ງອັນບໍລິສຸດຜຸດຜ່ອງ ເຂົາມີຄວາມຄິດຢ່າງນີ້ວ່າ “ຄຳແທ່ງຂອງເຮົານີ້ບໍລິສຸດຜຸດຜ່ອງ ທາງທີ່ດີ ເຮົາຄວນຈະໄປສະເໜີຄຳແທ່ງນີ້ແກ່ຊ່າງຄຳ ຄຳແທ່ງຂອງເຮົາ ນີ້ໄປເຖິງຊ່າງຄຳແລ້ວຈັກບໍລິສຸດ ແລະນັບວ່າບໍລິສຸດຍິ່ງຂຶ້ນດ້ວຍອາການຢ່າງນີ້ ແມ່ນສັນໃດ ທຳຂອງເຮົາເຫຼົ່ານີ້ ກໍສັນນັ້ນຄືກັນ ຈັກບໍລິສຸດຜຸດຜ່ອງ ທາງທີ່ດີ ເຮົາຄວນຈະໄປຂາບທູນທຳເຫຼົ່ານີ້ແດ່ ພຣະຜູ້ມີພຣະພາກເຈົ້າ ທຳຂອງເຮົາເຫຼົ່ານີ້ກໍຈັກບໍລິສຸດ ແລະນັບວ່າ ບໍລິສຸດຍິ່ງຂຶ້ນ ດ້ວຍອາການຢ່າງນີ້”

ເມື່ອໃນເວລາເຢັນ ທ່ານພຣະສາຣີບຸດໄດ້ອອກຈາກທີ່ຫຼີບຫຼີກ[໑] ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

“ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້າພຣະອົງຫຼີບຫຼີກຢູ່ໃນທີ່ສະຫງັດ ເກີດຄວາມຄິດຄຳນຶງຂຶ້ນຢ່າງນີ້ວ່າ “ພິກຂຸສັກກາຣະ ເຄົາລົບ ອາໄສອັນໃດນໍຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້” ລຳດັບນັ້ນ ຂ້າພຣະອົງຈຶ່ງເກີດຄວາມຄິດດັ່ງນີ້ວ່າ

໑. ພິກຂຸສັກກາຣະເຄົາລົບ ອາໄສພຣະສາດສະດາຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້
໒. ພິກຂຸສັກກາຣະ ເຄົາລົບ ອາໄສພຣະທຳ ฯລฯ
໓. ພິກຂຸສັກກາຣະ ເຄົາລົບ ອາໄສພຣະສົງ ฯລฯ
໔. ພິກຂຸສັກກາຣະ ເຄົາລົບ ອາໄສສິກຂາ ฯລฯ
໕. ພິກຂຸສັກກາຣະ ເຄົາລົບ ອາໄສສະມາທິ ฯລฯ
໖. ພິກຂຸສັກກາຣະ ເຄົາລົບ ອາໄສຄວາມບໍ່ຜະໝາດ ฯລฯ
໗. ພິກຂຸສັກກາຣະ ເຄົາລົບ ອາໄສປະຕິສັນຖານຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ຕໍ່ມາ ຂ້າພຣະອົງໄດ້ມີຄວາມຄິດດັ່ງນີ້ວ່າ "ທຳຂອງເຮົາເຫຼົ່ານີ້ ບໍລິສຸດຜຸດຜ່ອງ ທາງທີ່ດີ ເຮົາຄວນຈະໄປຂາບທູນທຳເຫຼົ່ານີ້ແດ່ ພຣະຜູ້ມີພຣະພາກເຈົ້າ ທຳຂອງເຮົາເຫຼົ່ານີ້ຈັກບໍລິສຸດ ແລະນັບວ່າບໍລິສຸດຍິ່ງຂຶ້ນດ້ວຍອາການຢ່າງນີ້ ປຽບເໝືອນບຸຣຸດໄດ້ຄຳແທ່ງທີ່ບໍລິສຸດຜຸດຜ່ອງ ເຂົາມີຄວາມຄິດຢ່າງນີ້ວ່າ "ຄຳແທ່ງຂອງເຮົານີ້ບໍລິສຸດຜຸດຜ່ອງ ທາງທີ່ດີ ເຮົາຄວນຈະໄປສະເໜີຄຳແທ່ງນີ້ແກ່ຊ່າງຄຳ ຄຳແທ່ງຂອງເຮົານີ້ໄປເຖິງຊ່າງຄຳແລ້ວຈັກບໍລິສຸດ ແລະນັບວ່າບໍລິສຸດຍິ່ງຂຶ້ນ ດ້ວຍອາການຢ່າງນີ້ ແມ່ນສັນໃດ ທຳຂອງເຮົາເຫຼົ່ານີ້ ກໍສັນນັ້ນຄືກັນ ຈັກບໍລິສຸດຜຸດຜ່ອງ ທາງທີ່ດີ ເຮົາຄວນຈະໄປຂາບທູນທຳເຫຼົ່ານີ້ແດ່ ພຣະຜູ້ມີພຣະພາກເຈົ້າ ທຳຂອງເຮົາເຫຼົ່ານີ້ກໍຈັກບໍລິສຸດ ແລະນັບວ່າບໍລິສຸດຍິ່ງຂຶ້ນ ດ້ວຍອາການຢ່າງນີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ສາຣີບຸດ ພິກຂຸສັກກາຣະ ເຄົາລົບ ອາໄສສາດສະດາຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້ ฯລฯ ອາໄສທຳ ฯລฯ ອາໄສສົງ ฯລฯ ອາໄສສິກຂາ ฯລฯ ອາໄສສະມາທິ ฯລฯ ອາໄສຄວາມບໍ່ຜະໝາດ ฯລฯ ສາຣີບຸດ ພິກຂຸ ສັກກາຣະ ເຄົາລົບ ອາໄສປະຕິສັນຖານຢູ່ ຈຶ່ງລະອະກຸສົນ ຈະເລີນກຸສົນໄດ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຍ່ອມຮູ້ແຈ້ງເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ

໑-໒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ຈັກມີຄວາມເຄົາລົບໃນພຣະທຳ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ກໍຊື່ວ່າບໍ່ມີຄວາມເຄົາລົບໃນພຣະທຳດ້ວຍ ໂດຍຂ້ານ້ອຍ

໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ຈັກມີຄວາມເຄົາລົບໃນພຣະສົງ ພິກຂຸຜູ້ບໍ່ມີຄວາມເຄົາລົບ

ໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ກໍຊື່ວ່າບໍ່ມີຄວາມເຄົາລົບໃນພຣະສົງດ້ວຍ ຂ້ານ້ອຍ

໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ບໍ່ມີຄວາມເຄົາລົບໃນພຣະສົງ ຈັກມີຄວາມເຄົາລົບໃນສິກຂາ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ບໍ່ມີຄວາມເຄົາລົບໃນພຣະສົງ ກໍຊື່ວ່າບໍ່ມີຄວາມເຄົາລົບໃນສິກຂາດ້ວຍ ຂ້ານ້ອຍ

໕. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ບໍ່ມີຄວາມເຄົາລົບໃນພຣະສົງ ບໍ່ມີຄວາມເຄົາລົບໃນສິກຂາ ຈັກມີຄວາມເຄົາລົບໃນສະມາທິ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ບໍ່ມີຄວາມເຄົາລົບໃນພຣະສົງ ບໍ່ມີຄວາມເຄົາລົບໃນສິກຂາ ກໍຊື່ວ່າບໍ່ມີຄວາມເຄົາລົບໃນສະມາທິດ້ວຍ ຂ້ານ້ອຍ

໖. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ບໍ່ມີຄວາມເຄົາລົບໃນພຣະສົງ ບໍ່ມີຄວາມເຄົາລົບໃນສິກຂາ ບໍ່ມີຄວາມເຄົາລົບໃນສະມາທິ ຈັກມີຄວາມເຄົາລົບໃນຄວາມບໍ່ປະໝາດ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ໃນພຣະທຳ ບໍ່ມີຄວາມເຄົາລົບໃນພຣະສົງ ບໍ່ມີຄວາມເຄົາລົບໃນສິກຂາ ບໍ່ມີຄວາມເຄົາລົບໃນສະມາທິ ກໍຊື່ວ່າບໍ່ມີຄວາມເຄົາລົບໃນຄວາມບໍ່ປະໝາດດ້ວຍ ຂ້ານ້ອຍ

໗. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນ ພຣະທຳ ບໍ່ມີຄວາມເຄົາລົບໃນພຣະສົງ ບໍ່ມີຄວາມເຄົາລົບໃນສິກຂາ ບໍ່ມີຄວາມເຄົາລົບໃນສະມາທິ ບໍ່ມີຄວາມເຄົາລົບໃນຄວາມບໍ່ປະໝາດ ຈັກມີຄວາມເຄົາລົບໃນປະຕິສັນຖານ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນພຣະສາດສະດາ ບໍ່ມີຄວາມເຄົາລົບໃນພຣະທຳ ບໍ່ມີຄວາມເຄົາລົບ ໃນພຣະສົງ ບໍ່ມີຄວາມເຄົາລົບໃນສິກຂາ ບໍ່ມີຄວາມເຄົາລົບໃນສະມາທິ ບໍ່ມີຄວາມເຄົາລົບໃນຄວາມບໍ່ປະໝາດ ກໍຊື່ວ່າບໍ່ມີຄວາມເຄົາລົບໃນ ປະຕິສັນຖານດ້ວຍ ຂ້ານ້ອຍ

ຂ້າແດ່ ພຣະອົງຜູ້ຈະເລີນ

໑-໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ຈັກບໍ່ມີຄວາມເຄົາລົບໃນພຣະທຳ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ກໍຊື່ວ່າມີຄວາມເຄົາລົບໃນພຣະທຳດ້ວຍ ໂດຍຂ້ານ້ອຍ

໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ຈັກບໍ່ມີຄວາມເຄົາລົບໃນພຣະສົງ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ກໍຊື່ວ່າມີຄວາມເຄົາລົບໃນພຣະສົງດ້ວຍ ຂ້ານ້ອຍ

໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ຈັກບໍ່ມີຄວາມເຄົາລົບໃນສິກຂາ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ກໍຊື່ວ່າມີຄວາມເຄົາລົບໃນສິກຂາດ້ວຍ ຂ້ານ້ອຍ

໕. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ມີຄວາມເຄົາລົບໃນສິກຂາ ຈັກບໍ່ມີຄວາມເຄົາລົບໃນສະມາທິ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງມີຄວາມ ເຄົາລົບໃນສິກຂາ ກໍຊື່ວ່າມີຄວາມເຄົາລົບໃນສະມາທິດ້ວຍ ຂ້ານ້ອຍ

໖. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ມີຄວາມເຄົາລົບໃນສິກຂາ ມີຄວາມເຄົາລົບໃນສະມາທິ ຈັກບໍ່ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ມີຄວາມເຄົາລົບໃນສິກຂາ ມີຄວາມເຄົາລົບໃນ ສະມາທິ ກໍຊື່ວ່າມີຄວາມເຄົາລົບໃນຄວາມບໍ່ຜະໝາດດ້ວຍ ຂ້ານ້ອຍ

໗. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ມີຄວາມເຄົາລົບໃນສິກຂາ ມີຄວາມເຄົາລົບໃນສະມາທິ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ຈັກບໍ່ມີຄວາມເຄົາລົບໃນປະຕິສັນຖານ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ມີຄວາມເຄົາລົບໃນສິກຂາມີຄວາມ ເຄົາລົບໃນສະມາທິ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ກໍຊື່ວ່າມີຄວາມເຄົາລົບໃນປະຕິສັນຖານດ້ວຍ ຂ້ານ້ອຍ

ຂ້າແດ່ ພຣະອົງຜູ້ຈະເລີນ

໑-໖. ເປັນໄປໄດ້ທີ່ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ຈັກມີຄວາມເຄົາລົບໃນ ພຣະທຳດ້ວຍ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ກໍຊື່ວ່າມີຄວາມເຄົາລົບໃນພຣະທຳດ້ວຍ ໂດຍຂ້ານ້ອຍ

ຯລຯ

໗. ເປັນໄປໄດ້ທີ່ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ຯລຯ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ຈັກມີຄວາມເຄົາລົບໃນປະຕິສັນຖານດ້ວຍ ພິກຂຸຜູ້ມີຄວາມເຄົາລົບໃນພຣະສາດສະດາ ມີຄວາມເຄົາລົບໃນພຣະທຳ ມີຄວາມເຄົາລົບໃນພຣະສົງ ມີຄວາມເຄົາລົບໃນສິກຂາ ມີຄວາມເຄົາລົບໃນສະມາທິ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ກໍຊື່ວ່າມີຄວາມເຄົາລົບໃນປະຕິສັນຖານດ້ວຍ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍ່ອມຮູ້ແຈ້ງເນື້ອຄວາມແຫ່ງພຣະພາສິດທີ່ ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ດີແລ້ວ ສາຣີບຸດ ດີແທ້ ສາຣີບຸດ ທ່ານຮູ້ແຈ້ງເນື້ອຄວາມແຫ່ງພາສິດທີ່ເຮົາກ່າວໄວ້ໂດຍຫຍໍ້ນີ້ໄດ້ໂດຍພິດສະດານແນວນີ້

ສາຣີບຸດ

໑-໖. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນສາດສະດາ ຈັກມີຄວາມເຄົາລົບ ໃນທຳ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນສາດສະດາ ກໍຊື່ວ່າບໍ່ມີຄວາມເຄົາລົບໃນທຳດ້ວຍ ຯລຯ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນສາດສະດາ ບໍ່ມີຄວາມເຄົາລົບໃນທຳ ບໍ່ມີຄວາມເຄົາລົບໃນສົງ ບໍ່ມີຄວາມເຄົາລົບໃນສິກຂາ ບໍ່ມີຄວາມເຄົາລົບໃນສະມາທິ ກໍຊື່ວ່າບໍ່ມີຄວາມເຄົາລົບໃນຄວາມບໍ່ຜະໝາດດ້ວຍ

໗. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີຄວາມເຄົາລົບໃນສາດສະດາ ບໍ່ມີຄວາມເຄົາລົບໃນທຳ ບໍ່ມີຄວາມເຄົາລົບໃນສົງ ບໍ່ມີຄວາມເຄົາລົບໃນສິກຂາ ບໍ່ມີຄວາມເຄົາລົບໃນສະມາທິ ບໍ່ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ຈັກມີຄວາມເຄົາລົບໃນປະຕິສັນຖານ ພິກຂຸຜູ້ບໍ່ມີຄວາມເຄົາລົບໃນສາດສະດາ ບໍ່ມີຄວາມເຄົາລົບໃນທຳ ບໍ່ມີຄວາມເຄົາລົບໃນສົງ ບໍ່ມີຄວາມເຄົາລົບໃນສິກຂາ ບໍ່ມີຄວາມເຄົາລົບໃນສະມາທິ ບໍ່ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ກໍຊື່ວ່າບໍ່ມີຄວາມເຄົາລົບໃນປະຕິສັນຖານດ້ວຍ

ສາຣີບຸດ

໑-໖. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ຈັກບໍ່ມີຄວາມເຄົາລົບໃນທຳ ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ກໍຊື່ວ່າມີຄວາມເຄົາລົບໃນທຳດ້ວຍ ຯລຯ

໗. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ມີຄວາມເຄົາລົບ ໃນທຳ ມີຄວາມເຄົາລົບໃນສົງ ມີຄວາມເຄົາລົບໃນສິກຂາ ມີຄວາມເຄົາລົບໃນສະມາທິ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ຈັກບໍ່ມີຄວາມເຄົາລົບໃນປະຕິສັນຖານ ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ມີຄວາມ ເຄົາລົບໃນທຳ ມີຄວາມເຄົາລົບໃນສົງ ມີຄວາມເຄົາລົບໃນສິກຂາ ມີຄວາມເຄົາລົບໃນສະມາທິ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ກໍຊື່ວ່າມີຄວາມເຄົາລົບໃນປະຕິສັນຖານດ້ວຍ

ສາຣີບຸດ

໑-໖. ເປັນໄປໄດ້ທີ່ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ຈັກມີຄວາມເຄົາລົບໃນທຳດ້ວຍ ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ກໍຊື່ວ່າມີຄວາມເຄົາລົບໃນ ທຳດ້ວຍ ຯລຯ

໗. ເປັນໄປໄດ້ທີ່ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ຯລຯ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ຈັກມີຄວາມເຄົາລົບໃນປະຕິສັນຖານດ້ວຍ ພິກຂຸຜູ້ມີຄວາມເຄົາລົບໃນສາດສະດາ ຯລຯ ມີຄວາມເຄົາລົບໃນຄວາມບໍ່ຜະໝາດ ກໍຊື່ວ່າມີຄວາມເຄົາລົບໃນປະຕິສັນຖານດ້ວຍ

ສາຣີບຸດ ທ່ານເພິ່ງຮູ້ເນື້ອຄວາມແຫ່ງພາສິດທີ່ເຮົາກ່າວໄວ້ໂດຍຫຍໍ້ນີ້ແລ ໂດຍພິດສະດານຢ່າງນີ້

**ສັກກັດຈະສູດທີ ໖ ຈົບ**

# ໗. ພາວະນາສູດ

## ວ່າດ້ວຍພາວະນາ

[໗໑] ພິກຂຸທັງຫຼາຍ ເມື່ອພິກຂຸບໍ່ໝັ່ນປະກອບພາວະນາຢູ່ ແມ່ນຈະເກີດຄວາມປາຖະໜາຢ່າງນີ້ວ່າ "ເຮັດຢ່າງໃດນໍ? ຈິດຂອງເຮົາຈຶ່ງຈະລຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນ" ແຕ່

ຈິດຂອງພິກຂຸນັ້ນກໍຍັງບໍ່ລຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນໄດ້ເລີຍ ຂໍ້ນັ້ນເພາະເຫດໃດ ຄວນກ່າວວ່າ ເພາະບໍ່ໄດ້ຈະເລີນ ເພາະບໍ່ໄດ້ຈະເລີນ ອັນໃດ ເພາະບໍ່ໄດ້ຈະເລີນສະຕິປັດຖານ ໔ ສໍາມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘

ປຽບເໝືອນໄຂ່ ໘ ໜ່ວຍ ໑໐ ໜ່ວຍ ຫຼື ໑໔ ໜ່ວຍ ທີ່ແມ່ໄກ່ໝູບບໍ່ດີ ໃຫ້ຄວາມອົບອຸ່ນບໍ່ດີ ຟັກບໍ່ດີ ແມ່ນແມ່ໄກ່ນັ້ນຈະເກີດຄວາມປາຖະໜາຢ່າງນີ້ວ່າ "ເຮັດຢ່າງໃດນໍ? ລູກຂອງເຮົາຈະໃຊ້ປາຍເລັບຕີນ ຫຼື ຈະງອຍປາກຈິກເປືອກໄຂ່ອອກມາໄດ້ໂດຍ ສະຫວັດດີ ຂໍ້ນັ້ນເພາະເຫດໃດ ເພາະໄຂ່ເຫຼົ່ານັ້ນ ແມ່ໄກ່ໝູບບໍ່ດີ ໃຫ້ຄວາມອົບອຸ່ນບໍ່ດີ ຟັກບໍ່ດີ ແມ່ນສັນໃດ

ພິກຂຸທັງຫຼາຍ ເມື່ອພິກຂຸບໍ່ໝັ່ນປະກອບພາວະນາຢູ່ ກໍສັນນັ້ນຄືກັນ ແມ່ນຈະເກີດຄວາມປາຖະໜາຢ່າງນີ້ວ່າ "ເຮັດຢ່າງໃດນໍ? ຈິດຂອງເຮົາຈຶ່ງຈະລຸດພົ້ນຈາກ ອາສະວະທັງຫຼາຍ ເພາະບໍ່ຖືໝັ້ນ" ກໍຈິງ ແຕ່ຈິດຂອງພິກຂຸນັ້ນກໍບໍ່ລຸດພົ້ນຈາກອາສະວະ ທັງຫຼາຍ ເພາະບໍ່ຖືໝັ້ນໄດ້ເລີຍ ຂໍ້ນັ້ນເພາະເຫດໃດ ຄວນກ່າວວ່າ ເພາະບໍ່ໄດ້ຈະເລີນ ເພາະບໍ່ໄດ້ຈະເລີນອັນໃດ ເພາະບໍ່ໄດ້ຈະເລີນສະຕິປັດຖານ ໔ ສໍາມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘

ພິກຂຸທັງຫຼາຍ ເມື່ອພິກຂຸໝັ່ນປະກອບພາວະນາຢູ່ ແມ່ນຈະບໍ່ເກີດຄວາມປາຖະໜາຢ່າງນີ້ວ່າ "ເຮັດຢ່າງໃດນໍ? ຈິດຂອງເຮົາເພິ່ງລຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນ" ແຕ່ຈິດຂອງພິກຂຸນັ້ນກໍລຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນໄດ້ ຂໍ້ນັ້ນເພາະເຫດໃດ ຄວນກ່າວວ່າ ເພາະໄດ້ຈະເລີນ ເພາະໄດ້ຈະເລີນອັນໃດ ເພາະໄດ້ຈະເລີນສະຕິປັດຖານ ໔ ສໍາມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘

ປຽບເໝືອນໄຂ່ ໘ ໜ່ວຍ ໑໐ ໜ່ວຍ ຫຼື ໑໔ ໜ່ວຍ ທີ່ແມ່ໄກ່ໝູບດີແລ້ວ ໃຫ້ຄວາມອົບອຸ່ນດີແລ້ວ ຟັກດີແລ້ວ ແມ່ນແມ່ໄກ່ນັ້ນຈະບໍ່ເກີດຄວາມປາຖະໜາຢ່າງນີ້ວ່າ "ເຮັດຢ່າງໃດນໍ? ລູກຂອງເຮົາຈະໃຊ້ປາຍເລັບຕີນ ຫຼື ຈະງອຍປາກຈິກເປືອກໄຂ່ອອກມາໄດ້ໂດຍສະຫວັດດີ" ແຕ່ລູກໄກ່ເຫຼົ່ານັ້ນກໍສາມາດໃຊ້ປາຍເລັບຕີນ ຫຼື ຈະງອຍປາກຈິກເປືອກໄຂ່ອອກມາໄດ້ໂດຍສະຫວັດດີ ຂໍ້ນັ້ນເພາະເຫດໃດ ເພາະໄຂ່ເຫຼົ່ານັ້ນ ແມ່ໄກ່ໝູບດີແລ້ວ ໃຫ້ຄວາມອົບອຸ່ນດີແລ້ວ ຟັກດີແລ້ວ ແມ່ນສັນໃດ

ພິກຂຸທັງຫຼາຍ ເມື່ອພິກຂຸໝັ່ນປະກອບພາວະນາຢູ່ ກໍສັນນັ້ນຄືກັນ ແມ່ນຈະບໍ່ເກີດຄວາມປາຖະໜາຢ່າງນີ້ວ່າ "ເຮັດຢ່າງໃດນໍ? ຈິດຂອງເຮົາເພິ່ງລຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນ" ກໍຈິງ ແຕ່ຈິດຂອງພິກຂຸນັ້ນກໍລຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນໄດ້ ຂໍ້ນັ້ນເພາະເຫດໃດ ຄວນກ່າວວ່າ ເພາະໄດ້ຈະເລີນ ເພາະໄດ້ຈະເລີນ ອັນໃດ ເພາະໄດ້ຈະເລີນສະຕິປັດຖານ ໔ ຯລຯ ອະຣິຍະມັກມີອົງ ໘

ພິກຂຸທັງຫຼາຍ ປຽບເໝືອນຮອຍນິ້ວມື ຫຼື ຮອຍນິ້ວຫົວແມ່ມືທີ່ດ້າມມີດ ຜາກົດແກ່ຊ່າງໄມ້ ຫຼືລູກມືຊ່າງໄມ້ ແຕ່ເຂົາບໍ່ຮູ້ຢ່າງນີ້ວ່າ "ວັນນີ້ ດ້າມມີດຂອງເຮົາ ຫຽ້ນໄປເທົ່ານີ້ ເມື່ອວານນີ້ເທົ່ານີ້ ເມື່ອວານຊືນນີ້" ກໍຈິງ ແຕ່ເມື່ອດ້າມມີດຝົນຫຽ້ນໄປ ເຂົາກໍຮູ້ວ່າ ຫຽ້ນໄປແລ້ວນັ້ນເອງ ແມ່ນສັນໃດ

ພິກຂຸທັງຫຼາຍ ເມື່ອພິກຂຸໝັ່ນປະກອບພາວະນາຢູ່ກໍສັນນັ້ນຄືກັນ ແມ່ນຈະບໍ່ຮູ້ຢ່າງນີ້ວ່າ "ວັນນີ້ ອາສະວະຂອງເຮົາສິ້ນໄປແລ້ວເທົ່ານີ້ ເມື່ອວານນີ້ເທົ່ານີ້ ເມື່ອວານຊືນເທົ່ານີ້" ກໍຈິງ ແຕ່ເມື່ອອາສະວະໝົດສິ້ນໄປແລ້ວ ທ່ານກໍຮູ້ວ່າ "ສິ້ນໄປແລ້ວ" ນັ້ນເອງ

ພິກຂຸທັງຫຼາຍ ປຽບເໝືອນເຮືອເດີນທະເລທີ່ເຂົາຜູກດ້ວຍຫວາຍ ແລະຂັນຊະເນາະແລ້ວ ແລ່ນໄປໃນນ້ຳຕະຫຼອດ ໖ ເດືອນ ພໍເຖິງລະດູໜາວ ກໍຖືກລາກຂຶ້ນບົກ ເຄື່ອງຜູກເຮືອຕາກລົມ ແລະແດດໄວ້ ເຄື່ອງຜູກເຫຼົ່ານັ້ນຖືກຝົນຕົກຊະ ຍ່ອມຊຳຣຸດເສຍຫາຍໄປໂດຍບໍ່ຍາກ ສັນໃດ

ພິກຂຸທັງຫຼາຍ ເມື່ອພິກຂຸໝັ່ນປະກອບພາວະນາຢູ່ ກໍສັນນັ້ນຄືກັນ ສັງໂຍດທັງຫຼາຍຍ່ອມລະງັບ ດັບໄປໂດຍບໍ່ຍາກ

**ພາວະນາສູດທີ ໗ ຈົບ**

# ໘. ອັກຄິກຂັນໂທປະມະສູດ

## ວ່າດ້ວຍຂໍ້ອຸປະມາດ້ວຍກອງໄຟ

[໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງ ໝູ່ໃຫຍ່ສະເດັດດຳເນີນທາງໄກ ໄດ້ທອດພຣະເນດເຫັນກອງໄຟໃຫຍ່ ທີ່ກຳລັງລຸກເປັນແປວ ຢູ່ ໃນ ສະຖານທີ່ແຫ່ງໜຶ່ງ ເມື່ອແລ້ວຈຶ່ງສະເດັດແວ່ລົງຂ້າງທາງ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ໃນເຫງົ້າໄມ້ຕົ້ນໜຶ່ງ ຈຶ່ງຕັດຖາມພິກຂຸທັງຫຼາຍ ວ່າ

"ພິກຂຸທັງຫຼາຍ ທ່ານທັງຫຼາຍເຫັນກອງໄຟໃຫຍ່ນັ້ນທີ່ກຳລັງລຸກເປັນແປວຢູ່ຫຼືບໍ່?"

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເຫັນ ຂ້ານ້ອຍ"

໑. "ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ລະຫວ່າງການເຂົ້າໄປນັ່ງກອດຫຼືນອນກອດກອງໄຟໃຫຍ່ນັ້ນທີ່ກຳລັງລຸກເປັນແປວຢູ່ ກັບການເຂົ້າໄປນັ່ງກອດຫຼືນອນກອດ

ທິດາກະສັດ ລູກສາວພາມ ຫຼື ລູກສາວຄະຫະບໍດີທີ່ມີມື ແລະຕີນອ່ອນນຸ່ມ ຢ່າງໃດປະເສີດກວ່າກັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ການທີ່ບຸກຄົນເຂົ້າໄປນັ່ງກອດ ຫຼື ນອນກອດທິດາກະສັດ ລູກສາວພາມ ຫຼື ລູກສາວຄະຫະບໍດີທີ່ມີມື ແລະຕີນອ່ອນນຸ່ມນີ້ປະເສີດກວ່າ ສ່ວນການທີ່ບຸກຄົນເຂົ້າໄປນັ່ງກອດຫຼືນອນກອດກອງໄຟໃຫຍ່ນັ້ນທີ່ກຳລັງລຸກເປັນແປວຢູ່ນີ້ ເປັນທຸກ ຂ້ານ້ອຍ"

"ພິກຂຸ ທັງຫຼາຍ ເຮົາຂໍບອກທ່ານທັງຫຼາຍ ເຮົາຂໍເຕືອນທ່ານທັງຫຼາຍ ການທີ່ບຸກຄົນຜູ້ທຸສີນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າຣັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະແຕ່ປະຕິນຍາວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີແຕ່ປະຕິນຍາວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນເໝືອນມູນຝອຍ ເຂົ້າໄປນັ່ງກອດຫຼືນອນກອດທິດາ ກະສັດ ລູກສາວພາມ ຫຼື ລູກສາວຄະຫະບໍດີ ຈະປະເສີດອັນໃດ ການເຂົ້າໄປນັ່ງກອດ ຫຼື ນອນກອດກອງໄຟໃຫຍ່ນັ້ນທີ່ກຳລັງລຸກເປັນແປວນີ້ປະເສີດກວ່າ ຂໍ້ນັ້ນເພາະ ເຫດໃດ ເພາະເຂົາຈະເພິ່ງເຂົ້າເຖິງຄວາມຕາຍ ຫຼື ທຸກປາງຕາຍ ອັນມີການເຂົ້າໄປນັ່ງກອດ ຫຼື ນອນກອດກອງໄຟໃຫຍ່ນັ້ນເປັນເຫດ ແຕ່ເຂົາຫຼັງຈາກຕາຍແລ້ວ ກໍຈະບໍ່ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເພາະການເຂົ້າໄປນັ່ງກອດ ຫຼື ນອນກອດກອງໄຟນັ້ນເປັນປັດໄຈ

ພິກຂຸທັງຫຼາຍ ສ່ວນການທີ່ບຸກຄົນຜູ້ທຸສີນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າຣັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະແຕ່ປະຕິນຍາວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີແຕ່ປະຕິນຍາວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນເໝືອນ ມູນຝອຍ ເຂົ້າໄປນັ່ງກອດຫຼືນອນກອດທິດາກະສັດ ລູກສາວພາມ ຫຼື ລູກສາວຄະຫະບໍດີນັ້ນ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ບຸກຄົນ ຜູ້ທຸສີນນັ້ນ ແລະຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

໘. ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ລະຫວ່າງການທີ່ບຸຣຸດຜູ້ມີກຳລັງໃຊ້ເຊືອກໜັງທີ່ໜຽວພັນແຂ່ງທັງ ໒ ຂ້າງແລ້ວດຶງຖູໄປມາ ເຊືອກໜັງນັ້ນເພິ່ງບາດຜິວ ເມື່ອບາດຜິວແລ້ວເພິ່ງບາດໜັງ ເມື່ອບາດໜັງແລ້ວເພິ່ງບາດຊີ້ນ ເມື່ອບາດຊີ້ນແລ້ວ ເພິ່ງຕັດເສັ້ນເອັນ ເມື່ອຕັດເສັ້ນເອັນແລ້ວເພິ່ງຕັດກະດູກ ເມື່ອຕັດກະດູກແລ້ວເພິ່ງຕັດເຍື່ອໃນກະດູກ ກັບການຍິນດີການຂາບໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຢ່າງໃດປະເສີດກວ່າກັນ"

"ຂ້າແດ່ພຣະອົງຜູ້ຈະເລີນ ການຍິນດີການຂາບໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານນີ້ປະເສີດກວ່າ ການທີ່ບຸຣຸດຜູ້ມີກຳລັງໃຊ້ເຊືອກໜັງທີ່

ໝຽວພັນແຂ່ງທັງ ໔ ຂ້າງແລ້ວດຶງຖູໄປມາ ເຊືອກໜັງນັ້ນເພິ່ງບາດຜິວແລ້ວ ຯລຯ ເພິ່ງຕັດເຍື່ອໃນກະດູກນີ້ ເປັນທຸກ ຂ້ານ້ອຍ”

ພິກຂຸທັງຫຼາຍ ເຮົາຂໍບອກທ່ານທັງຫຼາຍ ເຮົາຂໍເຕືອນທ່ານທັງຫຼາຍ ການທີ່ບຸກຄົນ ຜູ້ທຸສີນນັ້ນ ຯລຯ ເປັນເໝືອນມູນຝອຍ ຍິນດີການຂາບໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຈະປະເສີດອັນໃດ ການທີ່ບຸຣຸດຜູ້ມີກຳລັງໃຊ້ເຊືອກໜັງທີ່ໝຽວພັນແຂ່ງທັງ ໔ ຂ້າງແລ້ວດຶງຖູໄປມາ ເຊືອກໜັງນັ້ນເພິ່ງບາດຜິວ ຯລຯ ເພິ່ງຕັດເຍື່ອໃນກະດູກນີ້ເທົ່ານັ້ນປະເສີດກວ່າ ຂໍ້ນັ້ນເພາະເຫດໃດ ເພາະເຂົາເພິ່ງເຂົ້າເຖິງຄວາມຕາຍ ຫຼື ທຸກປາງຕາຍອັນມີການບາດຜິວເປັນຕົ້ນນັ້ນເປັນເຫດ ແຕ່ຫຼັງຈາກຕາຍແລ້ວ ເຂົາຈະບໍ່ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ເພາະເຊືອກໜັງ ບາດຜິວເປັນຕົ້ນນັ້ນເປັນປັດໄຈນັ້ນ

ພິກຂຸທັງຫຼາຍ ສ່ວນການທີ່ບຸກຄົນຜູ້ທຸສີນ ຯລຯ ເປັນເໝືອນມູນຝອຍ ຍິນດີການ ໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ບຸກຄົນຜູ້ທຸສີນນັ້ນ ແລະຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

໕. ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ລະຫວ່າງການທີ່ບຸຣຸດຜູ້ມີກຳລັງໃຊ້ຫອກທີ່ຄົມ ທາຊະໂລມດ້ວຍນ້ຳມັນພຸ່ງໃສ່ກາງເອິກ ກັບການຍິນດີການໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຢ່າງໃດປະເສີດກວ່າກັນ”

“ຂ້າແດ່ ພຣະອົງຜູ້ຈະເລີນ ການຍິນດີການໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ປະເສີດກວ່າ ສ່ວນການທີ່ບຸຣຸດຜູ້ມີກຳລັງໃຊ້ຫອກທີ່ຄົມ ທາຊະໂລມດ້ວຍນ້ຳມັນ ພຸ່ງໃສ່ກາງເອິກນີ້ເປັນທຸກ ຂ້ານ້ອຍ”

“ພິກຂຸທັງຫຼາຍ ເຮົາຂໍບອກທ່ານທັງຫຼາຍ ເຮົາຂໍເຕືອນທ່ານທັງຫຼາຍ ການທີ່ບຸກຄົນ ຜູ້ທຸສີນ ຯລຯ ເປັນເໝືອນມູນຝອຍ ຍິນດີການໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຈະປະເສີດອັນໃດ ການທີ່ບຸຣຸດຜູ້ມີກຳລັງໃຊ້ຫອກທີ່ຄົມ ທາຊະໂລມດ້ວຍນ້ຳມັນພຸ່ງໃສ່ກາງເອິກນີ້ເທົ່ານັ້ນ ປະເສີດກວ່າ ຂໍ້ນັ້ນເພາະເຫດໃດ ເພາະເຂົາຈະເພິ່ງເຂົ້າເຖິງຄວາມຕາຍ ຫຼື ທຸກປາງຕາຍອັນມີຫອກທີ່ຄົມ ທາຊະໂລມດ້ວຍນ້ຳມັນພຸ່ງໃສ່ກາງເອິກເປັນເຫດ ແຕ່ຫຼັງຈາກຕາຍແລ້ວ ເຂົາຈະບໍ່ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ເພາະການຖືກຫອກແທງນັ້ນເປັນປັດໄຈ

ພິກຂຸທັງຫຼາຍ ສ່ວນການທີ່ບຸກຄົນຜູ້ທຸສີນ ຯລຯ ເປັນເໝືອນມູນຝອຍ ຍິນດີການໄຫວ້ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຍ່ອມເປັນໄປເພື່ອບໍ່

ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ບຸກຄົນຜູ້ທຸສິນນັ້ນ ແລະຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

໔. ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ລະຫວ່າງການທີ່ບຸຣຸດຜູ້ມີກຳລັງໃຊ້ແຜ່ນເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ນາບກາຍ ກັບການໃຊ້ສອຍຈີວອນທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຢ່າງໃດຈະປະເສີດກວ່າກັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ການທີ່ບຸກຄົນຜູ້ທຸສິນໃຊ້ສອຍຈີວອນທີ່ເຂົາຖວາຍດ້ວຍສັດທາ ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານນີ້ເທົ່ານັ້ນປະເສີດກວ່າ ສ່ວນການທີ່ບຸຣຸດຜູ້ມີກຳລັງໃຊ້ແຜ່ນເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ນາບກາຍຕົວເອງນີ້ ເປັນທຸກ ຂ້ານ້ອຍ"

"ພິກຂຸທັງຫຼາຍ ເຮົາຂໍບອກທ່ານທັງຫຼາຍ ເຮົາຂໍເຕືອນທ່ານທັງຫຼາຍ ການທີ່ບຸກຄົນ ຜູ້ທຸສິນ ໆລໆ ເປັນເໝືອນມູນຝອຍ ໃຊ້ສອຍຈີວອນທີ່ເຂົາຖວາຍດ້ວຍສັດທາ ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຈະປະເສີດອັນໃດ ການທີ່ບຸຣຸດຜູ້ມີກຳລັງໃຊ້ແຜ່ນເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ນາບກາຍນີ້ເທົ່ານັ້ນ ປະເສີດກວ່າ ຂໍ້ນັ້ນເພາະເຫດໃດ ເພາະເຂົາເພິ່ງເຂົ້າເຖິງຄວາມຕາຍ ຫຼື ທຸກປາງຕາຍ ອັນມີການຖືກນາບກາຍດ້ວຍແຜ່ນເຫຼັກຮ້ອນນັ້ນເປັນເຫດ ແຕ່ຫຼັງຈາກຕາຍແລ້ວ ເຂົາຈະບໍ່ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເພາະການຖືກນາບກາຍດ້ວຍແຜ່ນເຫຼັກຮ້ອນນັ້ນເປັນປັດໄຈ

ພິກຂຸທັງຫຼາຍ ສ່ວນການທີ່ບຸກຄົນຜູ້ທຸສິນ ໆລໆ ເປັນເໝືອນມູນຝອຍ ໃຊ້ສອຍຈີວອນທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ບຸກຄົນຜູ້ທຸສິນນັ້ນ ແລະ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

໕. ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ລະຫວ່າງການທີ່ບຸຣຸດ ຜູ້ມີກຳລັງໃຊ້ຕະຂໍເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ງ້າງປາກອອກແລ້ວ ຍັດກ້ອນເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ເຂົ້າໄປໃນປາກ ກ້ອນເຫຼັກຮ້ອນນັ້ນເພິ່ງໄໝ້ຮີມປາກແດ່ ໄໝ້ປາກແດ່ ໄໝ້ລີ້ນແດ່ ໄໝ້ຄໍແດ່ ໄໝ້ເອິກແດ່ ໄໝ້ໄສ້ໃຫຍ່ແດ່ ໄສ້ນ້ອຍແດ່ ອອກທາງທະວານລຸ່ມຂອງຄົນນັ້ນ ກັບການສັນບິນທະບາດທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຢ່າງໃດປະເສີດ ກວ່າກັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ການສັນບິນທະບາດທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານນີ້ເທົ່ານັ້ນ ປະເສີດກວ່າ ການທີ່ບຸຣຸດຜູ້ມີກຳລັງໃຊ້ຕະຂໍເຫຼັກຮ້ອນ ທີ່ເຜົາໄຟລຸກເປັນແປວ ງ້າງປາກອອກແລ້ວ ຍັດກ້ອນເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວເຂົ້າໄປໃນປາກ ກ້ອນເຫຼັກຮ້ອນນັ້ນເພິ່ງໄໝ້ຮີມປາກແດ່ ໄໝ້ປາກແດ່ ໄໝ້ລີ້ນແດ່ ໄໝ້ຄໍແດ່ ໄໝ້ເອິກແດ່ ໄໝ້ໄສ້ໃຫຍ່ແດ່ ໄສ້ນ້ອຍແດ່ ອອກທາງທະວານລຸ່ມຂອງຄົນນັ້ນນີ້ເປັນທຸກ ຂ້ານ້ອຍ"

"ພິກຂຸທັງຫຼາຍ ເຮົາຂໍບອກທ່ານທັງຫຼາຍ ເຮົາຂໍເຕືອນທ່ານທັງຫຼາຍ ການທີ່ບຸກຄົນ ຜູ້ທຸສີນ ຯລຯ ເປັນເໝືອນມູນຝອຍ ສັນບິນທະບາດທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຈະປະເສີດອັນໃດ ການທີ່ບຸຣຸດ ຜູ້ມີກຳລັງໃຊ້ຕະຂໍເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ງ້າງປາກອອກແລ້ວ ຍັດກ້ອນເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ເຂົ້າໄປໃນປາກ ກ້ອນເຫຼັກຮ້ອນນັ້ນເພິ່ງໄໝ້ຮີມປາກແດ່ ໄໝ້ປາກແດ່ ໄໝ້ລີ້ນແດ່ ໄໝ້ຄໍແດ່ ໄໝ້ເອິກແດ່ ໄໝ້ໄສ້ໃຫຍ່ແດ່ ໄສ້ນ້ອຍແດ່ ອອກທາງທະວານເບື້ອງລຸ່ມຂອງຄົນນັ້ນນີ້ເທົ່ານັ້ນ ປະເສີດກວ່າ ຂໍ້ນັ້ນເພາະເຫດໃດ ເພາະເຂົາເພິ່ງເຂົ້າເຖິງຄວາມຕາຍ ຫຼື ທຸກປາງຕາຍ ອັນມີການຍັດກ້ອນເຫຼັກຮ້ອນນັ້ນໃສ່ປາກເປັນເຫດ ແຕ່ຫຼັງຈາກຕາຍແລ້ວ ເຂົາຈະບໍ່ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເພາະການໃສ່ກ້ອນເຫຼັກຮ້ອນນັ້ນເປັນປັດໄຈ

ພິກຂຸທັງຫຼາຍ ສ່ວນການທີ່ບຸກຄົນຜູ້ທຸສີນ ຯລຯ ເປັນເໝືອນມູນຝອຍ ສັນບິນທະບາດທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ບຸກຄົນຜູ້ທຸສີນນັ້ນ ແລະຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

໕. ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ລະຫວ່າງການທີ່ບຸຣຸດຜູ້ມີກຳລັງຈັບຫົວຫຼືຄໍແລ້ວໃຫ້ນັ່ງທັບ ຫຼື ນອນທັບຕຽງເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ກັບການໃຊ້ສອຍຕຽງຕັ່ງທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຢ່າງໃດປະເສີດກວ່າກັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ການໃຊ້ສອຍຕຽງຕັ່ງທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານເທົ່ານັ້ນ ປະເສີດກວ່າ ການທີ່ບຸຣຸດ ຜູ້ມີກຳລັງຈັບຫົວ ຫຼື ຄໍແລ້ວໃຫ້ນັ່ງທັບ ຫຼື ນອນທັບຕຽງເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວນີ້ເປັນທຸກ ຂ້ານ້ອຍ"

"ພິກຂຸທັງຫຼາຍ ເຮົາຂໍບອກທ່ານທັງຫຼາຍ ເຮົາຂໍເຕືອນທ່ານທັງຫຼາຍ ການທີ່ບຸກຄົນຜູ້ທຸສີນ ຯລຯ ເປັນເໝືອນມູນຝອຍ ການໃຊ້ສອຍຕຽງຕັ່ງທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະ

ມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຈະປະເສີດອັນໃດ ການທີ່ບຸຣຸດຜູ້ມີກຳລັງຈັບຫົວ ຫຼື ຄໍແລ້ວ ໃຫ້ນັ່ງທັບຫຼືນອນທັບຕຽງເຫຼັກຮ້ອນ ທີ່ເຜົາໄຟລຸກເປັນແປວນີ້ເທົ່ານັ້ນ ປະເສີດກວ່າ ຂໍ້ນັ້ນເພາະເຫດໃດ ເພາະເຂົາຈະເພິ່ງເຂົ້າເຖິງຄວາມຕາຍ ຫຼື ທຸກປາງຕາຍອັນມີການນັ່ງຫຼືນອນທັບຕຽງຕັ່ງເຫຼັກຮ້ອນນັ້ນເປັນເຫດ ແຕ່ຫຼັງຈາກຕາຍແລ້ວ ເຂົາຈະບໍ່ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ເພາະການນັ່ງຫຼືນອນທັບຕຽງຕັ່ງເຫຼັກຮ້ອນນັ້ນເປັນປັດໄຈ

ພິກຂຸທັງຫຼາຍ ສ່ວນການທີ່ບຸກຄົນຜູ້ທຸສີນ ຯລຯ ເປັນເໝືອນມູນຝອຍ ການໃຊ້ສອຍຕຽງຕັ່ງທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ບຸກຄົນຜູ້ທຸສີນນັ້ນ ແລະຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ກ. ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ລະຫວ່າງການທີ່ບຸຣຸດ ຜູ້ມີກຳລັງຈັບຄົນຍົກຕີນຂຶ້ນ ຫ້ອຍຫົວລົງແລ້ວໂຍນລົງໃນໝໍ້ເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ເຂົາຖືກໄຟລວກເດືອດຟຸດຂຶ້ນເປັນຟອງໃນໝໍ້ເຫຼັກຮ້ອນນັ້ນ ບາງເທື່ອກໍລອຍຂຶ້ນ ບາງເທື່ອກໍຈົມລົງ ບາງເທື່ອກໍລອຍຂວາງ ກັບການໃຊ້ສອຍວິຫານທີ່ເຂົາຖວາຍດ້ວຍສັດທາ ຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼືຄະຫະບໍດີມະຫາສານ ຢ່າງໃດປະເສີດ ກວ່າກັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ການໃຊ້ສອຍວິຫານທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານເທົ່ານັ້ນ ປະເສີດກວ່າ ການທີ່ບຸຣຸດຜູ້ມີກຳລັງ ຈັບຄົນຍົກຕີນຂຶ້ນ ຫ້ອຍຫົວລົງແລ້ວໂຍນລົງໃນໝໍ້ເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ເຂົາຖືກໄຟລວກເດືອດຟຸດຂຶ້ນເປັນຟອງໃນໝໍ້ເຫຼັກຮ້ອນນັ້ນ ບາງເທື່ອກໍລອຍຂຶ້ນ ບາງເທື່ອກໍຈົມລົງ ບາງເທື່ອກໍລອຍຂວາງນີ້ເປັນທຸກ ຂ້ານ້ອຍ"

"ພິກຂຸທັງຫຼາຍ ເຮົາຂໍບອກທ່ານທັງຫຼາຍ ເຮົາຂໍເຕືອນທ່ານທັງຫຼາຍ ການທີ່ບຸກຄົນທຸສີນ ຯລຯ ເປັນເໝືອນມູນຝອຍ ການໃຊ້ສອຍວິຫານທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຈະປະເສີດອັນໃດ ການທີ່ບຸຣຸດຜູ້ມີກຳລັງຈັບຄົນຍົກຕີນຂຶ້ນ ຫ້ອຍຫົວລົງແລ້ວໂຍນລົງໃນໝໍ້ເຫຼັກຮ້ອນທີ່ເຜົາໄຟລຸກເປັນແປວ ເຂົາຖືກໄຟເດືອດລວກຟຸດຂຶ້ນເປັນຟອງໃນໝໍ້ເຫຼັກຮ້ອນນັ້ນ ບາງເທື່ອກໍລອຍຂຶ້ນ ບາງເທື່ອກໍຈົມລົງ ບາງເທື່ອກໍລອຍຂວາງນີ້ເທົ່ານັ້ນ ປະເສີດກວ່າ ຂໍ້ນັ້ນເພາະເຫດໃດ ເພາະເຂົາເພິ່ງເຂົ້າເຖິງຄວາມຕາຍ ຫຼື ທຸກປາງຕາຍອັນມີການຖືກໂຍນລົງໃນໝໍ້ເຫຼັກຮ້ອນນັ້ນເປັນເຫດ ແຕ່ຫຼັງຈາກຕາຍແລ້ວ ເຂົາຈະບໍ່ໄປເກີດໃນອະບາຍທຸກຄະຕິ ວິນິບາດ ນະຣົກ ເພາະການຖືກໂຍນລົງໃນໝໍ້ເຫຼັກຮ້ອນນັ້ນເປັນປັດໄຈ

ພິກຂຸທັງຫຼາຍ ສ່ວນການທີ່ບຸກຄົນຜູ້ທຸສິນ ໗ລ໗ ເປັນເໝືອນມູນຝອຍ ການໃຊ້ສອຍ ວິຫານທີ່ເຂົາຖວາຍດ້ວຍສັດທາຂອງຂັດຕິຍະມະຫາສານ ພາມມະນະມະຫາສານ ຫຼື ຄະຫະບໍດີມະຫາສານ ຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ບຸກຄົນຜູ້ທຸສິນນັ້ນ ແລະຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ເພາະສະນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ “ເຮົາທັງຫຼາຍ ຈະໃຊ້ສອຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຂອງຊົນເຫຼົ່າໃດ ສັກກາຣະເຫຼົ່ານັ້ນຂອງຊົນເຫຼົ່ານັ້ນຈັກມີຜົນຫຼາຍ ມີອານິສົງຫຼາຍ ແລະການບັນພະຊາຂອງເຮົາທັງຫຼາຍ ຈັກບໍ່ເປັນໝັນ ມີຜົນ ມີກຳໄລ” ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

ອີກປະການໜຶ່ງ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ ພິກຂຸເມື່ອພິຈາລະນາເຫັນປະໂຫຍດຕົນ ກໍຄວນທີ່ຈະເຮັດປະໂຫຍດຕົນນັ້ນໃຫ້ສຳເລັດດ້ວຍຄວາມບໍ່ຜະໝາດຢ່າງແທ້ຈິງ ເມື່ອພິຈາລະນາເຫັນປະໂຫຍດຂອງຜູ້ອື່ນ ກໍຄວນເຮັດປະໂຫຍດຂອງຜູ້ອື່ນນັ້ນໃຫ້ສຳເລັດດ້ວຍຄວາມບໍ່ຜະໝາດຢ່າງແທ້ຈິງ ຫຼືເມື່ອພິຈາລະນາເຫັນປະໂຫຍດທັງ ໒ ຢ່າງ ກໍຄວນເຮັດປະໂຫຍດທັງ ໒ ຢ່າງນັ້ນໃຫ້ສຳເລັດດ້ວຍຄວາມບໍ່ຜະໝາດ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວຍາກອນພາສິດນີ້ແລ້ວ ແລະເມື່ອພຣະອົງກຳລັງຕັດໄວຍາກອນພາສິດນີ້ຢູ່ ພິກຂຸປະມານ ໖໐ ອົງໄດ້ກະອັກເລືອດອຸ່ນໆ ອອກມາ ພິກຂຸ ປະມານ ໖໐ ອົງ ໄດ້ບອກຄືນສິກຂາກັບມາເປັນຄະລິຫັດດ້ວຍຂາບທູນວ່າ “ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ການປະພຶດພົມມະຈັນ ເຮັດໄດ້ຍາກແສນຍາກ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ການປະພຶດພົມມະຈັນ ເຮັດໄດ້ຍາກແສນຍາກ” ພິກຂຸອີກປະມານ ໖໐ ອົງ ມີຈິດລຸດພົ້ນຈາກອາສະວະທັງຫຼາຍ ເພາະບໍ່ຖືໝັ້ນ ຢ່າງນີ້ແລ

**ອັກຄິກຂັນໂທປະມະສູດທີ ໗ ຈົບ**

# ໘. ສຸເນດຕະສູດ

## ວ່າດ້ວຍຄູຊື່ສຸເນດ

[໗໑] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ມີຄູຊື່ສຸເນດ ເປັນເຈົ້າລັດທິຜູ້ປາສະຈາກຄວາມກຳໜັດໃນການທັງຫຼາຍ ມີສາວົກຫຼາຍຮ້ອຍຄົນ ໄດ້ສະແດງທຳແກ່ ສາວົກທັງຫຼາຍ ເພື່ອຄວາມເປັນຜູ້ເກີດໃນພົມມະໂລກ ສາວົກເຫຼົ່າໃດ ເມື່ອຄູສຸເນດ ສະແດງທຳເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ບໍ່ທຳຈິດໃຫ້ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວ ໄດ້ໄປເກີດໃນອະບາຍ

ທຸກຄະຕິ ວິນິບາດ ນະຮົກ ສ່ວນສາວົກເຫຼົ່າໃດ ເມື່ອຄູສຸເນດສະແດງທຳ ເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ໄດ້ທຳຈິດໃຫ້ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວ ໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

ເລື້ອງເຄີຍມີມາແລ້ວ ມີຄູຊື່ມູຄະປັກຂະ ຯລຯ ເລື້ອງເຄີຍມີມາແລ້ວ ມີຄູຊື່ ອະຣະເນມິ ຯລຯ ເລື້ອງເຄີຍມີມາແລ້ວ ມີຄູຊື່ກຸດທາລະ ຯລຯ ເລື້ອງເຄີຍມີມາແລ້ວ ມີຄູ ຊື່ຫັດຖິປາລະ ຯລຯ ເລື້ອງເຄີຍມີມາແລ້ວ ມີຄູຊື່ໂຊຕິປາລະ ຯລຯ ເລື້ອງເຄີຍມີມາແລ້ວ ມີຄູຊື່ອະຣະກະເປັນເຈົ້າລັດທິຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີສາວົກຫຼາຍຮ້ອຍຄົນ ໄດ້ສະແດງທຳແກ່ສາວົກທັງຫຼາຍເພື່ອຄວາມເປັນຜູ້ເກີດໃນພົມມະໂລກ ສາວົກເຫຼົ່າໃດ ເມື່ອຄູອະຣະກະສະແດງທຳເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ບໍ່ທຳຈິດໃຫ້ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວໄດ້ໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ສ່ວນສາວົກເຫຼົ່າໃດ ເມື່ອຄູຊື່ອະຣະກະສະແດງທຳເພື່ອຄວາມເປັນຜູ້ເກີດໃນພົມມະໂລກຢູ່ ໄດ້ທຳຈິດໃຫ້ ເຫຼື້ອມໃສ ສາວົກເຫຼົ່ານັ້ນຫຼັງຈາກຕາຍແລ້ວ ໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນຢ່າງໃດ ຜູ້ໃດຖືກໂທສະປະທຸດສະຮ້າຍເພິ່ງດ່າບໍຣິພາດຄູທັງ ໗ ນີ້ ຜູ້ເປັນເຈົ້າລັດທິຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີບໍລິວານຫຼາຍຮ້ອຍຄົນ ພ້ອມທັງໝູ່ສາວົກ ຜູ້ນັ້ນຈະເພິ່ງປະສົບສິ່ງທີ່ ບໍ່ແມ່ນບຸນຫຼວງຫຼາຍຫຼືບໍ່?

"ເພິ່ງປະສົບ ຂ້ານ້ອຍ"

"ພິກຂຸທັງຫຼາຍ ຜູ້ໃດມີຈິດຖືກໂທສະປະທຸດສະຮ້າຍ ເພິ່ງດ່າເພິ່ງບໍຣິພາດຄູທັງ ໗ ນີ້ ຜູ້ເປັນເຈົ້າລັດທິ ຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີບໍລິວານຫຼາຍຮ້ອຍຄົນ ພ້ອມທັງໝູ່ສາວົກ ຜູ້ນັ້ນເພິ່ງປະສົບສິ່ງທີ່ ບໍ່ແມ່ນບຸນຫຼວງຫຼາຍ ສ່ວນຜູ້ໃດມີຈິດຖືກໂທສະປະທຸດສະຮ້າຍເພິ່ງດ່າບໍຣິພາດບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຄົນດຽວ ຜູ້ນັ້ນຍ່ອມປະສົບ ສິ່ງທີ່ບໍ່ແມ່ນບຸນຫຼາຍກວ່າບຸກຄົນຜູ້ດ່າບໍຣິພາດຄູທັງ ໗ ນັ້ນ ຂໍ້ນັ້ນເພາະເຫດໃດ ເພາະເຮົາບໍ່ກ່າວວ່າການຂຸດກົ່ນຄຸນຄວາມດີຂອງຕົນເຊັ່ນນີ້ ຈະມີພາຍນອກສາດສະໜານີ້ ເໝືອນການ ດ່າການບໍຣິພາດເພື່ອນພົມມະຈາຣີທັງຫຼາຍ

ພິກຂຸທັງຫຼາຍ ເພາະເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ "ຈິດຂອງເຮົາທັງຫຼາຍຈັກບໍ່ຄິດປະທຸດສະຮ້າຍໃນເພື່ອນພົມມະຈາຣີທັງຫຼາຍ" ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ ຢ່າງນີ້ແລ"

**ສຸເນດຕະສູດທີ ໗ ຈົບ**

# ໑໐. ອະຣະກະສູດ

## ວ່າດ້ວຍຄູຊື່ອະຣະກະ

[໗໔] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ມີຄູຊື່ອະຣະກະ ເປັນເຈົ້າລັດທິຜູ້ປາສະຈາກຄວາມກຳໜັດໃນກາມທັງຫຼາຍ ມີສາວົກຫຼາຍຮ້ອຍຄົນ ໄດ້ສະແດງທຳແກ່ສາວົກຢ່າງນີ້ວ່າ “ພາມ ຊີວິດຂອງມະນຸດທັງຫຼາຍມີປະມານໜ້ອຍ ເລັກໜ້ອຍ ວ່ອງໄວ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ບຸກຄົນເພິ່ງຮູ້ດ້ວຍປັນຍາ ເພິ່ງເຮັດກຸສົນ ເພິ່ງປະພຶດພົມມະຈັນ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ

ພາມ ຢາດນ້ຳຄ້າງທີ່ ຍອດຫຍ້າ ເມື່ອດວງອາທິດຂຶ້ນ ກໍເຫືອດແຫ້ງໄປຢ່າງວ່ອງໄວ ຢູ່ໄດ້ບໍ່ດົນ ແມ່ນສັນໃດ ຊີວິດຂອງມະນຸດທັງຫຼາຍທີ່ປຽບດ້ວຍຢາດນ້ຳຄ້າງ ກໍສັນນັ້ນຄືກັນ ເປັນຂອງເລັກໜ້ອຍ ວ່ອງໄວ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ບຸກຄົນເພິ່ງຮູ້ດ້ວຍປັນຍາ ເພິ່ງເຮັດກຸສົນ ເພິ່ງປະພຶດພົມມະຈັນ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ

ພາມ ເມື່ອຝົນເມັດໃຫຍ່ຕົກ ຟອງນ້ຳຍ່ອມແຕກຫາຍໄປຢ່າງວ່ອງໄວ ຄົງຢູ່ໄດ້ບໍ່ດົນ ແມ່ນສັນໃດ ຊີວິດຂອງມະນຸດທັງຫຼາຍທີ່ປຽບດ້ວຍຟອງນ້ຳ ກໍສັນນັ້ນຄືກັນ ເປັນຂອງເລັກໜ້ອຍ ວ່ອງໄວ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ບຸກຄົນເພິ່ງຮູ້ດ້ວຍປັນຍາ ເພິ່ງເຮັດກຸສົນ ເພິ່ງປະພຶດພົມມະຈັນ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ

ພາມ ຮອຍຂີດໃນນ້ຳຍ່ອມຂາດຫາຍໄປຢ່າງວ່ອງໄວ ຄົງຢູ່ໄດ້ບໍ່ດົນ ແມ່ນສັນໃດ ຊີວິດຂອງມະນຸດທັງຫຼາຍທີ່ປຽບດ້ວຍຮອຍຂີດໃນນ້ຳ ກໍສັນນັ້ນຄືກັນ ເປັນຂອງເລັກໜ້ອຍ ວ່ອງໄວ ຯລຯ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ

ພາມ ແມ່ນ້ຳທີ່ໄຫຼມາຈາກພູ ມາຈາກທີ່ໄກ ມີກະແສຊຽວ ພັດສິ່ງທີ່ພາໄປໄດ້ ບໍ່ມີຂະນະເວລາ ຫຼື ຊົ່ວບຶດໜຶ່ງທີ່ມັນຈະຢຸດ ໂດຍທີ່ແທ້ ແມ່ນ້ຳນັ້ນຍ່ອມໄຫຼບ່າເລື້ອຍໄປ ແມ່ນສັນໃດ ຊີວິດຂອງມະນຸດທັງຫຼາຍທີ່ປຽບດ້ວຍແມ່ນ້ຳທີ່ໄຫຼມາຈາກພູ ກໍສັນນັ້ນຄືກັນ ເປັນຂອງເລັກໜ້ອຍ ວ່ອງໄວ ຯລຯ ບໍ່ມີດອກ ສັດທີ່ເກີດມາແລ້ວ ຈະບໍ່ຕາຍ

ພາມ ບຸຣຸດຜູ້ມີກຳລັງອົມກ້ອນນ້ຳລາຍໄວ້ທີ່ປາຍລີ້ນແລ້ວ ເພິ່ງຖົ່ມຖິ້ມໄປໂດຍບໍ່ຍາກປານໃດ ແມ່ນສັນໃດ ຊີວິດຂອງມະນຸດທັງຫຼາຍທີ ປຽບດ້ວຍກ້ອນນ້ຳລາຍ ກໍສັນນັ້ນຄືກັນ ເປັນຂອງເລັກໜ້ອຍ ວ່ອງໄວ ຯລຯ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ

ພາມ ຕອນຊີ້ນທີ່ເຂົາໃສ່ໄວ້ໃນກະທະເຫຼັກທີ່ຖືກເຜົາໄຟຕະຫຼອດທັງວັນ ຍ່ອມຫົດຫາຍໄປຢ່າງວ່ອງໄວ ຄົງຢູ່ໄດ້ບໍ່ດົນ ແມ່ນສັນໃດ ຊີວິດຂອງມະນຸດທັງຫຼາຍທີ່ປຽບດ້ວຍ ຕ່ອນຊີ້ນ ກໍສັນນັ້ນຄືກັນ ເປັນຂອງເລັກໜ້ອຍ ວ່ອງໄວ ຯລຯ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ

ພາມ ແມ່ງົວທີ່ຈະຖືກຂ້າ ຖືກເຂົານຳໄປສູ່ທີ່ຂ້າ ເມື່ອຍົກຕີນຂຶ້ນຢ່າງເວລາໃດ ກໍຍິ່ງໃກ້ຖືກຂ້າ ໃກ້ຕາຍເຂົ້າໄປເວລານັ້ນ ແມ່ນສັນໃດ ຊີວິດຂອງມະນຸດທັງຫຼາຍທີ່ປຽບດ້ວຍແມ່ງົວທີ່ຈະຖືກຂ້າ ກໍສັນນັ້ນຄືກັນ ເປັນຂອງເລັກໜ້ອຍ ວ່ອງໄວ ຯລຯ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ

ພິກຂຸທັງຫຼາຍ ສະໄໝນັ້ນ ມະນຸດທັງຫຼາຍໄດ້ມີອາຍຸປະມານ ໖໐,໐໐໐ ປີ ເດັກຍິງມີອາຍຸ ໕໐໐ ປີ ຈຶ່ງມີສາມີໄດ້ ສະໄໝນັ້ນ ມະນຸດທັງຫຼາຍມີອາພາດພຽງ ໖ ຢ່າງ ເທົ່ານັ້ນ ຄື ໜາວ ຮ້ອນ ຫິວ ກະຫາຍ ປວດອຸດຈາຣະ ປວດປັດສາວະ ພິກຂຸທັງຫຼາຍ ເມື່ອມະນຸດທັງຫຼາຍມີອາຍຸຍືນຢ່າງນີ້ ດຳຣົງຢູ່ໄດ້ນານຢ່າງນີ້ ແລະມີອາພາດໜ້ອຍ ຢ່າງນີ້ ເຫດໃດຄູອະຣະກະນັ້ນຍັງສະແດງທຳແກ່ສາວົກທັງຫຼາຍແບບນີ້ວ່າ “ພາມ ຊີວິດ ຂອງມະນຸດ ມີປະມານໜ້ອຍ ເລັກໜ້ອຍ ວ່ອງໄວ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ບຸກຄົນເພິ່ງຮູ້ດ້ວຍປັນຍາ ເພິ່ງເຮັດກຸສົນ ເພິ່ງປະພຶດພົມມະຈັນ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ”

ພິກຂຸທັງຫຼາຍ ປັດຈຸບັນນີ້ ເມື່ອຈະກ່າວເຖິງຊີວິດນັ້ນໃຫ້ຖືກຕ້ອງ ເພິ່ງກ່າວວ່າ “ຊີວິດຂອງມະນຸດທັງຫຼາຍມີປະມານໜ້ອຍ ເລັກໜ້ອຍ ວ່ອງໄວ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ບຸກຄົນເພິ່ງຮູ້ດ້ວຍປັນຍາ ເພິ່ງເຮັດກຸສົນ ເພິ່ງປະພຶດພົມມະຈັນ ບໍ່ມີດອກ ສັດທີ່ເກີດມາແລ້ວຈະບໍ່ຕາຍ”

ພິກຂຸທັງຫຼາຍ ປັດຈຸບັນນີ້ ຜູ້ມີອາຍຸຍືນຈະຢູ່ໄດ້ ໑໐໐ ປີ ນ້ອຍກວ່ານັ້ນກໍມີ ຫຼາຍກວ່ານັ້ນກໍມີ ສ່ວນຄົນທີ່ຢູ່ໄດ້ເຖິງ ໑໐໐ ປີ ຈະຢູ່ໄດ້ ໓໐໐ ລະດູເທົ່ານັ້ນ ຄື ລະດູໜາວ ໑໐໐ ລະດູຮ້ອນ ໑໐໐ ລະດູຝົນ ໑໐໐ ຄົນທີ່ຢູ່ໄດ້ເຖິງ ໓໐໐ ລະດູ ຈະຢູ່ໄດ້ເຖິງ ໑,໒໐໐ ເດືອນ ຄື ລະດູໜາວ ໔໐໐ ລະດູຮ້ອນ ໔໐໐ ລະດູຝົນ ໔໐໐ ຄົນທີ່ຢູ່ໄດ້ເຖິງ ໑,໒໐໐ ເດືອນ ຈະຢູ່ໄດ້ເຖິງ ໒,໔໐໐ ເຄິ່ງເດືອນ ຄື ລະດູໜາວ ໘໐໐ ເຄິ່ງເດືອນ ລະດູຮ້ອນ ໘໐໐ ເຄິ່ງເດືອນ ລະດູຝົນ ໘໐໐ ເຄິ່ງເດືອນ ຄົນທີ່ຢູ່ໄດ້ເຖິງ ໒,໔໐໐ ເຄິ່ງເດືອນ ຈະຢູ່ໄດ້ເຖິງ ໓໖,໐໐໐ ຣາຕີ ຄື ລະດູໜາວ ໑໒,໐໐໐ ຣາຕີ ລະດູຮ້ອນ ໑໒,໐໐໐ ຣາຕີ ລະດູຝົນ ໑໒,໐໐໐ ຣາຕີ ຄົນທີ່ຢູ່ໄດ້ເຖິງ ໓໖,໐໐໐ ຣາຕີ ຈະບໍຣິໂພກອາຫານໄດ້ ໗໒,໐໐໐ ຄາບ ຄື ລະດູໜາວ ໒໔,໐໐໐ ຄາບ ລະດູຮ້ອນ ໒໔,໐໐໐ ຄາບ ລະດູຝົນ ໒໔,໐໐໐ ຄາບ ນັບລວມ ເຖິງການດື່ມນົມມານດາ ແລະເຫດທີ່ເຮັດໃຫ້ບໍ່ໄດ້ບໍຣິໂພກອາຫານ

ໃນຂໍ້ນັ້ນ ເຫດທີ່ເຮັດໃຫ້ບໍ່ໄດ້ບໍຣິໂພກອາຫານມີດັ່ງນີ້ ຄົນໂກດກໍບໍ່ບໍຣິໂພກອາຫານ ຄົນມີທຸກກໍບໍ່ບໍຣິໂພກອາຫານ ຄົນເຈັບໄຂ້ກໍບໍ່ບໍຣິໂພກອາຫານ ຄົນຮັກສາອຸໂປສົດກໍບໍ່ບໍຣິໂພກອາຫານ ແລະຄົນຫາອາຫານບໍ່ໄດ້ກໍບໍ່ບໍຣິໂພກອາຫານ

ພິກຂຸທັງຫຼາຍ ເຮົາໄດ້ກຳນົດອາຍຸ ກຳນົດປະມານອາຍຸ ກຳນົດລະດູ ກຳນົດປີ ກຳນົດເດືອນ ກຳນົດເຄິ່ງເດືອນ ກຳນົດຣາຕີ ກຳນົດວັນ ກຳນົດອາຫານ ແລະ ກຳນົດອັນຕະລາຍແຫ່ງການບໍຣິໂພກອາຫານຂອງມະນຸດຜູ້ມີອາຍຸ ໑໐໐ ປີ ດ້ວຍປະການ ຢ່າງນີ້ແລ

ພິກຂຸທັງຫຼາຍ ກິດໃດ ທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະອາໄສຄວາມອະນຸເຄາະເພິ່ງເຮັດແກ່ສາວົກທັງຫຼາຍ ກິດນັ້ນ ເຮົາໄດ້ເຮັດແລ້ວແກ່ທ່ານທັງຫຼາຍ ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງ ຢ່າຜະໝາດ ຢ່າເປັນຜູ້ມີວິບປະຕິສານ (ຄວາມຮ້ອນໃຈ) ໃນພາຍຫຼັງເລີຍ ນີ້ເປັນອະນຸສາສະນີຂອງເຮົາເພື່ອທ່ານທັງຫຼາຍ

**ອະຣະກະສູດທີ ໑໐ ຈົບ**

**ມະຫາວັກທີ ໑໐ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ຓ. ວິນະຍະວັກ
## ໝວດວ່າດ້ວຍວິໄນ

## ໑. ປະຖະມະວິນະຍະທະຣະສູດ
### ວ່າດ້ວຍຄຸນສົມບັດຂອງພຣະວິໄນທອນ ສູດທີ ໑

[ກ໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ກ ປະການ ເປັນພຣະວິໄນທອນໄດ້

ທຳ ກ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໖. ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມ ຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
ກ. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ກ ປະການນີ້ແລ ເປັນພຣະວິໄນທອນໄດ້

**ປະຖະມະວິນະຍະທະຣະສູດທີ ໑ ຈົບ**

## ໒. ທຸຕິຍະວິນະຍະທະຣະສູດ
### ວ່າດ້ວຍຄຸນສົມບັດຂອງພຣະວິໄນທອນ ສູດທີ ໒

[ກ໖] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ກ ປະການ ເປັນພຣະວິໄນທອນໄດ້

ທຳ ກ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ຊົງຈຳປາຕິໂມກທັງສອງ[1]ໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ພິຈາລະນາໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ[2]
໖. ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະ ໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ເປັນພຣະວິໄນທອນໄດ້

**ທຸຕິຍະວິນະຍະທະຣະສູດທີ ໒ ຈົບ**

# ໓. ຕະຕິຍະວິນະຍະທະຣະສູດ

## ວ່າດ້ວຍຄຸນສົມບັດຂອງພຣະວິໄນທອນ ສູດທີ ໓

[໗໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ເປັນພຣະວິໄນທອນໄດ້ ທຳ ໗ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ເປັນຜູ້ຕັ້ງໝັ້ນ ບໍ່ງ່ອນແງ່ນໃນວິໄນ[1]
໖. ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ເປັນພຣະວິໄນທອນໄດ້

**ຕະຕິຍະວິນະຍະທະຣະສູດທີ ໓ ຈົບ**

# ໔. ຈະຕຸດຖະວິນະຍະທະຣະສູດ

## ວ່າດ້ວຍຄຸນສົມບັດຂອງພຣະວິໄນທອນ ສູດທີ ໔

[໗໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ເປັນພຣະວິໄນທອນໄດ້ ທຳ ໗ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ[១] ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດ ຢ່າງນີ້
໖. ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳຢ່າງນີ້
໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ເປັນພຣະວິໄນທອນໄດ້

**ຈະຕຸດຖະວິນະຍະທະຣະສູດທີ ໔ ຈົບ**

# ໕. ປະຖະມະວິນະຍະທະຣະໂສພະນະສູດ

## ວ່າດ້ວຍເຫດໃຫ້ພຣະວິໄນທອນສະງ່າງາມ ສູດທີ ໑

[໗໘] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ເປັນພຣະວິໄນທອນ ຍ່ອມສະງ່າງາມ ທຳ ໗ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ

໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ມີສີນ ຯລຯ໑ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໖. ໄດ້ຊານ ໔ ຯລຯ ໄດ້ໂດຍບໍ່ລຳບາກ
໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ເປັນພຣະວິໄນທອນ ຍ່ອມສະງ່າງາມ

**ປະຖະມະວິນະຍະທະຣະໂສພະນະສູດທີ ໕ ຈົບ**

# ໖. ທຸຕິຍະວິນະຍະທະຣະໂສພະນະສູດ

## ວ່າດ້ວຍເຫດໃຫ້ພຣະວິໄນທອນສະງ່າງາມ ສູດທີ ໒

[໗໐] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ເປັນພຣະວິໄນທອນຍ່ອມສະງ່າງາມ ທຳ ໗ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ຊົງຈຳປາຕິໂມກທັງສອງໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ພິຈາລະນາໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ
໖. ໄດ້ຊານ ໔ ຯລຯ ໄດ້ໂດຍບໍ່ລຳບາກ
໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ເປັນພຣະວິໄນທອນ ຍ່ອມສະງ່າງາມ

**ທຸຕິຍະວິນະຍະທະຣະໂສພະນະສູດທີ ໖ ຈົບ**

# ໗. ຕະຕິຍະວິນະຍະທະຣະໂສພະນະສູດ

## ວ່າດ້ວຍເຫດໃຫ້ພຣະວິໄນທອນສະງ່າງາມ ສູດທີ ໓

[໗໑] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການ ເປັນພຣະວິໄນທອນຍ່ອມສະງ່າງາມ ທຳ ໗ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ເປັນຜູ້ຕັ້ງໝັ້ນ ບໍ່ງ່ອນແງ່ນໃນວິໄນ
໖. ໄດ້ຊານ ໔ ຯລຯ ໄດ້ໂດຍບໍ່ລໍາບາກ
໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໗ ປະການນີ້ແລ ເປັນພຣະວິໄນທອນ ຍ່ອມສະງ່າງາມ

**ຕະຕິຍະວິນະຍະທະຣະໂສພະນະສູດທີ ໗ ຈົບ**

# ໙. ຈະຕຸດຖະວິນະຍະທະຣະໂສພະນະສູດ

## ວ່າດ້ວຍເຫດໃຫ້ພຣະວິໄນທອນສະງ່າງາມ ສູດທີ ໔

[໗໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໗ ປະການ ເປັນພຣະວິໄນທອນຍ່ອມສະງ່າງາມ ທໍາ ໗ ປະການ ອັນໃດແດ່ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກລະຫຸກາບັດ
໔. ຮູ້ຈັກຄະຣຸກາບັດ
໕. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດຢ່າງນີ້
໖. ເຫັນໝູ່ສັດຜູ້ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາຢ່າງນີ້
໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທໍາ ໗ ປະການນີ້ແລ ເປັນພຣະວິໄນທອນ ຍ່ອມສະງ່າງາມ

**ຈະຕຸດຖະວິນະຍະທະຣະໂສພະນະສູດທີ ໙ ຈົບ**

# ໙. ສັດຖຸສາສະນະສູດ

## ວ່າດ້ວຍສັດຖຸສາດ

[໗໓] ຄັ້ງນັ້ນແລ ທ່ານພຣະອຸບາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳໂດຍຫຍໍ້ແກ່ຂ້າພຣະອົງ ເຊິ່ງຂ້າພຣະອົງ ເມື່ອໄດ້ຟັງແລ້ວຈະເພິ່ງຫຼີກອອກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ທ່ານຮູ້ທຳເຫຼົ່າໃດວ່າ "ທຳເຫຼົ່ານີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອຄວາມດັບ ເພື່ອສະງົບຣະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ" ທ່ານເພິ່ງຊົງຈຳທຳເຫຼົ່ານັ້ນໄວ້ໃຫ້ດີວ່າ "ນີ້ບໍ່ແມ່ນທຳ ນີ້ບໍ່ແມ່ນວິໄນ ນີ້ບໍ່ແມ່ນສັດຖຸສາດ (ຄຳສອນຂອງພຣະສາດສະດາ)" ແຕ່ທ່ານຮູ້ທຳເຫຼົ່າໃດວ່າ "ທຳເຫຼົ່ານີ້ເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອຄວາມດັບ ເພື່ອສະງົບຣະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ" ທ່ານເພິ່ງຊົງຈຳທຳເຫຼົ່ານັ້ນໄວ້ໃຫ້ດີວ່າ "ນີ້ເປັນທຳ ນີ້ເປັນວິໄນ ນີ້ເປັນສັດຖຸສາດ"

**ສັດຖຸສາສະນະສູດທີ ໙ ຈົບ**

# ໑໐. ອະທິກະຣະນະສະມະຖະສູດ

## ວ່າດ້ວຍອະທິກະຣະນະສະມະຖະທຳ

[໗໔] ພິກຂຸທັງຫຼາຍ ອະທິກະຣະນະສະມະຖະທຳ (ທຳເຄື່ອງຣະງັບອະທິກອນ) ໗ ປະການນີ້ ເພື່ອຣະງັບ ເພື່ອດັບອະທິກອນທີ່ເກີດຂຶ້ນແລ້ວ ໆ

ທຳ ໗ ປະການ ອັນໃດແດ່ ຄື

໑. ສົງເພິ່ງໃຫ້ສຳມຸຂາວິໄນ
໒. ສົງເພິ່ງໃຫ້ສະຕິວິໄນ
໓. ສົງເພິ່ງໃຫ້ອະມູລະຫະວິໄນ
໔. ສົງເພິ່ງໃຫ້ປະຕິນຍາຕະກະຣະນະ
໕. ສົງເພິ່ງໃຫ້ເຍພຸຍຍະສິກາ
໖. ສົງເພິ່ງໃຫ້ຕັດສະປາປິຍະສິກາ

໗. ສົງເພິ່ງໃຫ້ຕິນະວັດຖາຣະກະ

ພິກຂຸທັງຫຼາຍ ອະທິກະຣະນະສະມະຖະທຳ ໗ ປະການນີ້ແລ ເພື່ອຣະງັບເພື່ອດັບອະທິກອນທີ່ເກີດຂຶ້ນແລ້ວ ໆ

**ອະທິກະຣະນະສະມະຖະສູດທີ ໑໐ ຈົບ**

**ວິນະຍະວັກທີ ໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖະມະວິນະຍະທະຣະສູດ | ໒. ທຸຕິຍະວິນະຍະທະຣະສູດ |
| ໓. ຕະຕິຍະວິນະຍະທະຣະສູດ | ໔. ຈະຕຸດຖະວິນະຍະທະຣະສູດ |
| ໕. ປະຖະມະວິນະຍະທະຣະໂສພະນະສູດ | ໖. ທຸຕິຍະວິນະຍະທະຣະໂສພະນະສູດ |
| ໗. ຕະຕິຍະວິນະຍະທະຣະໂສພະນະສູດ | ໙. ຈະຕຸດຖະວິນຍະທະຣະໂສພະນະສູດ |
| ໘. ສັດຖຸສາສະນະສູດ | ໑໐. ອະທິກະຣະນະສະມະຖະສູດ |

# ໘. ສະມະນະວັກ

## ໝວດວ່າດ້ວຍສະມະນະ

# ໑. ພິກຂຸສູດ

## ວ່າດ້ວຍເຫດໃຫ້ໄດ້ຊື່ວ່າພິກຂຸ

[໙໕] ພິກຂຸທັງຫຼາຍ ບຸກຄົນຊື່ວ່າພິກຂຸ ເພາະທຳລາຍທຳ ໗ ປະການໄດ້ທຳ ໗ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ສັກກາຍະທິດຖິ | ໒. ວິຈິກິດສາ |
| ໓. ສີລັບພະຕະປະຣາມາດ | ໔. ຣາຄະ |
| ໕. ໂທສະ | ໖. ໂມຫະ |
| ໗. ມານະ | |

ພິກຂຸທັງຫຼາຍ ບຸກຄົນຊື່ວ່າພິກຂຸ ເພາະທຳລາຍທຳ ໗ ປະການນີ້ແລໄດ້

**ພິກຂຸສູດທີ ໑ ຈົບ**

## ໔. ສະມະນະສູດ

### ວ່າດ້ວຍເຫດໃຫ້ໄດ້ຊື່ວ່າສະມະນະ

[໗໖] ພິກຂຸທັງຫຼາຍ ບຸກຄົນຊື່ວ່າສະມະນະ ເພາະຣະງັບທຳ ໆ ປະການໄດ້

ຯລຯ

**ສະມະນະສູດທີ່ ໔ ຈົບ**

## ໖. ພາມມະນະສູດ

### ວ່າດ້ວຍເຫດໃຫ້ໄດ້ຊື່ວ່າພາມ

[໗໗] ພິກຂຸທັງຫຼາຍ ບຸກຄົນຊື່ວ່າພາມ ເພາະລອຍທຳ ໆ ປະການໄດ້

ຯລຯ

**ພາມມະນະສູດທີ່ ໖ ຈົບ**

## ໘. ໂສຕະຕິກະສູດ

### ວ່າດ້ວຍເຫດໃຫ້ໄດ້ຊື່ວ່າໂສຕະຕິກະ

[໗໗] ພິກຂຸທັງຫຼາຍ ບຸກຄົນຊື່ວ່າໂສຕະຕິກະ ເພາະທຳ ໆ ປະການຮ້ອຍຮັດບໍ່ໄດ້

ຯລຯ

**ໂສຕະຕິກະສູດທີ່ ໘ ຈົບ**

## ໕. ນະຫາຕະກະສູດ

### ວ່າດ້ວຍເຫດໃຫ້ໄດ້ຊື່ວ່ານະຫາຕະກະ

[໗໙] ພິກຂຸທັງຫຼາຍ ບຸກຄົນຊື່ວ່ານະຫາຕະກະ ເພາະລ້າງທຳ ໆ ປະການໄດ້

ຯລຯ

**ນະຫາຕະກະສູດທີ່ ໕ ຈົບ**

## ໖. ເວທະຄູສູດ

### ວ່າດ້ວຍເຫດໃຫ້ໄດ້ຊື່ວ່າເວທະຄູ

[໙໐] ພິກຂຸທັງຫຼາຍ ບຸກຄົນຊື່ວ່າເວທະຄູ ເພາະຮູ້ທຳ ໗ ປະການ

ຯລຯ

**ເວທະຄູສູດທີ ໖ ຈົບ**

## ໗. ອະຣິໂຍສູດ

### ວ່າດ້ວຍເຫດໃຫ້ໄດ້ຊື່ວ່າອະຣິຍະ

[໙໑] ພິກຂຸທັງຫຼາຍ ບຸກຄົນຊື່ວ່າອະຣິຍະ ເພາະກຳຈັດທຳ ໗ ປະການໄດ້

ຯລຯ

**ອະຣິໂຍສູດທີ ໗ ຈົບ**

## ໘. ອະຣະຫາສູດ

### ວ່າດ້ວຍເຫດໃຫ້ໄດ້ຊື່ວ່າອະຣະຫັນ

[໙໘] ພິກຂຸທັງຫຼາຍ ບຸກຄົນຊື່ວ່າອະຣະຫັນ ເພາະເປັນຜູ້ຫ່າງໄກຈາກທຳ ໗ ປະການໄດ້ ທຳ ໗ ປະການ ອັນໃດແດ່ ຄື

໑. ສັກກາຍະທິດຖິ
໒. ສີລັບພະຕະປະຣາມາດ
໕. ໂທສະ
໗. ມານະ
໔. ວິຈິກິດສາ
໔. ຣາຄະ
໖. ໂມຫະ

ພິກຂຸທັງຫຼາຍ ບຸກຄົນຊື່ວ່າອະຣະຫັນ ເພາະເປັນຜູ້ຫ່າງໄກຈາກທຳ ໗ ປະການນີ້ແລ

**ອະຣະຫາສູດທີ ໘ ຈົບ**

# ໙. ອະສັດທຳມະສູດ

## ວ່າດ້ວຍອະສັດທຳ

[໖໓] ພິກຂຸທັງຫຼາຍ ອະສັດທຳ ໗ ປະການນີ້

ອະສັດທຳ ໗ ປະການ ອັນໃດແດ່ ຄື

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີຫິຣິ
໓. ເປັນຜູ້ບໍ່ມີໂອດຕັບປະ
໔. ເປັນຜູ້ມີສຸຕະໜ້ອຍ
໕. ເປັນຜູ້ຂີ້ຄ້ານ
໖. ເປັນຜູ້ຫຼົງລືມສະຕິ
໗. ເປັນຜູ້ມີປັນຍາຊາມ

ພິກຂຸທັງຫຼາຍ ອະສັດທຳ ໗ ປະການນີ້ແລ

**ອະສັດທຳມະສູດທີ ໙ ຈົບ**

# ໑໐. ສັດທຳມະສູດ

## ວ່າດ້ວຍສັດທຳ

[໖໔] ພິກຂຸທັງຫຼາຍ ສັດທຳ ໗ ປະການນີ້

ສັດທຳ ໗ ປະການ ອັນໃດແດ່ ຄື

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີຫິຣິ
໓. ເປັນຜູ້ມີໂອດຕັບປະ
໔. ເປັນພະຫູສູດ
໕. ເປັນຜູ້ຜາຣົບຄວາມພຽນ
໖. ເປັນຜູ້ມີສະຕິ
໗. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ສັດທຳ ໗ ປະການນີ້ແລ

**ສັດທຳມະສູດທີ ໑໐ ຈົບ**

**ສະມະນະວັກທີ ໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໐. ອາຫຸເນີຍຍະວັກ

## ໝວດວ່າດ້ວຍອາຫຸໄນຍະບຸກຄົນ

[໗໕] ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໗ ຈຳພວກໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນຈັກຂຸຢູ່ ຕັ້ງໃຈໝັ້ນເນືອງ ໆ ສະໝ່ຳສະເໝີບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ເຂົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ ໑ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີເປັນນາບຸນອັນປະເສີດຂອງໂລກ

໒. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນຈັກຂຸຢູ່ ຕັ້ງໃຈໝັ້ນເນືອງໆ ສະໝ່ຳສະເໝີບໍ່ຂາດຣະຍະ ມີປັນຍາຢັ່ງຮູ້ເຂົາມີປັນຍາຢັ່ງຮູ້ຄວາມສິ້ນອາສະວະແລະຄວາມສິ້ນຊີວິດ ບໍ່ກ່ອນບໍ່ຫຼັງກັນ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ່ ໒ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

໓. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນຈັກຂຸຢູ່ ຕັ້ງໃຈໝັ້ນເນືອງໆ ສະໝ່ຳສະເໝີບໍ່ຂາດຣະຍະ ມີປັນຍາຫຢັ່ງຮູ້ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປເຂົາຈຶ່ງເປັນອັນຕະຣາປະຣິນິບພາຍີ ພິກຂຸທັງຫຼາຍ ນີ້

ເປັນບຸກຄົນຈຳພວກທີ ໖ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ຯລຯ

໔. ບຸກຄົນບາງຄົນໃນໂລກນີ້ ຯລຯ ເປັນອຸປະຫັດຈະປະຣິນິບພາຍີ ຯລຯ
໕. ບຸກຄົນບາງຄົນໃນໂລກນີ້ ຯລຯ ເປັນອະສັງຂາຣະປະຣິນິບພາຍີ ຯລຯ
໖. ບຸກຄົນບາງຄົນໃນໂລກນີ້ ຯລຯ ເປັນສະສັງຂາຣະປະຣິນິບພາຍີ ຯລຯ

໗. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ ມີສັນຍາວ່າບໍ່ທ່ຽງ ຮູ້ວ່າເປັນສະພາວະບໍ່ທ່ຽງໃນຈັກຂຸຢູ່ ຕັ້ງໃຈໝັ້ນເນືອງໆ ສະໝ່ຳສະເໝີບໍ່ຂາດຣະຍະ ມີປັນຍາຫຍັ່ງຮູ້ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປເຂົາຈຶ່ງເປັນອຸດທັງໂສຕະອະກະນິດຖະຄາມີ ພິກຂຸທັງຫຼາຍ ນີ້ເປັນບຸກຄົນຈຳພວກທີ່ ໗ ຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ (໑)

[໙໖-໖໔໔] ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໗ ຈຳພວກໃດແດ່ ຄື

ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຄວາມເປັນທຸກ ຯລຯ ໃນຈັກຂຸຢູ່

ຯລຯ ພິຈາລະນາເຫັນຄວາມເປັນອະນັດຕາ ຯລຯ ໃນຈັກຂຸຢູ່
ຯລຯ ພິຈາລະນາເຫັນຄວາມສິ້ນໄປ ຯລຯ ໃນຈັກຂຸຢູ່
ຯລຯ ພິຈາລະນາເຫັນຄວາມເສື່ອມໄປ ຯລຯ ໃນຈັກຂຸຢູ່
ຯລຯ ພິຈາລະນາເຫັນຄວາມຄາຍອອກ ຯລຯ ໃນຈັກຂຸຢູ່
ຯລຯ ພິຈາລະນາເຫັນຄວາມດັບໄປ ຯລຯ ໃນຈັກຂຸຢູ່
ຯລຯ ພິຈາລະນາເຫັນຄວາມສະລະຄືນ ຯລຯ ໃນຈັກຂຸຢູ່ ຯລຯ (໔-໗)

ໃນໂສຕະຢູ່ ຯລຯ ໃນຄານະຢູ່ ຯລຯ ໃນຊິວຫາຢູ່ ຯລຯ ໃນກາຍຢູ່ ຯລຯ ໃນໃຈຢູ່ ຯລຯ

(໙-໔໗)

ໃນຮູບຢູ່ ຯລຯ ໃນສຽງຢູ່ ຯລຯ ໃນກິ່ນຢູ່ ຯລຯ ໃນຣົດຢູ່ ຯລຯ ໃນໂຜດຖັບພະຢູ່ ຯລຯໃນທໍາມາຣົມຢູ່ ຯລຯ (໔໙-໙໖)

ໃນຈັກຂຸວິນຍານຢູ່ ຯລຯ ໃນໂສຕະວິນຍານຢູ່ ຯລຯ ໃນຄານະວິນຍານຢູ່ ຯລຯໃນຊິວຫາວິນຍານຢູ່ ຯລຯ ໃນກາຍວິນຍານຢູ່ ຯລຯ ໃນມະໂນວິນຍານຢູ່ ຯລຯ (໙໗-໑໔໔)

ໃນຈັກຂຸສໍາຜັດຢູ່ ຯລຯ ໃນໂສຕະສໍາຜັດຢູ່ ຯລຯ ໃນຄານະສໍາຜັດຢູ່ ຯລຯ ໃນຊິວຫາສໍາຜັດຢູ່ ຯລຯ ໃນກາຍສໍາຜັດຢູ່ ຯລຯ ໃນມະໂນສໍາຜັດຢູ່ ຯລຯ (໑໔໕-໑໙໒)

ໃນເວທະນາທີ່ເກີດຈາກຈັກຂຸສໍາຜັດຢູ່ ຯລຯ ໃນເວທະນາທີ່ເກີດຈາກໂສຕະສໍາຜັດຢູ່ ຯລຯໃນເວທະນາທີ່ເກີດຈາກຄານະສໍາຜັດຢູ່ ຯລຯ ໃນເວທະນາທີ່ເກີດຈາກຊິວຫາສໍາຜັດຢູ່ ຯລຯ ໃນເວທະນາທີ່ເກີດຈາກກາຍສໍາຜັດຢູ່ ຯລຯ ໃນເວທະນາທີ່ເກີດຈາກມະໂນສໍາຜັດຢູ່ ຯລຯ (໑໙໓-໒໔໐)

ໃນຮູບສັນຍາຢູ່ ຯລຯ ໃນສັດທະສັນຍາຢູ່ ຯລຯ ໃນຄັນທະສັນຍາຢູ່ ຯລຯ ໃນຣະສະສັນຍາຢູ່ຯລຯ ໃນໂຜດຖັບພະສັນຍາຢູ່ ຯລຯ ໃນທໍາມະສັນຍາຢູ່ ຯລຯ (໒໔໑-໒໘໘)

ໃນຮູບສັນເຈຕະນາຢູ່ ຯລຯ ໃນສັດທະສັນເຈຕະນາຢູ່ ຯລຯໃນຄັນທະສັນເຈຕະນາຢູ່ ຯລຯ ໃນຣະສະສັນເຈຕະນາຢູ່ ຯລຯ ໃນໂຜດຖັບພະສັນເຈຕະນາຢູ່ ຯລຯ ໃນທໍາມະສັນເຈຕະນາຢູ່ ຯລຯ (໒໘໙໓໓໖)

ໃນຮູບຕັນຫາຢູ່ ຯລຯ ໃນສັດທະຕັນຫາຢູ່ ຯລຯ ໃນຄັນທະຕັນຫາຢູ່ ຯລຯ ໃນຣະສະຕັນຫາຢູ່ ຯລຯ ໃນໂຜດຖັບພະຕັນຫາຢູ່ ຯລຯ ໃນທໍາມະຕັນຫາຢູ່ ຯລຯ (໓໓໗-໓໘໔)

ໃນຮູບວິຕົກຢູ່ຯລຯ ໃນສັດທະວິຕົກຢູ່ ຯລຯ ໃນຄັນທະວິຕົກຢູ່ ຯລຯ ໃນຣະສະວິຕົກຢູ່ ຯລຯ ໃນໂຜດຖັບພະວິຕົກຢູ່ ຯລຯ ໃນທໍາມະວິຕົກຢູ່ ຯລຯ (໓໘໕-໔໓໒)

ໃນຮູບວິຈານຢູ່ ຯລຯ ໃນສັດທະວິຈານຢູ່ ຯລຯ ໃນຄັນທະວິຈານຢູ່ ຯລຯ ໃນຣະສະວິຈານຢູ່ ໃນໂຜດຖັບພະວິຈານຢູ່ ຯລຯ ໃນທໍາມະວິຈານຢູ່ ຯລຯ (໔໓໓-໔໘໐)

ຯລຯ ພິຈາລະນາເຫັນຄວາມ ບໍ່ທ່ຽງ ຯລຯ ໃນຮູບຂັນຢູ່
ຯລຯ ພິຈາລະນາເຫັນຄວາມ ເປັນທຸກ ຯລຯ
ຯລຯ ພິຈາລະນາເຫັນຄວາມ ເປັນອະນັດຕາ ຯລຯ
ຯລຯ ພິຈາລະນາເຫັນຄວາມ ສິ້ນໄປ ຯລຯ
ຯລຯ ພິຈາລະນາເຫັນຄວາມ ເສື່ອມໄປ ຯລຯ

ຯລຯ ພິຈາລະນາເຫັນຄວາມ ຄາຍອອກ ຯລຯ
ຯລຯ ພິຈາລະນາເຫັນຄວາມ ດັບໄປ ຯລຯ
ຯລຯ ພິຈາລະນາເຫັນຄວາມ ສະລະຄືນ ຯລຯ

ໃນເວທະນາຂັນຢູ່ ຯລຯ ໃນສັນຍາຂັນຢູ່ ຯລຯ ໃນສັງຂານຂັນຢູ່ ຯລຯ ໃນວິນຍານຂັນຢູ່ຯລຯ (໔໗໑-໕໘໐)

ພິກຂຸທັງຫຼາຍ ບຸກຄົນ ၇ ຈຳພວກນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ໃນອາຫຸເນີຍຍະວັກນີ້ ມີໝວດທຳດັ່ງນີ້ ຄື
ທະວານ ໖ ອາລົມ ໖ ວິນຍານ ໖ ຜັດສະ ໖ ເວທະນາ ໖
ສັນຍາ ໖ ສັນເຈຕະນາ ໖ ຕັນຫາ ໖ ວິຕົກ ໖ ວິຈານ ໖ ແລະຂັນ ໕
ແຕ່ລະປະການໃນທຳແຕ່ລະໝວດມີພຣະສູດ ໗ ສູດ
ມີສະພາວະທຳ ໗ ປະການ ຄື
ຄວາມບໍ່ທ່ຽງ ຄວາມເປັນທຸກ ຄວາມເປັນອະນັດຕາ
ຄວາມສິ້ນໄປ ຄວາມເສື່ອມໄປ ຄວາມຄາຍກຳໜັດ
ຄວາມດັບ ແລະຄວາມສະລະຄືນ
ຈັດເປັນພຣະສູດເບື້ອງຕົ້ນ ໑໖ ສູດ
ໂດຍປະກອບການພິຈາລະນາໄປຕາມລຳດັບ ປະການລະ ໗ ສູດ
ເມື່ອລວມກັນທັງໝົດ ໄດ້ພຣະສູດ ໕໘໗ ສູດ

**ອາຫຸເນີຍຍະວັກທີ ໑໐ ຈົບ**

# ຣາຄະເປີຍຍາລະ

[໖໘໓] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ၇ ປະການ ເພື່ອຮູ້ຍິ່ງຣາຄະ (ຄວາມກຳໜັດ) ທຳ ၇ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຣະນຶກໄດ້)

ຯລຯ

၇. ອຸເປກຂາສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມວາງໃຈເປັນກາງ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໗ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໑)

[໖໘໔] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໗ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໗ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)
໒. ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາແຫ່ງທຳທັງປວງ)
໓. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)
໔. ອາທີນະວະສັນຍາ (ກຳນົດໝາຍໂທດທຸກຂອງກາຍອັນມີຄວາມເຈັບໄຂ້ຕ່າງໆ)
໕. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໖. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປະນີດ)
໗. ນິໂຣທະສັນຍາ (ກຳນົດໝາຍນິໂຣດວ່າເປັນທຳລະອຽດປະນີດ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໗ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໒)

[໖໘໕] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໗ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໗ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)
໒. ມໍຣະນະສັນຍາ (ຯລຯຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)
໓. ອາຫາເຣ ປະຕິກູນສັນຍາ (ຯລຯຄວາມປະຕິກູນໃນອາຫານ)
໔. ສັບພະໂລເກອະນະພິຣະຕະສັນຍາ (ຯລຯຄວາມບໍ່ໜ້າເພີດເພີນໃນໂລກທັງປວງ)
໕. ອະນິດຈະສັນຍາ (ຯລຯຄວາມບໍ່ທ່ຽງແທ່ງສັງຂານ)
໖. ອະນິດເຈ ທຸກຂະສັນຍາ (ຯລຯຄວາມເປັນທຸກໃນຄວາມບໍ່ທ່ຽງແທ່ງສັງຂານ)
໗. ທຸກເຂ ອະນັດຕະສັນຍາ (ຯລຯຄວາມເປັນອະນັດຕາໃນຄວາມເປັນທຸກ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໗ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໓)

[໖໘໖-໖໕໒] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໗ ປະການ ເພື່ອກຳນົດຮູ້ຣາຄະ

ຯລຯ ເພື່ອຄວາມສິ້ນຣາຄະ
ຯລຯ ເພື່ອລະຣາຄະ
ຯລຯ ເພື່ອຄວາມສິ້ນໄປແຫ່ງຣາຄະ
ຯລຯ ເພື່ອຄວາມເສື່ອມໄປແຫ່ງຣາຄະ

ฯລฯ ເພື່ອຄວາມຄາຍອອກແຫ່ງຣາຄະ
ฯລฯ ເພື່ອຄວາມດັບໄປແຫ່ງຣາຄະ
ฯລฯ ເພື່ອຄວາມສະລະຣາຄະ
ฯລฯ ເພື່ອຄວາມສະລະຄືນຣາຄະฯລฯ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໆ ປະການນີ້ ເພື່ອຄວາມສະລະຄືນຣາຄະ (໔-໖໐)

[໖໕໖-໑໑໖໘] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໔ ປະການ ເພື່ອຮູ້ຍິ່ງ

ໂທສະ (ຄວາມຄິດປະທຸດສະຮ້າຍ)
ฯລฯ ເພື່ອກຳນົດຮູ້ໂທສະ
ฯລฯ ເພື່ອຄວາມສິ້ນໂທສະ
ฯລฯ ເພື່ອລະໂທສະ
ฯລฯ ເພື່ອຄວາມສິ້ນໄປແຫ່ງໂທສະ
ฯລฯ ເພື່ອຄວາມເສື່ອມໄປແຫ່ງໂທສະ
ฯລฯ ເພື່ອຄວາມຄາຍອອກແຫ່ງໂທສະ
ฯລฯ ເພື່ອຄວາມດັບໄປແຫ່ງໂທສະ
ฯລฯ ເພື່ອຄວາມສະລະໂທສະ

ฯລฯ ເພື່ອຄວາມສະລະຄືນໂທສະ ฯລฯ ໂມຫະ (ຄວາມຫຼົງ) ฯລฯ ໂກທະ (ຄວາມໂກດ) ฯລฯ ອຸປະນາຫະ (ຄວາມຜູກໂກດ) ฯລฯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ฯລฯ ປະລາສະ (ຄວາມຕີສະເໝີ) ฯລฯ ອິດສາ (ຄວາມຣິສະຍາ) ฯລฯ ມັດສະຣິຍະ (ຄວາມຂີ້ຖີ່) ฯລฯ ມາຍາ (ມານຍາ) ฯລฯ ສາເຖຍຍະ (ຄວາມໂອ້ອວດ) ฯລฯ ຖຳພະ (ຄວາມຫົວດື້) ฯລฯ ສາຣຳພະ (ຄວາມແຂ່ງດີ) ฯລฯ ມານະ (ຄວາມຖືຕົວ) ฯລฯ ອະຕິມານະ (ຄວາມດູໝິ່ນເຂົາ) ฯລฯ ມະທະ (ຄວາມມົວເມົາ) ฯລฯ ປະມາທະ (ຄວາມຜະໝາດ) ฯລฯ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໖ ປະການນີ້ແລ ເພື່ອຄວາມສະລະຄືນປະມາທະ (໖໑-໕໑໐)

ພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊື່ນຊົມພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ

**ຣາຄະເປີຍຍາລະ ຈົບ**

**ສັດຕະກະນິບາດ ຈົບບໍລິບູນ**

# ພຣະສຸດຕັນຕະປີດົກ

## ອັງຄຸດຕະຣະນິກາຍ ອັດຖະກະນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ**

## ໑. ປະຖະມະປັນນາດ

## ໑. ເມດຕາວັກ

**ໝວດວ່າດ້ວຍເມດຕາ**

## ໑. ເມດຕາສູດ

### ວ່າດ້ວຍອານິສົງແຫ່ງເມດຕາເຈໂຕວິມຸດຕິ

[໑] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນທີ່ນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ວ່າ

ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ເພິ່ງຫວັງໄດ້ ອານິສົງ ໘ ປະການ

ອານິສົງ ໘ ປະການ ອັນໃດແດ່ ຄື

໑. ຫຼັບເປັນສຸກ
໒. ຕື່ນເປັນສຸກ
໓. ບໍ່ຝັນຮ້າຍ

໔. ເປັນທີ່ຮັກຂອງມະນຸດທັງຫຼາຍ

໕. ເປັນທີ່ຮັກຂອງອະມະນຸດທັງຫຼາຍ

໖. ເທວະດາທັງຫຼາຍຮັກສາ

໗. ໄຟ ຢາພິດ ຫຼື ອາວຸດເຮັດຫຍັງບໍ່ໄດ້

໘. ເມື່ອຍັງບໍ່ແທງຕະຫຼອດຄຸນວິເສດ°ຍ່ອມເຂົ້າເຖິງພົມມະໂລກ

ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນ ເໝືອນຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ເພິ່ງຫວັງໄດ້ ອານິສົງ ໘ ປະການນີ້

ຜູ້ມີສະຕິຕັ້ງໝັ້ນ ຈະເລີນເມດຕາແຜ່ໄປບໍ່ມີປະມານ
ພິຈາລະນາເຫັນທຳເປັນທີ່ສິ້ນອຸປະທິ
ຍ່ອມມີສັງໂຍດເບົາບາງ
ຫາກບຸກຄົນມີຈິດບໍ່ຄິດປະທຸດສະຮ້າຍສັດແມ່ນຊີວິດດຽວ
ຈະເລີນເມດຕາເປັນປະຈຳຢູ່
ກໍເປັນຜູ້ຊື່ວ່າສະຫຼາດເພາະການຈະເລີນເມດຕານັ້ນ
ພຣະອະຣິຍະບຸກຄົນຜູ້ມີໃຈອະນຸເຄາະໝູ່ສັດທຸກໝູ່ເຫຼົ່າ
ຊື່ວ່າສັ່ງສົມບຸນໄວ້ຫຼວງຫຼາຍ
ພຣະຣາຊາຜູ້ຊົງທຳເຊັ່ນກັບລືສີ
ຊົງຊະນະໃຈໝູ່ສັດທົ່ວແຜ່ນດິນດ້ວຍຣາດຊະທຳ
ຊົງບູຊາຍັນ ຄື ສັດສະເມທະ ປຸຣິສະເມທະ
ສຳມາປາສະ ວາຊະເປີຍຍະ ແລະນິຣັກຄະລະ ສະເດັດທ່ຽວໄປ
ຍັນເຫຼົ່ານັ້ນ ຍັງບໍ່ເຖິງສ່ຽວທີ ໑໖
ແຫ່ງເມດຕາເຈໂຕວິມຸດຕິທີ່ບຸກຄົນຈະເລີນດີແລ້ວ
ເໝືອນແສງຂອງໝູ່ດວງດາວບໍ່ເຖິງສ່ຽວທີ ໑໖ ແຫ່ງແສງຈັນນັ້ນ
ຜູ້ມີເມດຕາໃນສັດທຸກໝູ່ເຫຼົ່າ
ຈະບໍ່ຂ້າເອງ ບໍ່ໃຊ້ໃຫ້ຜູ້ອື່ນຂ້າ ບໍ່ຊະນະເອງ ບໍ່ໃຊ້ໃຫ້ຜູ້ອື່ນຊະນະ
ຍ່ອມເປັນຜູ້ບໍ່ມີເວນກັບຜູ້ໃດ

**ເມດຕາສູດທີ ໑ ຈົບ**

# ໘. ປັນຍາສູດ

## ວ່າດ້ວຍເຫດປັດໄຈທີ່ໃຫ້ໄດ້ປັນຍາ

[໘] ພິກຂຸທັງຫຼາຍ ເຫດປັດໄຈ ໗ ປະການນີ້ ຍ່ອມເປັນໄປເພື່ອໄດ້ປັນຍາ ອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ ແຫ່ງປັນຍາທີ່ໄດ້ແລ້ວ ເຫດປັດໄຈ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ອາໄສພຣະສາດສະດາ ຫຼື ເພື່ອນພົມມະຈາຣີອົງໃດອົງໜຶ່ງ ຜູ້ຕັ້ງຢູ່ໃນຖານະເປັນຄູເປັນທີ່ເຂົ້າໄປຕັ້ງຫິຣິໂອດຕັບປະ ຄວາມຮັກ ແລະຄວາມເຄົາລົບຢ່າງແຮງກ້າ ນີ້ເປັນເຫດປັດໄຈທີ ໑ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຍິ່ງຂຶ້ນໄປໄພບູນ ຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໒. ອາໄສພຣະສາດສະດາ ຫຼື ເພື່ອນພົມມະຈາຣີອົງໃດອົງໜຶ່ງ ຜູ້ຕັ້ງຢູ່ໃນຖານະເປັນຄູເປັນທີ່ ເຂົ້າໄປຕັ້ງຫິຣິໂອດຕັບປະ ຄວາມຮັກແລະຄວາມເຄົາລົບ ຢ່າງແຮງກ້າ ທ່ານເຂົ້າໄປຫາແລ້ວສອບສວນ ໄຕ່ຖາມທ່ານເຫຼົ່ານັ້ນ ຕາມເວລາອັນສົມຄວນວ່າ “ທ່ານຜູ້ຈະເລີນ ພຣະພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຣະພຸດທະພົດນີ້ເປັນແນວໃດ?” ທ່ານເຫຼົ່ານັ້ນຍ່ອມເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງ ນີ້ເປັນເຫດປັດໄຈທີ ໒ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ ແຫ່ງປັນຍາທີ່ໄດ້ແລ້ວ

໓. ໄດ້ຟັງທຳນັ້ນແລ້ວ ຍ່ອມທຳຄວາມສະງົບ ໒ ຢ່າງ ຄື ຄວາມສະງົບກາຍ ແລະຄວາມສະງົບໃຈໃຫ້ເຖິງພ້ອມ ນີ້ເປັນເຫດປັດໄຈທີ ໓ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນ ທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໔. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ເປັນເຫດປັດໄຈທີ ໔ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ ແຫ່ງປັນຍາທີ່ໄດ້ແລ້ວ

໕. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດ

ຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ຊົງຈໍາໄວ້ໄດ້ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີ ດ້ວຍທິດຖິ ນີ້ເປັນເຫດປັດໄຈທີ ໕ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໖. ເປັນຜູ້ພາຣົບຄວາມພຽນເພື່ອລະອະກຸສົນທໍາ ເພື່ອໃຫ້ກຸສົນທໍາເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທໍາ ທັງຫຼາຍຢູ່ ນີ້ເປັນເຫດປັດໄຈທີ ໖ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໗. ຢູ່ໃນທີ່ ປະຊຸມສົງ ບໍ່ເວົ້າເລື້ອງລາວຕ່າງໆ ບໍ່ເວົ້າເດຍຣັດສານກະຖາ ກ່າວທໍາເອງ ເຊື້ອເຊີນຜູ້ອື່ນໃຫ້ກ່າວ ແລະບໍ່ດູໝິ່ນການນິ່ງຢ່າງພຣະອະຣິຍະ ນີ້ເປັນເຫດປັດໄຈທີ ໗ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປໄພບູນ ຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

໘. ເປັນຜູ້ມີປົກກະຕິເຫັນຄວາມເກີດຂຶ້ນ ແລະຄວາມເສື່ອມໄປໃນອຸປາທານຂັນ ໕ ຢູ່ວ່າ "ຮູບເປັນຢ່າງນີ້ ຄວາມເກີດຂຶ້ນແຫ່ງຮູບເປັນຢ່າງນີ້ ຄວາມດັບແຫ່ງຮູບເປັນຢ່າງນີ້ ເວທະນາເປັນຢ່າງນີ້ ฯລฯ ສັນຍາເປັນຢ່າງນີ້ ฯລฯ ສັງຂານເປັນຢ່າງນີ້ ฯລฯ ວິນຍານເປັນຢ່າງນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນຢ່າງນີ້ ຄວາມດັບແຫ່ງວິນຍານເປັນຢ່າງນີ້" ນີ້ເປັນເຫດປັດໄຈທີ ໘ ທີ່ເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງປັນຍາທີ່ໄດ້ແລ້ວ

ເພື່ອນພົມມະຈາຣີຍ່ອມສັນເສີນພິກຂຸນັ້ນຢ່າງນີ້ວ່າ

໑. ທ່ານຜູ້ມີອາຍຸນີ້ອາໄສພຣະສາດສະດາ ຫຼື ເພື່ອນພົມມະຈາຣີອົງໃດອົງໜຶ່ງ ຜູ້ຕັ້ງຢູ່ໃນຖານະເປັນຄູ ເປັນທີ່ເຂົ້າໄປຕັ້ງຫິຣິໂອດຕັບປະ ຄວາມຮັກ ແລະ ຄວາມເຄົາລົບຢ່າງແຮງກ້າ ທ່ານຜູ້ນີ້ຍ່ອມຮູ້ສິ່ງທີ່ຄວນຮູ້ ເຫັນສິ່ງທີ່ຄວນເຫັນເປັນແນ່ແທ້ ນີ້ເປັນທໍາທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໒. ທ່ານຜູ້ນີ້ອາໄສພຣະສາດສະດາ ຫຼື ເພື່ອນພົມມະຈາຣີອົງໃດອົງໜຶ່ງ ຜູ້ຕັ້ງຢູ່ໃນຖານະເປັນຄູ ເປັນທີ່ເຂົ້າໄປຕັ້ງຫິຣິໂອດຕັບປະ ຄວາມຮັກ ແລະຄວາມເຄົາລົບຢ່າງແຮງກ້າ ເຂົ້າໄປຫາແລ້ວສອບສວນ ໄຕ່ຖາມທ່ານເຫຼົ່ານັ້ນ ຕາມເວລາອັນສົມຄວນວ່າ "ທ່ານຜູ້ຈະເລີນ ພຣະພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຣະພຸດທະພົດນີ້ເປັນແນວໃດ?" ທ່ານເຫຼົ່ານັ້ນຍ່ອມເປີດເຜີຍທໍາທີ່ຍັງບໍ່ໄດ້ເປີດເຜີຍ ເຮັດໃຫ້ງ່າຍເຊິ່ງທໍາທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະ ບັນເທົາຄວາມ

ສິງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງ ທ່ານຜູ້ນີ້ຍ່ອມຮູ້ ສິ່ງທີ່ຄວນຮູ້ ເຫັນສິ່ງທີ່ຄວນເຫັນເປັນແນ່ແທ້ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໓. ທ່ານຜູ້ນີ້ໄດ້ຟັງທຳນັ້ນແລ້ວ ຍ່ອມທຳຄວາມສະງົບ ໒ ຢ່າງ ຄື ຄວາມສະງົບກາຍ ແລະຄວາມສະງົບໃຈໃຫ້ເຖິງພ້ອມ ທ່ານຜູ້ນີ້ຍ່ອມຮູ້ສິ່ງທີ່ຄວນຮູ້ ເຫັນສິ່ງທີ່ຄວນເຫັນເປັນແນ່ແທ້ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໔. ທ່ານຜູ້ນີ້ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍ ອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາ ຢູ່ໃນສິກຂາບົດທັງຫຼາຍ ທ່ານຜູ້ນີ້ຍ່ອມຮູ້ສິ່ງທີ່ຄວນຮູ້ ເຫັນສິ່ງທີ່ຄວນເຫັນເປັນແນ່ແທ້ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນ ທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນ ອັນດຽວກັນ

໕. ທ່ານຜູ້ນີ້ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳ ທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີ ດ້ວຍທິດຖິ ທ່ານຜູ້ນີ້ຍ່ອມຮູ້ສິ່ງທີ່ຄວນຮູ້ ເຫັນສິ່ງທີ່ຄວນເຫັນເປັນແນ່ແທ້ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໖. ທ່ານຜູ້ນີ້ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳທັງຫຼາຍຢູ່ ທ່ານຜູ້ນີ້ຍ່ອມຮູ້ສິ່ງທີ່ຄວນຮູ້ ເຫັນສິ່ງທີ່ຄວນເຫັນເປັນແນ່ແທ້ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໗. ທ່ານຜູ້ນີ້ຢູ່ໃນທີ່ປະຊຸມສົງ ບໍ່ເວົ້າເລື້ອງລາວຕ່າງ ໆ ບໍ່ເວົ້າເດຍຣັດສານກະຖາ ກ່າວທຳເອງ ເຊື້ອເຊີນຜູ້ອື່ນໃຫ້ກ່າວ ແລະບໍ່ດູໝິ່ນການນິ່ງຢ່າງພຣະອະຣິຍະ ທ່ານຜູ້ນີ້ຍ່ອມຮູ້ສິ່ງທີ່ຄວນຮູ້ ເຫັນສິ່ງທີ່ຄວນເຫັນເປັນແນ່ແທ້ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໘. ທ່ານຜູ້ນີ້ເປັນຜູ້ມີປົກກະຕິເຫັນຄວາມເກີດຂຶ້ນ ແລະຄວາມເສື່ອມໄປໃນອຸປາທານຂັນ ໕ ຢູ່ວ່າ "ຮູບເປັນຢ່າງນີ້ ຄວາມເກີດຂຶ້ນແຫ່ງຮູບເປັນຢ່າງນີ້ ຄວາມດັບແຫ່ງຮູບເປັນຢ່າງນີ້ ເວທະນາ

ເປັນຢ່າງນີ້ ຯລຯ ສັນຍາເປັນຢ່າງນີ້ ຯລຯ ສັງຂານເປັນຢ່າງນີ້ ຯລຯ ວິນຍານເປັນຢ່າງນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນຢ່າງນີ້ ຄວາມດັບແຫ່ງວິນຍານເປັນຢ່າງນີ້" ທ່ານຜູ້ນີ້ຍ່ອມຮູ້ສິ່ງທີ່ຄວນຮູ້ເຫັນສິ່ງທີ່ ຄວນເຫັນເປັນແນ່ແທ້ ນີ້ເປັນທຳທີ່ເປັນໄປ ເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍົກຍ້ອງ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

ພິກຂຸທັງຫຼາຍ ເຫດປັດໄຈ ໘ ປະການນີ້ແລ ຍ່ອມເປັນໄປເພື່ອໄດ້ປັນຍາອັນເປັນເບື້ອງຕົ້ນແຫ່ງພົມມະຈັນທີ່ຍັງບໍ່ໄດ້ ເພື່ອຄວາມຮູ້ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ ແຫ່ງປັນຍາທີ່ໄດ້ແລ້ວ

**ປັນຍາສູດທີ ໘ ຈົບ**

# ໒. ປະຖະມະອັບປິຍະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເປັນທີ່ຮັກແລະບໍ່ເປັນທີ່ຮັກ ສູດທີ ໑

[໒] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໘ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ສັນເສີນຜູ້ບໍ່ເປັນທີ່ຮັກ
໒. ມຸ້ງລາບ
໓. ບໍ່ມີຫິຣິ
໗. ມີຄວາມປາຖະໜາຊົ່ວ
໘. ຕິຕຽນຜູ້ເປັນທີ່ຮັກ
໔. ມຸ້ງສັກກາຣະ
໖. ບໍ່ມີໂອດຕັບປະ
໘. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການນີ້ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໘ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ສັນເສີນຜູ້ບໍ່ເປັນທີ່ຮັກ
໒. ບໍ່ມຸ້ງລາບ
໓. ມີຫິຣິ
໗. ມີຄວາມມັກໜ້ອຍ
໘. ບໍ່ຕິຕຽນຜູ້ເປັນທີ່ຮັກ
໔. ບໍ່ມຸ້ງສັກກາຣະ
໖. ມີໂອດຕັບປະ
໘. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການນີ້ແລ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ປະຖະມະອັບປິຍະສູດທີ ໓ ຈົບ**

# ໔. ທຸຕິຍະອັບປິຍະສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເປັນທີ່ຮັກແລະບໍ່ເປັນທີ່ຮັກ ສູດທີ ໔

[໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໘ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ມຸ້ງລາບ
໒. ມຸ້ງສັກກາຣະ
໓. ມຸ້ງຊື່ສຽງ
໔. ບໍ່ຮູ້ຈັກການ
໕. ບໍ່ຮູ້ຈັກປະມານ
໖. ບໍ່ສະອາດ
໗. ເວົ້າຫຼາຍ
໘. ດ່າບໍຣິພາດເພື່ອນພົມມະຈາຣີ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການນີ້ແລ ຍ່ອມບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈ ບໍ່ເປັນທີ່ເຄົາລົບ ແລະບໍ່ເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ ທຳ ໘ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ມຸ້ງລາບ
໒. ບໍ່ມຸ້ງສັກກາຣະ
໓. ບໍ່ມຸ້ງຊື່ສຽງ
໔. ຮູ້ຈັກການ
໕. ຮູ້ຈັກປະມານ
໖. ສະອາດ
໗. ບໍ່ເວົ້າຫຼາຍ
໘. ເປັນຜູ້ບໍ່ດ່າບໍຣິພາດເພື່ອນພົມມະຈາຣີ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການນີ້ ຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ

**ທຸຕິຍະອັບປິຍະສູດທີ ໔ ຈົບ**

# ๕. ປະຖະມະໂລກະທຳມະສູດ

## ວ່າດ້ວຍໂລກກະທຳ ສູດທີ ໑

[໕] ພິກຂຸທັງຫຼາຍ ໂລກກະທຳ ໘ ປະການນີ້ ຍ່ອມໝຸນໄປຕາມໂລກ ແລະໂລກກໍໝຸນໄປຕາມໂລກກະທຳ ໘ ປະການ

ໂລກກະທຳ ໘ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ລາບ | ໒. ເສື່ອມລາບ |
| ໓. ຍົດ | ໔. ເສື່ອມຍົດ |
| ໕. ນິນທາ | ໖. ສັນເສີນ |
| ໗. ສຸກ | ໘. ທຸກ |

ພິກຂຸທັງຫຼາຍ ໂລກກະທຳ ໘ ປະການນີ້ແລ ຍ່ອມໝຸນໄປຕາມໂລກ ແລະໂລກກໍໝຸນໄປຕາມໂລກກະທຳ ໘ ປະການນີ້

ມີລາບ ເສື່ອມລາບ ມີຍົດ ເສື່ອມຍົດ
ນິນທາ ສັນເສີນ ສຸກ ແລະທຸກ
ທຳເຫຼົ່ານີ້ໃນໝູ່ມະນຸດ ລ້ວນບໍ່ທ່ຽງ
ບໍ່ໝັ້ນຄົງ ມີຄວາມແປຜັນເປັນທຳມະດາ
ແຕ່ທ່ານຜູ້ມີປັນຍາດີ ມີສະຕິ ຮູ້ທຳເຫຼົ່ານີ້ແລ້ວ
ຍ່ອມພິຈາລະນາເຫັນວ່າ ມີຄວາມແປຜັນເປັນທຳມະດາ
ອິດຖາຣົມ (ອາລົມທີ່ໜ້າປາຖະໜາ) ຈຶ່ງຍ່ຳຍີຈິດຂອງທ່ານບໍ່ໄດ້
ທ່ານຍ່ອມບໍ່ຍິນຮ້າຍຕໍ່ອະນິດຖາຣົມ (ອາລົມທີ່ບໍ່ໜ້າປາຖະໜາ)
ຄວາມຍິນດີຫຼືຄວາມຍິນຮ້າຍ
ທ່ານກຳຈັດປັດເປົ່າ ຈົນບໍ່ມີຢູ່
ທ່ານຮູ້ທາງທີ່ປາສະຈາກທຸລີ ບໍ່ມີຄວາມເສົ້າໂສກ
ເປັນຜູ້ເຖິງຝັ່ງແຫ່ງພົບ ຍ່ອມຮູ້ແຈ້ງໂດຍຊອບ

**ປະຖະມະໂລກະທຳມະສູດທີ ໕ ຈົບ**

# ໖. ທຸຕິຍະໂລກະທຳມະສູດ

## ວ່າດ້ວຍໂລກກະທຳ ສູດທີ ໒

[໖] ພິກຂຸທັງຫຼາຍ ໂລກກະທຳ ໘ ປະການນີ້ ຍ່ອມໝຸນໄປຕາມໂລກ ແລະໂລກກໍໝຸນໄປຕາມໂລກກະທຳ ໘ ປະການ

ໂລກກະທຳ ໘ ປະການ ອັນໃດແດ່ ຄື

໑. ລາບ
໒. ເສື່ອມລາບ
໓. ຍົດ
໔. ເສື່ອມຍົດ
໕. ນິນທາ
໖. ສັນເສີນ
໗. ສຸກ
໘. ທຸກ

ພິກຂຸທັງຫຼາຍ ໂລກກະທຳ ໘ ປະການນີ້ ຍ່ອມໝຸນໄປຕາມໂລກ ແລະໂລກກໍໝຸນໄປຕາມໂລກກະທຳ ໘ ປະການນີ້

ລາບ ເສື່ອມລາບ ຍົດ ເສື່ອມຍົດ ນິນທາ ສັນເສີນ ສຸກ ແລະທຸກຍ່ອມເກີດຂຶ້ນ ແກ່ປຸຖຸຊົນຜູ້ຍັງບໍ່ໄດ້ສະດັບ

ລາບ ເສື່ອມລາບ ຍົດ ເສື່ອມຍົດ ນິນທາ ສັນເສີນ ສຸກ ແລະທຸກຍ່ອມເກີດຂຶ້ນ ແກ່ອະຣິຍະສາວົກຜູ້ໄດ້ສະດັບ

ພິກຂຸທັງຫຼາຍ ໃນຂໍ້ນັ້ນມີຄວາມແປກກັນຢ່າງໃດ ມີຄວາມແຕກຕ່າງກັນຢ່າງໃດ ມີເຫດເຮັດໃຫ້ຕ່າງກັນຢ່າງໃດ ລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ຍັງບໍ່ໄດ້ສະດັບ

ພິກຂຸທັງຫຼາຍຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າເທົ່ານັ້ນທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນ ໃຫ້ແຈ້ງຊັດໄດ້ ພິກຂຸທັງຫຼາຍ ເມື່ອຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວ ຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ລາບເກີດຂຶ້ນແກ່ປຸຖຸຊົນຜູ້ຍັງບໍ່ໄດ້ສະດັບ ແຕ່ເຂົາບໍ່ເຫັນປະຈັກ ບໍ່ຮູ້ແຈ້ງຕາມຄວາມເປັນຈິງດັ່ງນີ້ວ່າ "ລາບນີ້ເກີດຂຶ້ນແກ່ເຮົາແລ້ວ ແຕ່ລາບນັ້ນ ເປັນຂອງບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທຳມະດາ" ຄວາມເສື່ອມລາບ ຯລຯ ຍົດ ຯລຯ ຄວາມເສື່ອມຍົດ ຯລຯ ນິນທາ ຯລຯ ສັນເສີນ ຯລຯ ສຸກ ຯລຯ ທຸກເກີດຂຶ້ນແກ່ປຸຖຸຊົນ ຜູ້ຍັງບໍ່ໄດ້ສະດັບ ແຕ່ເຂົາບໍ່ເຫັນປະຈັກ ບໍ່ຮູ້ແຈ້ງຕາມຄວາມເປັນຈິງດັ່ງນີ້ວ່າ "ທຸກນີ້ເກີດຂຶ້ນ ແກ່ເຮົາແລ້ວ ແຕ່ທຸກນັ້ນ ເປັນຂອງບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທຳມະດາ" ລາບຍ່ອມຄອບງຳຈິດຂອງເຂົາໄດ້ ຄວາມເສື່ອມລາບຍ່ອມຄອບງຳຈິດຂອງເຂົາໄດ້ ຍົດຍ່ອມຄອບງຳຈິດຂອງເຂົາໄດ້ ຄວາມເສື່ອມຍົດຍ່ອມຄອບງຳຈິດຂອງເຂົາໄດ້ ນິນທາຍ່ອມຄອບງຳຈິດຂອງເຂົາໄດ້ ສັນເສີນຍ່ອມຄອບງຳຈິດຂອງເຂົາໄດ້ ສຸກຍ່ອມຄອບງຳຈິດຂອງເຂົາໄດ້ ທຸກຍ່ອມຄອບງຳຈິດຂອງເຂົາໄດ້ ເຂົາຍ່ອມຍິນຮ້າຍໃນຄວາມເສື່ອມລາບ ຍິນດີໃນຍົດທີ່ເກີດຂຶ້ນ ຍິນຮ້າຍໃນຄວາມເສື່ອມຍົດ ຍິນດີໃນຄວາມສັນເສີນທີ່ເກີດຂຶ້ນ ຍິນຮ້າຍໃນນິນທາ ຍິນດີໃນສຸກທີ່ເກີດຂຶ້ນ ຍິນຮ້າຍໃນທຸກ ເຂົາປະກອບດ້ວຍຄວາມຍິນດີແລະຄວາມຍິນຮ້າຍຢ່າງນີ້ ຍ່ອມບໍ່ພົ້ນຈາກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ເຮົາກ່າວວ່າ ບໍ່ລຸດພົ້ນຈາກທຸກ

ພິກຂຸທັງຫຼາຍ ລາບເກີດຂຶ້ນແກ່ອະຣິຍະສາວົກຜູ້ໄດ້ສະດັບ ເຂົາເຫັນປະຈັກ ຮູ້ແຈ້ງຕາມຄວາມເປັນຈິງດັ່ງນີ້ວ່າ "ລາບນີ້ເກີດຂຶ້ນແກ່ເຮົາແລ້ວ ແຕ່ລາບນັ້ນ ເປັນຂອງບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທຳມະດາ" ຄວາມເສື່ອມລາບ ຯລຯ ຍົດ ຯລຯ ຄວາມເສື່ອມຍົດ ຯລຯ ນິນທາ ຯລຯ ສັນເສີນ ຯລຯ ສຸກ ຯລຯ ທຸກເກີດຂຶ້ນແກ່ອະຣິຍະສາວົກ ຜູ້ໄດ້ສະດັບ ແຕ່ເຂົາເຫັນປະຈັກ ຮູ້ແຈ້ງຕາມຄວາມເປັນຈິງດັ່ງນີ້ວ່າ "ທຸກນີ້ເກີດຂຶ້ນແກ່ເຮົາແລ້ວ ແຕ່ທຸກນັ້ນ ເປັນຂອງບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທຳມະດາ" ລາບຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ຄວາມເສື່ອມລາບຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ຍົດຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ຄວາມເສື່ອມຍົດຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ນິນທາຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ສັນເສີນຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ສຸກຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ທຸກຍ່ອມຄອບງຳຈິດຂອງເຂົາບໍ່ໄດ້ ເຂົາບໍ່ຍິນດີໃນລາບທີ່ເກີດຂຶ້ນ ບໍ່ຍິນຮ້າຍໃນຄວາມເສື່ອມລາບ ບໍ່ຍິນດີໃນຍົດທີ່ເກີດຂຶ້ນ ບໍ່ຍິນຮ້າຍໃນຄວາມເສື່ອມຍົດ ບໍ່ຍິນດີໃນສັນເສີນທີ່ເກີດຂຶ້ນ ບໍ່ຍິນຮ້າຍໃນນິນທາ ບໍ່ຍິນດີໃນສຸກທີ່ເກີດຂຶ້ນ ບໍ່ຍິນຮ້າຍໃນທຸກ ເຂົາລະຄວາມຍິນດີ ແລະຄວາມຍິນຮ້າຍໄດ້ຢ່າງນີ້ ຈຶ່ງພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ເຮົາກ່າວວ່າ ລຸດພົ້ນຈາກທຸກໄດ້

ພິກຂຸທັງຫຼາຍ ນີ້ແລ ຄື ຄວາມແປກກັນ ນີ້ຄືຄວາມແຕກຕ່າງກັນ ນີ້ຄືເຫດ ເຮັດໃຫ້ຕ່າງກັນ ລະຫວ່າງອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ຍັງບໍ່ໄດ້ສະດັບ"

ມີລາບ ເສື່ອມລາບ ມີຍົດ ເສື່ອມຍົດ

ນິນທາ ສັນເສີນ ສຸກ ແລະທຸກ
ທຳເຫຼົ່ານີ້ໃນໝູ່ມະນຸດ ລ້ວນບໍ່ທ່ຽງ
ບໍ່ໝັ້ນຄົງ ມີຄວາມແປຜັນເປັນທຳມະດາ
ແຕ່ທ່ານຜູ້ມີປັນຍາດີ ມີສະຕິ ຮູ້ທຳເຫຼົ່ານີ້ແລ້ວ
ຍ່ອມພິຈາລະນາເຫັນວ່າ ມີຄວາມແປຜັນເປັນທຳມະດາ
ອິດຖາຣົມຈຶ່ງຍ່ຳຍີຈິດຂອງທ່ານບໍ່ໄດ້
ທ່ານຍ່ອມບໍ່ຍິນຮ້າຍຕໍ່ອະນິດຖາຣົມ
ຄວາມຍິນດີຫຼືຄວາມຍິນຮ້າຍ
ທ່ານກຳຈັດປັດເປົ່າ ຈົນບໍ່ມີຢູ່
ທ່ານຮູ້ທາງທີ່ປາສະຈາກທຸລີ ບໍ່ມີຄວາມເສົ້າໂສກ
ເປັນຜູ້ເຖິງຝັ່ງແຫ່ງພົບ ຍ່ອມຮູ້ແຈ້ງໂດຍຊອບ

**ທຸຕິຍະໂລກະທຳມະສູດທີ ໖ ຈົບ**

# ໗. ເທວະທັດຕະວິປັດຕິສູດ

## ວ່າດ້ວຍວິບັດຂອງພຣະເທວະທັດ

[໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພູຄິດຊະກູດ ເຂດເມືອງຣາດຊະຄຶ ເມື່ອພຣະເທວະທັດຈາກໄປບໍ່ດົນໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະເທວະທັດ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ

“ພິກຂຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຕົນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຜູ້ອື່ນຕາມການອັນຄວນ ທາງທີ່ດີພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຕົນຕາມການອັນຄວນທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຜູ້ອື່ນຕາມການອັນຄວນ

ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໘ ປະການຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂຫຍັງບໍ່ໄດ້

ອະສັດທຳ ໘ ປະການ ອັນໃດແດ່ ຄື

໑. ເທວະທັດຖືກລາບຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດ ໃນນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

໔. ເທວະທັດຖືກຄວາມເສື່ອມລາບຄອບງຳຍ່ຳຍີຈິດ ຯລຯ
໕. ເທວະທັດຖືກຍົດຄອບງຳຍ່ຳຍີຈິດ ຯລຯ
໖. ເທວະທັດຖືກຄວາມເສື່ອມຍົດຄອບງຳຍ່ຳຍີຈິດ ຯລຯ
໕. ເທວະທັດຖືກສັກກາຣະຄອບງຳຍ່ຳຍີຈິດ ຯລຯ
໖. ເທວະທັດຖືກຄວາມເສື່ອມສັກກາຣະຄອບງຳຍ່ຳຍີຈິດ ຯລຯ
໗. ເທວະທັດຖືກຄວາມປາຖະໜາຊົ່ວຄອບງຳຍ່ຳຍີຈິດ ຯລຯ
໘. ເທວະທັດຖືກຄວາມມີມິດຊົ່ວຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນ ນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໘ ປະການນີ້ ຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ພິກຂຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ເພິ່ງຄອບງຳຄວາມເສື່ອມລາບທີ່ເກີດຂຶ້ນຢູ່ ຯລຯ ຍົດທີ່ເກີດຂຶ້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂຶ້ນ ຯລຯ ສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ຯລຯ ຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່

ພິກຂຸທັງຫຼາຍ ພິກຂຸອາໄສອຳນາດປະໂຫຍດອັນໃດ ຈຶ່ງເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ຯລຯ ເພິ່ງຄອບງຳຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່

ພິກຂຸທັງຫຼາຍ ເພາະເມື່ອພິກຂຸບໍ່ຄອບງຳລາບທີ່ເກີດຂຶ້ນຢູ່ ອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນ ເພິ່ງເກີດຂຶ້ນ ແຕ່ເມື່ອທ່ານຄອບງຳລາບທີ່ເກີດຂຶ້ນຢູ່ ອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ

ເພາະເມື່ອພິກຂຸບໍ່ຄອບງຳຄວາມເສື່ອມລາບທີ່ເກີດຂຶ້ນຢູ່ ຯລຯ ຍົດທີ່ເກີດຂຶ້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂຶ້ນ ຯລຯ ສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ຯລຯ ຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່ ອາສະວະແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນເພິ່ງ ເກີດຂຶ້ນ ແຕ່ເມື່ອທ່ານຄອບງຳຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່ ອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ

ພິກຂຸທັງຫຼາຍ ພິກຂຸອາໄສອຳນາດປະໂຫຍດນີ້ ຈຶ່ງເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ຯລຯ ຄວາມເສື່ອມລາບທີ່ເກີດຂຶ້ນ ຯລຯ ຍົດທີ່ເກີດຂຶ້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂຶ້ນ ຯລຯ ສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ຯລຯ ຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່

ພິກຂຸທັງຫຼາຍ ເພາະເຫດນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ ເຮົາທັງຫຼາຍ ຈັກຄອບງຳລາບທີ່ເກີດຂຶ້ນຢູ່ ຯລຯ ຄວາມເສື່ອມລາບທີ່ເກີດຂຶ້ນ ຯລຯ ຍົດທີ່ເກີດຂຶ້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂຶ້ນ ຯລຯ ສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ຯລຯ ຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ຢ່າງນີ້"

**ເທວະທັດຕະວິປັດຕິສູດທີ ໗ ຈົບ**

# ໘. ອຸດຕະຣະວິປັດຕິສູດ
## ວ່າດ້ວຍພຣະອຸດຕະຣະສະແດງທຳເລື້ອງວິບັດ

[໘] ສະໄໝໜຶ່ງ ທ່ານພຣະອຸດຕະຣະຢູ່ທີ່ ວະຕະຊາລິກາວິຫານ ໃກ້ພູສັງເຂີຍຍະກະມະຫິສະວັດຖຸຊົນນະບົດ ໃນບ່ອນນັ້ນແລ ທ່ານພຣະອຸດຕະຣະຮຽກພິກຂຸທັງຫຼາຍມາກ່າວ ວ່າ

"ຜູ້ມີອາຍຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຕົນຕາມການອັນຄວນ ທາງ ທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຜູ້ອື່ນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຕົນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຜູ້ອື່ນຕາມການອັນຄວນ"

ສະໄໝນັ້ນ ທ້າວເວດສຸວັນມະຫາຣາດມີວຽກງານບາງຢ່າງສະເດັດຈາກທິດເໜືອໄປສູ່ທິດໃຕ້ ໄດ້ສະດັບສຽງຂອງທ່ານພຣະອຸດຕະຣະ ຜູ້ກຳລັງສະແດງທຳແກ່ພິກຂຸທັງຫຼາຍ ຢ່າງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຕົນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຜູ້ອື່ນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຕົນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດ ຂອງຜູ້ອື່ນຕາມການອັນຄວນ"

ຄັ້ງນັ້ນແລ ທ້າວເວດສຸວັນມະຫາຣາດໄດ້ຫາຍຈາກວະຕະຊາລິກາວິຫານ ໃກ້ພູສັງເຂີຍຍະກະ ມະຫິສະວັດຖຸຊົນນະບົດ ໄປຜາກົດໃນເທວະໂລກຊັ້ນຕາວະຕິງສາ ເໝືອນບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສະນັ້ນ ລຳດັບນັ້ນ ທ້າວເວດສຸວັນມະຫາຣາດເຂົ້າໄປເຝົ້າທ້າວສັກກະຈອມເທບເຖິງທີ່ ປະທັບ ແລ້ວໄດ້ຂາບທູນທ້າວສັກກະຈອມເທບດັ່ງນີ້ວ່າ "ຂໍເດຊະທ່ານຜູ້ນິຣະທຸກພຣະອົງ ໂຜດຊົງຮູ້ວ່າ "ທ່ານອຸດຕະຣະນີ້ສະແດງທຳແກ່ພິກຂຸທັງຫຼາຍ ໃນວະຕະຊາລິກາວິຫານ ໃກ້ພູສັງເຂີຍຍະກະ ມະຫິສະວັດຖຸຊົນນະບົດ ຢ່າງນີ້ວ່າ ຜູ້ມີອາຍຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນຄວາມວິບັດຂອງຕົນຕາມການອັນຄວນ ຯລຯ ທາງທີ່ດີ ພິກຂຸເພິ່ງພິຈາລະນາ ເຫັນສົມບັດຂອງຜູ້ອື່ນຕາມການອັນຄວນ"

ຄັ້ງນັ້ນແລ ທ້າວສັກກະຈອມເທບໄດ້ຊົງຫາຍຈາກເທວະໂລກຊັ້ນຕາວະຕິງສາ ໄປຜາກົດຕໍ່ໜ້າທ່ານພຣະອຸດຕະຣະ ທີ່ວະຕະຊາລິກາວິຫານ ໃກ້ພູສັງເຂີຍຍະກະ ມະຫິສະວັດຖຸຊົນນະບົດເໝືອນ ບຸຣຸດມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສະນັ້ນ ເມື່ອແລ້ວຈຶ່ງສະເດັດເຂົ້າໄປຫາທ່ານພຣະອຸດຕະຣະເຖິງທີ່ຢູ່ ຊົງໄຫວ້ແລ້ວປະທັບຢືນ ໃນທີ່ສົມຄວນ ຕັດຖາມທ່ານພຣະອຸດຕະຣະດັ່ງນີ້ວ່າ "ຈິງບໍ ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ທ່ານພຣະອຸດຕະຣະສະແດງທຳແກ່ພິກຂຸທັງຫຼາຍແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນຄວາມວິບັດຂອງຕົນຕາມການອັນຄວນ ໆລໆ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຜູ້ອື່ນຕາມການ ອັນຄວນ"

ທ່ານພຣະອຸຕະກະໄດ້ຖວາຍພຣະພອນວ່າ "ເປັນຢ່າງນັ້ນ ທ່ານຈອມເທບ"

"ທ່ານຜູ້ຈະເລີນ ຂໍ້ຄວາມນີ້ເປັນປະຕິພານສ່ວນຕົວຂອງທ່ານພຣະອຸຕະກະເອງ ຫຼື ວ່າເປັນພຣະດຳຣັດຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ"

"ທ່ານຈອມເທບ ຖ້າເຊັ່ນນັ້ນ ອາຕະມາພາບຈັກຍົກຂໍ້ອຸປະມາໃຫ້ພຣະອົງສະດັບ ວິນຍູຊົນບາງພວກໃນໂລກນີ້ຈະຮູ້ອັດຖະແຫ່ງພາສິດໄດ້ ທ່ານຈອມເທບ ມີເຂົ້າເປືອກກອງໃຫຍ່ຢູ່ໃນທີ່ ບໍ່ໄກຈາກບ້ານ ຫຼື ນິຄົມ ໝູ່ຊົນເປັນຈຳນວນຫຼາຍເພິ່ງຂົນເຂົ້າເປືອກ ຈາກເຂົ້າເປືອກກອງໃຫຍ່ນັ້ນດ້ວຍຫາບແດ່ ດ້ວຍກະຕ່າແດ່ ດ້ວຍຖົງແດ່ ຫອບດ້ວຍມືແດ່ ທ່ານຈອມເທບ ຫາກມີບຸກຄົນເຂົ້າໄປຖາມໝູ່ຊົນເປັນຈຳນວນຫຼາຍນັ້ນຢ່າງນີ້ວ່າ "ພວກທ່ານຂົນເຂົ້າເປືອກນີ້ມາຈາກໃສ" ທ່ານຈອມເທບໝູ່ຊົນເປັນຈຳນວນຫຼາຍນັ້ນ ຈະຕອບຢ່າງໃດ ຈຶ່ງຈະຊື່ວ່າຕອບໄດ້ຢ່າງຖືກຕ້ອງ"

"ທ່ານຜູ້ຈະເລີນ ໝູ່ຊົນເປັນຈຳນວນຫຼາຍນັ້ນ ເມື່ອຈະຕອບໃຫ້ຖືກຕ້ອງຄວນຕອບວ່າ "ພວກເຮົາ ຂົນມາຈາກເຂົ້າເປືອກກອງໃຫຍ່ນັ້ນ"

"ທ່ານຈອມເທບ ທຳນອງດຽວກັນນັ້ນແລ ພຣະດຳຣັດທີ່ເປັນສຸພາສິດທັງໝົດ ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ອາຕະມາພາບ ແລະສາວົກເຫຼົ່າອື່ນ ຍ່ອມກ່າວໂດຍຖືເອົາຈາກສຸພາສິດທັງໝົດນັ້ນ"

"ທ່ານຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທ່ານພຣະອຸດຕະຣະກ່າວເລື້ອງນີ້ໄວ້ດີແທ້ ວ່າ "ພຣະດຳຣັດທີ່ເປັນສຸພາສິດທັງໝົດ ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ອາຕະມາພາບ ແລະສາວົກເຫຼົ່າອື່ນຍ່ອມກ່າວໂດຍຖືເອົາຈາກສຸພາສິດທັງ ໝົດນັ້ນ"

ທ່ານອຸດຕະຣະຜູ້ຈະເລີນ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພູຄິດຊະກູດເຂດເມືອງຣາດຊະຄຶ ເມື່ອພຣະເທວະທັດຈາກໄປບໍ່ດົນ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຜາຣົບພຣະເທວະທັດ ຣັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ

"ພິກຂຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຕົນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນວິບັດຂອງຜູ້ອື່ນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຕົນຕາມການອັນຄວນ ທາງທີ່ດີ ພິກຂຸເພິ່ງພິຈາລະນາເຫັນສົມບັດຂອງຜູ້ອື່ນຕາມການ ອັນຄວນ

ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໘ ປະການຄອບງຳຍ່ຳຍີຈິດ ຕ້ອງໄປເກີດ ໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອະສັດທຳ ໘ ປະການ ອັນໃດແດ່ ຄື

໑. ເທວະທັດຖືກລາບຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້
໒. ເທວະທັດຖືກຄວາມເສື່ອມລາບຄອບງຳຍ່ຳຍີຈິດ ฯລฯ
໓. ເທວະທັດຖືກຍົດຄອບງຳຍ່ຳຍີຈິດ ฯລฯ
໔. ເທວະທັດຖືກຄວາມເສື່ອມຍົດຄອບງຳຍ່ຳຍີຈິດ ฯລฯ
໕. ເທວະທັດຖືກສັກກາຣະຄອບງຳຍ່ຳຍີຈິດ ฯລฯ
໖. ເທວະທັດຖືກຄວາມເສື່ອມສັກກາຣະຄອບງຳຍ່ຳຍີຈິດ ฯລฯ
໗. ເທວະທັດຖືກຄວາມປາຖະໜາຊົ່ວຄອບງຳຍ່ຳຍີຈິດ ฯລฯ
໘. ເທວະທັດຖືກຄວາມມີມິດຊົ່ວຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນ ນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ພິກຂຸທັງຫຼາຍ ເທວະທັດຖືກອະສັດທຳ ໘ ປະການນີ້ແລ ຄອບງຳຍ່ຳຍີຈິດ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳຣົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ພິກຂຸທັງຫຼາຍ ທາງທີ່ດີ ພິກຂຸເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ທາງທີ່ດີ ພິກຂຸເພິ່ງຄອບງຳຄວາມເສື່ອມລາບທີ່ເກີດຂຶ້ນຢູ່ ฯລฯ ຍົດທີ່ເກີດຂຶ້ນ ฯລฯ ຄວາມເສື່ອມຍົດທີ່ເກີດຂຶ້ນ ฯລฯ ສັກກາຣະທີ່ເກີດຂຶ້ນ ฯລฯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ฯລฯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ฯລฯ ຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່

ພິກຂຸທັງຫຼາຍ ພິກຂຸອາໄສອຳນາດປະໂຫຍດອັນໃດ ຈຶ່ງເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ฯລฯ ເພິ່ງຄອບງຳຄວາມມີມິດຊົ່ວທີ່ເກີດຂຶ້ນຢູ່

ພິກຂຸທັງຫຼາຍ ເພາະເມື່ອພິກຂຸບໍ່ຄອບງຳລາບທີ່ເກີດຂຶ້ນຢູ່ ອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນເພິ່ງເກີດຂຶ້ນ ແຕ່ເມື່ອທ່ານຄອບງຳລາບທີ່ເກີດຂຶ້ນຢູ່ ອາສະວະ ແລະຄວາມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ

ເພາະເມື່ອພິກຂຸບໍ່ຄອບງຳຄວາມເສື່ອມລາບທີ່ເກີດຂຶ້ນຢູ່ ຯລຯ ຍົດທີ່ເກີດຂຶ້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂຶ້ນ ຯລຯ ສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ຯລຯ ຄວາມມິມິດຊົ່ວທີ່ເກີດຂຶ້ນຢູ່ ອາສະວະແລະຄວມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນເພິ່ງເກີດຂຶ້ນ ແຕ່ເມື່ອທ່ານຄອບງຳຄວາມມິມິດຊົ່ວທີ່ເກີດຂຶ້ນຢູ່ ອາສະວະແລະຄວມຮ້ອນຮົນທີ່ກໍ່ຄວາມຄັບແຄ້ນຍ່ອມບໍ່ມີແກ່ທ່ານ

ພິກຂຸທັງຫຼາຍ ພິກຂຸອາໄສອຳນາດປະໂຫຍດນີ້ ຈຶ່ງເພິ່ງຄອບງຳລາບທີ່ເກີດຂຶ້ນຢູ່ ຯລຯ ຄວາມເສື່ອມລາບທີ່ເກີດຂຶ້ນ ຯລຯ ຍົດທີ່ເກີດຂຶ້ນ ຯລຯ ຄວາມເສື່ອມຍົດທີ່ເກີດຂຶ້ນ ຯລຯ ສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ຯລຯ ຄວາມມິມິດຊົ່ວທີ່ເກີດຂຶ້ນຢູ່

ພິກຂຸທັງຫຼາຍ ເພາະເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ ເຮົາທັງຫຼາຍ ຈັກຄອບງຳລາບທີ່ເກີດຂຶ້ນຢູ່ ຯລຯ ຄວາມເສື່ອມລາບທີ່ເກີດຂຶ້ນ ຯລຯ ຍົດທີ່ເກີດຂຶ້ນ ຯລຯ ຄວາມເສື່ອມຍົດທີ່ ເກີດຂຶ້ນ ຯລຯ ສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມເສື່ອມສັກກາຣະທີ່ເກີດຂຶ້ນ ຯລຯ ຄວາມປາຖະໜາຊົ່ວທີ່ເກີດຂຶ້ນ ຯລຯ ຄວາມມິມິດຊົ່ວທີ່ເກີດຂຶ້ນຢູ່ ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ ຢ່າງນີ້ແລ"

ທ່ານອຸດຕະຣະຜູ້ຈະເລີນ ດ້ວຍເຫດພຽງເທົ່ານີ້ ໃນໝູ່ມະນຸດ ບໍລິສັດ ໔ ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ທຳບັນລະຍາຍນີ້ບໍ່ໄດ້ຕັ້ງໝັ້ນຢູ່ໃນບໍລິສັດໝູ່ໃດ ຂໍທ່ານອຸດຕະຣະໂຜດຮຽນທຳບັນລະຍາຍນີ້ ໂຜດຈົດຈຳທຳບັນລະຍາຍນີ້ ໂຜດຊົງຈຳທຳບັນລະຍາຍນີ້ໄວ້ເທີ້ນ ເພາະທຳບັນລະຍາຍນີ້ປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນ ແຫ່ງພົມມະຈັນ"

**ອຸດຕະຣະວິປັດຕິສູດທີ ໘ ຈົບ**

# ໙. ນັນທະສູດ

## ວ່າດ້ວຍພຣະນັນທະ

[໙] ພິກຂຸທັງຫຼາຍ ພິກຂຸເມື່ອຈະຮຽກນັນທະໃຫ້ຖືກຕ້ອງ ຄວນຮຽກວ່າ "ກຸນລະບຸດ" ເມື່ອຈະຮຽກນັນທະໃຫ້ຖືກຕ້ອງ ຄວນຮຽກວ່າ "ຜູ້ມີກຳລັງ" ເມື່ອຈະຮຽກນັນທະໃຫ້ຖືກຕ້ອງ ຄວນຮຽກວ່າ "ຜູ້ໜ້າຮັກ"[໑] ເມື່ອຈະຮຽກນັນທະໃຫ້ຖືກຕ້ອງ ຄວນຮຽກວ່າ "ຜູ້ມີຣາຄະຈັດ"

ພິກຂຸທັງຫຼາຍ ເວັ້ນແຕ່ວ່າ ນັນທະຈະເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ປະກອບດ້ວຍສະຕິ ແລະສຳປະຊັນຍະ ນັນທະຈຶ່ງຈະສາມາດປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້

ພິກຂຸທັງຫຼາຍ ໃນຂໍ້ນັ້ນ ວິທີຄຸ້ມຄອງທະວານໃນອິນຊີທັງຫຼາຍສຳລັບນັນທະ ດັ່ງນີ້ ຄື ຫາກນັນທະຈຳເປັນຕ້ອງເບິ່ງທິດຕາເວັນອອກ ນັນທະຕ້ອງສັງລວມຈິດທັງໝົດ ເບິ່ງທິດຕາເວັນອອກດ້ວຍຄິດວ່າ "ເມື່ອເຮົາເບິ່ງທິດຕາເວັນອອກຢູ່ຢ່າງນີ້ ບາບອະກຸສົນທຳ ຄື ອະພິດຊາ ແລະ ໂທມະນັດຈັກຄອບງຳຈິດຂອງເຮົາບໍ່ໄດ້" ນັນທະຕ້ອງເປັນຜູ້ມີສຳປະຊັນຍະໃນການເບິ່ງນັ້ນຢ່າງນີ້

ຫາກນັນທະຈຳເປັນຕ້ອງເບິ່ງທິດຕາເວັນຕົກ ຯລຯ ຈຳເປັນຕ້ອງເບິ່ງທິດເໜືອ ຯລຯ ຈຳເປັນຕ້ອງເບິ່ງທິດໃຕ້ ຯລຯ ຈຳເປັນຕ້ອງເບິ່ງທິດເບື້ອງເທິງ ຯລຯ ຈຳເປັນຕ້ອງເບິ່ງທິດເບື້ອງລຸ່ມ ຯລຯ ຈຳເປັນຕ້ອງເບິ່ງທິດສຽງ ນັນທະຕ້ອງສັງລວມຈິດທັງໝົດເບິ່ງ ທິດສຽງ ດ້ວຍຄິດວ່າ "ເມື່ອເຮົາເບິ່ງທິດສຽງຢູ່ຢ່າງນີ້ ບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຈັກຄອບງຳຈິດຂອງເຮົາບໍ່ໄດ້" ນັນທະຕ້ອງເປັນຜູ້ມີສຳປະຊັນຍະໃນການເບິ່ງນັ້ນ ຢ່າງນີ້

ພິກຂຸທັງຫຼາຍ ນີ້ແລ ຄື ວິທີຄຸ້ມຄອງທະວານໃນອິນຊີທັງຫຼາຍສຳລັບນັນທະ

ວິທີຮູ້ຈັກປະມານໃນການບໍຣິໂພກສຳລັບນັນທະ ດັ່ງນີ້ ຄື ນັນທະຕ້ອງພິຈາລະນາໂດຍແຍບຄາຍແລ້ວສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອຄວາມມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ເພື່ອໃຫ້ກາຍນີ້ດຳຣົງຢູ່ໄດ້ ເພື່ອໃຫ້ຊີວິອິນຊີເປັນໄປ ເພື່ອບຳບັດຄວາມຫິວ ເພື່ອ ອະນຸເຄາະພົມມະຈັນ ດ້ວຍຄິດເຫັນວ່າ "ໂດຍອຸບາຍນີ້ເຮົາຈັກກຳຈັດເວທະນາເກົ່າໄດ້ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳຣົງຢູ່ແຫ່ງຊີວິດ ຄວາມບໍ່ມີໂທດ ແລະການຢູ່ໂດຍຜາສຸກຈັກມີແກ່ເຮົາ"

ພິກຂຸທັງຫຼາຍ ນີ້ແລ ຄືວິທີຮູ້ຈັກປະມານໃນການບໍຣິໂພກສຳລັບນັນທະ

ວິທີປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ສຳລັບນັນທະ ດັ່ງນີ້ ຄື ນັນທະ ຕ້ອງຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຈົງກົມ ດ້ວຍການນັ່ງຕະຫຼອດວັນ ຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຈົງກົມ ດ້ວຍການນັ່ງຕະຫຼອດ ປະຖົມຍາມແຫ່ງຣາຕີ ສຳເລັດສີຫະໄສຍາໂດຍຕະແຄງຂ້າງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ເຮັດອຸດຖານະສັນຍາ (ຄວາມໝາຍໃຈວ່າຈະລຸກຂຶ້ນ) ໄວ້ໃນໃຈໃນມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນຊຳຣະຈິດໃຫ້ບໍລິສຸດຈາກທຳເຄື່ອງກາງກັ້ນດ້ວຍການຈົງກົມ ດ້ວຍການນັ່ງ ຕະຫຼອດປັດສິມຍາມແຫ່ງຣາຕີ

ພິກຂຸທັງຫຼາຍ ນີ້ແລ ຄື ວິທີປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ສຳລັບນັນທະ

ວິທີມີສະຕິສຳປະຊັນຍະສຳລັບນັນທະ ດັ່ງນີ້ ຄື ເວທະນາຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ແລະຜາກົດດັບໄປແກ່ນັນທະ ສັນຍາຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ແລະຜາກົດດັບໄປແກ່ນັນທະ ວິຕົກຜາກົດເກີດຂຶ້ນ ຜາກົດຕັ້ງຢູ່ ແລະຜາກົດດັບໄປແກ່ນັນທະ

ພິກຂຸທັງຫຼາຍ ນີ້ແລ ຄື ວິທີມີສະຕິສຳປະຊັນຍະສຳລັບບັນທະ

ພິກຂຸທັງຫຼາຍ ເວັ້ນແຕ່ວ່າ ບັນທະຈະເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງໆ ປະກອບດ້ວຍສະຕິ ແລະສຳປະຊັນຍະ ບັນທະຈຶ່ງຈະສາມາດປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນໄດ້ ເປັນຢ່າງນີ້ແລ

**ບັນທະສູດທີ ໙ ຈົບ**

# ໑໐. ກາຣັນທະວະສູດ

## ວ່າດ້ວຍສະມະນະມູນຝອຍ

[໑໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ແຄມຝັ່ງສະຄັກຄະຣາໂບກຂະຣະນີ ເຂດເມືອງຈຳປາ ສະໄໝນັ້ນ ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາບັດນັ້ນ ເວົ້າປົກປິດ ເວົ້ານອກເລື້ອງ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງກຳຈັດບຸກຄົນນີ້ອອກໄປ ຈົ່ງກຳຈັດບຸກຄົນນີ້ອອກໄປ ຄົນຊະນິດນີ້ຕ້ອງຂັບອອກ ເປັນບຸດນອກຄອກ ກວນໃຈແທ້ນໍ ພິກຂຸທັງຫຼາຍ ບຸກຄົນບາງຄົນໃນທຳວິໄນນີ້ ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນເໝືອນພິກຂຸຜູ້ຈະເລີນອື່ນ ໆ ຕາບເທົ່າທີ່ພິກຂຸທັງຫຼາຍຍັງບໍ່ເຫັນອາບັດຂອງເຂົາ ແຕ່ເມື່ອໃດ ພິກຂຸທັງຫຼາຍເຫັນອາບັດຂອງເຂົາ ເມື່ອນັ້ນ ພິກຂຸທັງຫຼາຍຍ່ອມຮູ້ຈັກເຂົາຢ່າງນີ້ວ່າ "ຜູ້ນີ້ເປັນຜູ້ປະທຸດສະຮ້າຍສະມະນະ ເປັນສະມະນະແກບ ເປັນສະມະນະມູນຝອຍ" ເມື່ອຮູ້ຈັກເຂົາຢ່າງນີ້ແລ້ວ ຈຶ່ງນາສະນະເຂົາອອກໄປ ຂໍ້ນັ້ນເພາະເຫດໃດ ເພາະຄິດວ່າ "ພິກຂຸນີ້ຢ່າໄດ້ປະທຸດສະຮ້າຍພິກຂຸທີ່ດີອື່ນ ໆ ເລີຍ"

ພິກຂຸທັງຫຼາຍ ຫຍ້າທີ່ທຳລາຍຕົ້ນເຂົ້າ ມີເມັດເໝືອນເຂົ້າລີບ ມີເມັດເໝືອນເຂົ້າຕາຍໜຶ້ງເພິ່ງເກີດຂຶ້ນໃນນາເຂົ້າທີ່ສົມບູນ ຮາກຂອງມັນກໍເປັນເຊັ່ນດຽວກັບເຂົ້າທີ່ດີອື່ນໆ ກ້ານຂອງມັນກໍເປັນເຊັ່ນດຽວກັບເຂົ້າທີ່ດີອື່ນໆ ໃບຂອງມັນກໍເປັນເຊັ່ນດຽວກັບເຂົ້າທີ່ດີອື່ນໆ ຕາບເທົ່າທີ່ມັນຍັງບໍ່ອອກຮວງ ແຕ່ເມື່ອໃດ ມັນອອກຮວງ ເມື່ອນັ້ນ ຊາວນາຍ່ອມຮູ້ຈັກມັນຢ່າງນີ້ວ່າ "ຫຍ້ານີ້ທຳລາຍຕົ້ນເຂົ້າ ມີເມັດ ເໝືອນເຂົ້າລີບ ມີເມັດເໝືອນເຂົ້າຕາຍ" ເມື່ອຮູ້ຈັກມັນຢ່າງນີ້ແລ້ວ ຊາວນາຈຶ່ງຖອນມັນຂຶ້ນພ້ອມທັງຮາກ ແລ້ວຖິ້ມໃຫ້ພົ້ນຈາກທີ່ນາ ຂໍ້ນັ້ນເພາະເຫດໃດ ເພາະຄິດວ່າ "ຫຍ້າຊະນິດນີ້ຢ່າໄດ້ທຳລາຍເຂົ້າທີ່ດີອື່ນ ໆເລີຍ" ແມ່ນສັນໃດ

ພິກຂຸທັງຫຼາຍ ບຸກຄົນບາງຄົນໃນທຳວິໄນນີ້ ກໍສັນນັ້ນຄືກັນ ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນເໝືອນພິກຂຸຜູ້ຈະເລີນອື່ນ ໆ ຕາບເທົ່າທີ່ພິກຂຸທັງຫຼາຍຍັງບໍ່ເຫັນອາບັດຂອງເຂົາ ແຕ່ເມື່ອໃດ ພິກຂຸທັງຫຼາຍເຫັນອາບັດຂອງເຂົາ ເມື່ອນັ້ນ ພິກຂຸທັງຫຼາຍຍ່ອມຮູ້ຈັກເຂົາຢ່າງນີ້ວ່າ "ຜູ້ນີ້ເປັນຜູ້ປະທຸດສະຮ້າຍສະ ມະນະ ເປັນສະມະນະແກບ ເປັນສະມະນະມູນຝອຍ" ເມື່ອຮູ້ຈັກເຂົາຢ່າງນີ້ແລ້ວ ຈຶ່ງນາສະນະເຂົາອອກໄປ ຂໍ້ນັ້ນເພາະເຫດໃດ ເພາະຄິດວ່າ "ພິກຂຸນີ້ຢ່າໄດ້ປະທຸດສະຮ້າຍພິກຂຸທີ່ດີອື່ນ ໆ ເລີຍ"

ພິກຂຸທັງຫຼາຍ ເມື່ອບຸກຄົນຝັດເຂົ້າເປືອກກອງໃຫຍ່ ເຂົ້າເປືອກທີ່ເປັນຕົວແຂ້ງໃນເຂົ້າເປືອກກອງໃຫຍ່ນັ້ນ ກໍເປັນກອງຢູ່ສ່ວນໜຶ່ງ ສ່ວນເຂົ້າເປືອກທີ່ລີບ ກໍຖືກລົມພັດໄປ ຢູ່ອີກສ່ວນໜຶ່ງ ເຈົ້າຂອງໃຊ້ໄມ້ກວາດເຂົ້າທີ່ລີບນັ້ນອອກໄປໂດຍສ່ວນຫຼາຍ ຂໍ້ນັ້ນເພາະເຫດໃດ ເພາະຄິດວ່າ "ມັນຢ່າໄດ້ທຳລາຍເຂົ້າເປືອກທີ່ດີອື່ນ ໆເລີຍ" ແມ່ນສັນໃດ

ພິກຂຸທັງຫຼາຍ ບຸກຄົນບາງຄົນໃນທຳວິໄນນີ້ ກໍສັນນັ້ນຄືກັນແລ ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ເໝືອນພິກຂຸຜູ້ຈະເລີນອື່ນ ໆ ຕາບເທົ່າທີ່ພິກຂຸທັງຫຼາຍຍັງບໍ່ເຫັນອາບັດຂອງເຂົາ ແຕ່ເມື່ອໃດ ພິກຂຸທັງຫຼາຍເຫັນອາບັດຂອງເຂົາ ເມື່ອນັ້ນ ພິກຂຸທັງຫຼາຍຍ່ອມຮູ້ຈັກ ເຂົາຢ່າງນີ້ວ່າ "ຜູ້ນີ້ເປັນຜູ້ປະທຸດສະຮ້າຍສະມະນະ ເປັນສະມະນະແກບ ເປັນສະມະນະມູນຝອຍ" ເມື່ອຮູ້ຈັກເຂົາຢ່າງນີ້ແລ້ວ ຈຶ່ງນາສະນະເຂົາອອກໄປ ຂໍ້ນັ້ນເພາະເຫດໃດ ເພາະຄິດວ່າ "ພິກຂຸນີ້ຢ່າໄດ້ປະທຸດສະຮ້າຍພິກຂຸທີ່ດີອື່ນ ໆ ເລີຍ"

ພິກຂຸທັງຫຼາຍ ບຸຣຸດຜູ້ຕ້ອງການກະບອກຕັກນ້ຳດື່ມ ຖືຂວານອັນຄົມເຂົ້າໄປໃນປ່າ ເຂົາໃຊ້ສັນຂວານເຄາະຕົ້ນໄມ້ໃດ ໆ ບັນດາຕົ້ນໄມ້ນັ້ນ ໆ ຕົ້ນໄມ້ທີ່ແຂງມີແກ່ນ ເຊິ່ງຖືກເຄາະດ້ວຍສັນຂວານ ມີສຽງແໜ້ນ ສ່ວນຕົ້ນໄມ້ທີ່ເສຍ ຂ້າງໃນປຽກຊື້ນ ເກີດໂດກຜຸ່ຍ ຖືກເຄາະດ້ວຍສັນຂວານ ມີສຽງກ້ອງ ເຂົາຈຶ່ງຕັດຕົ້ນໄມ້ທີ່ເສຍຂ້າງໃນນັ້ນທີ່ເຫງົ້າ ເມື່ອຕັດເຫງົ້າແລ້ວ ຈຶ່ງຕັດປາຍ ເມື່ອຕັດປາຍແລ້ວ ຈຶ່ງຄວ້ານຂ້າງໃນໃຫ້ສະອາດດີ ເມື່ອຄວ້ານຂ້າງໃນໃຫ້ສະອາດດີແລ້ວ ຈຶ່ງເຮັດເປັນກະບອກຕັກນ້ຳດື່ມ ແມ່ນສັນໃດ

ພິກຂຸທັງຫຼາຍ ບຸກຄົນບາງຄົນໃນທຳວິໄນນີ້ ກໍສັນນັ້ນຄືກັນແລ ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ເໝືອນພິກຂຸຜູ້ຈະເລີນອື່ນ ໆ ຕາບເທົ່າທີ່ພິກຂຸທັງຫຼາຍຍັງບໍ່ເຫັນອາບັດຂອງເຂົາ ແຕ່ເມື່ອໃດ ພິກຂຸທັງຫຼາຍເຫັນອາບັດຂອງເຂົາ ເມື່ອນັ້ນ ພິກຂຸທັງຫຼາຍຍ່ອມຮູ້ຈັກເຂົາຢ່າງນີ້ວ່າ "ຜູ້ນີ້ເປັນຜູ້ປະທຸດສະຮ້າຍສະມະນະ ເປັນສະມະນະແກບ ເປັນສະມະນະມູນຝອຍ" ເມື່ອຮູ້ຈັກເຂົາ

ຢ່າງນີ້ແລ້ວ ຈຶ່ງນາສະນະເຂົາອອກໄປ ຂໍ້ນັ້ນເພາະເຫດໃດ ເພາະຄິດວ່າ "ພິກຂຸນີ້ຢ່າໄດ້ປະທຸດສະຮ້າຍພິກຂຸທີ່ດີອື່ນ ໆ ເລີຍ"

ເພາະການຢູ່ຮ່ວມກັນ ບຸກຄົນຈຶ່ງຮູ້ໄດ້ວ່າ
ຜູ້ນີ້ເປັນຜູ້ມີຄວາມປາຖະໜາຊົ່ວ ມັກໂກດ
ລົບຫຼູ່ຄຸນທ່ານ ຫົວດື້ ຕີສະເໝີ ຣິດສະຫຍາ ຂີ້ຖີ່ ໂອ້ອວດ
ບຸກຄົນບາງຄົນຢູ່ໃນຊຸມຊົນ ເວົ້າມ່ວນ ເວົ້າດັ່ງສະມະນະ
ປົດບັງກຳຊົ່ວ ມີຄວາມເຫັນຊົ່ວ ບໍ່ເອື້ອເຟື້ອ
ເວົ້າເລີະເທີ ເວົ້າຕົວະ
ທ່ານທັງຫຼາຍຮູ້ບຸກຄົນນັ້ນວ່າ ເປັນແນວໃດແລ້ວ
ຈຶ່ງພ້ອມພຽງກັນຂັບບຸກຄົນນັ້ນສາ
ຈຶ່ງກຳຈັດບຸກຄົນຜູ້ເປັນດັ່ງແກບ
ຈຶ່ງຖອນບຸກຄົນຜູ້ເປັນດັ່ງມູນຝອຍອອກໄປ
ຈຶ່ງນຳບຸກຄົນຜູ້ເປັນດັ່ງແກບ
ຜູ້ບໍ່ແມ່ນສະມະນະ ແຕ່ຍັງຖືຕົວວ່າເປັນສະມະນະອອກໄປສາ
ເມື່ອກຳຈັດບຸກຄົນຜູ້ປາຖະໜາຊົ່ວ
ມີອາຈາຣະແລະໂຄຈອນຊົ່ວອອກແລ້ວ
ຈຶ່ງເປັນຜູ້ມີສະຕິຢູ່ຮ່ວມກັບບຸກຄົນຜູ້ບໍລິສຸດແລະບຸກຄົນຜູ້ບໍ່ບໍລິສຸດ
ຈາກນັ້ນ ທ່ານທັງຫຼາຍເປັນຜູ້ພ້ອມພຽງກັນ
ມີປັນຍາເປັນເຄື່ອງຮັກສາຕົນ
ຈັກເຮັດບ່ອນສຸດແຫ່ງທຸກໄດ້

**ກາຣັນທະວະສູດທີ ໑໐ ຈົບ**

**ເມດຕາວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເມດຕາສູດ
໒. ປະຖະມະອັບປີຍະສູດ
໓. ປະຖະມະໂລກະທຳມະສູດ
໗. ເທວະທັດຕະວິປັດຕິສູດ
໙. ນັນທະສູດ
໔. ປັນຍາສູດ
໔. ທຸຕິຍະອັບປີຍະສູດ
໖. ທຸຕິຍະໂລກະທຳມະສູດ
໘. ອຸດຕະຣະວິປັດຕິສູດ
໑໐. ກາຣັນທະວະສູດ

# ໔. ມະຫາວັກ

## ໝວດວ່າດ້ວຍເລື້ອງໃຫຍ່

# ໑. ເວຣັນຊະສູດ

## ວ່າດ້ວຍພຣະພຸດທະເຈົ້າຊົງແກ້ຂໍ້ສົງໄສຂອງເວຣັນຊະພາມ

[໑໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ຄວງຕົ້ນກະເດົາອັນເປັນທີ່ຢູ່ຂອງນະເລຣຸຍັກ ເຂດເມືອງເວຣັນຊາ ຄັ້ງນັ້ນ ເວຣັນຊະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຮູ້ມາວ່າ ພຣະສະມະນະໂຄດົມບໍ່ໄຫວ້ ບໍ່ລຸກຮັບພວກພາມຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວມາໂດຍລຳດັບ ຫຼື ບໍ່ເຊື້ອເຊີນໃຫ້ນັ່ງ ເລື້ອງທີ່ຂ້າພະເຈົ້າໄດ້ຮູ້ມານັ້ນຈິງຢ່າງແນ່ນອນ ເພາະທ່ານພຣະໂຄດົມບໍ່ໄຫວ້ ບໍ່ລຸກຮັບ ພາມຜູ້ແກ່ ຜູ້ເຖົ້າ ຜູ້ໃຫຍ່ ຜູ້ລ່ວງການຜ່ານໄວມາໂດຍລຳດັບ ຫຼື ບໍ່ເຊື້ອເຊີນໃຫ້ນັ່ງ ການທີ່ທ່ານພຣະໂຄດົມ ເຮັດເຊັ່ນນັ້ນບໍ່ສົມຄວນເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ ເຮົາຍັງບໍ່ເຫັນຜູ້ທີ່ເຮົາຄວນຈະໄຫວ້ ລຸກຮັບ ຫຼື ເຊື້ອເຊີນໃຫ້ນັ່ງ ເພາະຕະຖາຄົດໄຫວ້ ລຸກຮັບ ຫຼື ເຊື້ອເຊີນຜູ້ໃດໃຫ້ນັ່ງ ຫົວຂອງຜູ້ນັ້ນຈະຕ້ອງຂາດຕົກໄປ"

໑. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມເປັນຄົນບໍ່ມີຣົດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ມີຣົດ" ນັ້ນມີມູນຢູ່ ເພາະຕະຖາຄົດລະຣົດຄືຮູບ ສຽງ ກິ່ນ ຣົດແລະໂຜດຖັບພະໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ມີຣົດ" ນີ້ແລມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານໝາຍເຖິງ"

໔. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມເປັນຄົນບໍ່ມີສົມບັດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ມີສົມບັດ" ນັ້ນມີມູນຢູ່ ເພາະຕະຖາຄົດລະສົມບັດ ຄື ຮູບ ສຽງ ກິ່ນ ຣົດແລະໂຜດຖັບພະໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ມີສົມບັດ" ນີ້ແລມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານໝາຍເຖິງ"

໖. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມສອນບໍ່ໃຫ້ເຮັດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມສອນບໍ່ໃຫ້ເຮັດ" ນັ້ນມີມູນຢູ່ ເພາະເຮົາສອນບໍ່ໃຫ້ເຮັດກາຍທຸດຈະຣິດ ວະຈີທຸດຈະຣິດແລະມະໂນທຸດຈະຣິດ ຕະຫຼອດເຖິງການບໍ່ໃຫ້ເຮັດບາບອະກຸສົນທຳຕ່າງ ໆ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມສອນບໍ່ໃຫ້ເຮັດ" ນີ້ມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານໝາຍເຖິງ"

໔. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມສອນໃຫ້ທຳລາຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມສອນໃຫ້ທຳລາຍ" ນັ້ນມີມູນຢູ່ ເພາະເຮົາສອນໃຫ້ທຳລາຍຣາຄະ ໂທສະແລະໂມຫະຕະຫຼອດເຖິງໃຫ້ທຳລາຍບາບອະກຸສົນທຳຕ່າງໆ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມສອນໃຫ້ທຳລາຍ" ນີ້ມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານໝາຍເຖິງ"

໕. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມເປັນຄົນຊ່າງຣັງກຽດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງຣັງກຽດ" ນັ້ນມີມູນຢູ່ ເພາະເຮົາຊ່າງຣັງກຽດກາຍທຸດຈະຣິດ ວະຈີທຸດຈະຣິດແລະມະໂນທຸດຈະຣິດ ຕະຫຼອດເຖິງຣັງກຽດບາບອະກຸສົນທຳຕ່າງ ໆ ຂໍ້ທີ່ບຸກຄົນ ກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງຣັງກຽດ" ນີ້ມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານໝາຍເຖິງ"

໖. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມເປັນຄົນຊ່າງກຳຈັດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງກຳຈັດ" ນັ້ນມີມູນຢູ່ ເພາະເຮົາສະແດງທຳເພື່ອກຳຈັດຣາຄະ ໂທສະແລະໂມຫະ ຕະຫຼອດເຖິງສະແດງທຳເພື່ອກຳຈັດບາບອະກຸສົນທຳຕ່າງ ໆ ຂໍ້ທີ່ບຸກຄົນ ກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງກຳຈັດ" ນີ້ມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານກ່າວເຖິງ"

໗. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມເປັນຄົນຊ່າງເຜົາຜານ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານ" ນັ້ນມີມູນຢູ່ ເພາະເຮົາກ່າວເຖິງບາບອະກຸສົນທຳທັງຫຼາຍ ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດວ່າເປັນສິ່ງທີ່ ຄວນເຜົາຜານ ເຮົາຮຽກຄົນທີ່ລະບາບອະກຸສົນທຳທັງຫຼາຍທີ່ຄວນເຜົາຜານໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ວ່າ "ເປັນຄົນຊ່າງເຜົາຜານ" ຕະຖາຄົດລະບາບອະກຸສົນທຳທີ່ຄວນເຜົາຜານໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານ" ນີ້ແລ ມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານໝາຍເຖິງ"

໘. ພາມຂາບທູນຕໍ່ໄປວ່າ "ທ່ານພຣະໂຄດົມເປັນຄົນບໍ່ຜຸດບໍ່ເກີດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ຜຸດບໍ່ເກີດ" ນັ້ນມີມູນຢູ່ ເພາະເຮົາຮຽກຄົນທີ່ລະການຢູ່ໃນທ້ອງ ແລະການເກີດໃໝ່ໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ວ່າ "ເປັນຄົນບໍ່ຜຸດບໍ່ເກີດ" ຕະຖາຄົດລະການຢູ່ໃນທ້ອງແລະການເກີດໃໝ່ໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ຜຸດບໍ່ເກີດ" ນີ້ມີມູນຢູ່ ແຕ່ບໍ່ແມ່ນທີ່ທ່ານໝາຍເຖິງ

ພາມ ໄຂ່ ໘ ໜ່ວຍ ໑໐ ໜ່ວຍ ຫຼື ໑໔ ໜ່ວຍ ທີ່ແມ່ໄກ່ໝູບດີແລ້ວ ໃຫ້ຄວາມອົບອຸ່ນດີແລ້ວ ຟັກດີແລ້ວ ບັນດາລູກໄກ່ເຫຼົ່ານັ້ນ ລູກໄກ່ໂຕທີ່ໃຊ້ເລັບ ຫຼື ຈະງອຍປາກຈິກເປືອກໄຂ່ອອກມາໄດ້ໂດຍສະຫວັດດີກ່ອນ ຄວນຮຽກມັນວ່າ "ເປັນໂຕອ້າຍ ຫຼື ໂຕນ້ອງ"

ພາມຂາບທູນວ່າ "ທ່ານພຣະໂຄດົມ ຄວນຮຽກວ່າ "ອ້າຍ" ເພາະມັນແກ່ກວ່າເຂົາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເຊັ່ນດຽວກັນນັ້ນແລພາມ ໃນຂະນະທີ່ໝູ່ສັດຖືກເປືອກໄຂ່ຄືອະວິດຊາຫໍ່ຫຸ້ມຢູ່ ເຮົາໄດ້ທຳລາຍເປືອກໄຂ່ ຄື ອະວິດຊາ ຜູ້ດຽວເທົ່ານັ້ນສຳເລັດອະນຸດຕະຣະສຳມາສຳໂພທິຍານອັນປະເສີດ ຈຶ່ງເປັນອ້າຍໃຫຍ່ຜູ້ປະເສີດທີ່ສຸດຂອງໂລກ

ພາມ ເຮົາຫາຣົບຄວາມພຽນ ບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ

ພາມ ເຮົານັ້ນສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່

ເພາະວິຕົກວິຈານສະງົບຣະງັບໄປ ເຮົາບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະ ທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່

ເພາະປີຕິຈາງຄາຍອອກ ເຮົາມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ"

ເພາະລະສຸກແລະທຸກໄດ້ ເພາະໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ເຮົາບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ເຮົານັ້ນໄດ້ນ້ອມຈິດໄປເພື່ອປຸບເພນິວາສາ ນຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບ ແລະວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ "ໃນພົບນັ້ນ ເຮົາມີຊື່ ຢ່າງນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸຢ່າງນັ້ນໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ຢ່າງນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸຢ່າງນັ້ນ ໆ ຈຸຕິຈາກພົບນັ້ນແລ້ວ ຈຶ່ງມາເກີດໃນພົບນີ້ ເຮົາຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດຢ່າງນີ້

ພາມ ເຮົາໄດ້ບັນລຸວິດຊາທີ ໑ ນີ້ແລ ໃນຍາມທີ ໑ ແຫ່ງຣາຕີ ຄວາມມືດມິດ ຄື ອະວິດຊາເຮົາກຳຈັດໄດ້ແລ້ວ ແສງສະຫວ່າງ ຄື ວິດຊາໄດ້ເກີດຂຶ້ນແກ່ເຮົາ ປຽບເໝືອນ ແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ພາມ ນີ້ຄືການເຈາະເປືອກໄຂ່ ຄື ອະວິດຊາອອກມາຄັ້ງທີ ໑ ຂອງເຮົາ ເໝືອນການເຈາະເປືອກໄຂ່ອອກມາຂອງລູກໄກ່

ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ເຮົານັ້ນໄດ້ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິແລະກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະ

ເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຊອບ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຊອບ ພວກເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ"

ເຮົາເຫັນໝູ່ສັດຜູ້ກຳລັງຈຸຕິ ແລະກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ເຮົາຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳດ້ວຍປະການດັ່ງນີ້

ພາມ ເຮົາໄດ້ບັນລຸວິດຊາທີ ໒ ນີ້ແລ ໃນຍາມທີ ໒ ແຫ່ງຣາຕີ ຄວາມມືດມິດຄືອະວິດຊາເຮົາກຳຈັດໄດ້ແລ້ວ ແສງສະຫວ່າງຄືວິດຊາໄດ້ເກີດຂຶ້ນແກ່ເຮົາ ປຽບເໝືອນແສງສະຫວ່າງ ເກີດຂຶ້ນແກ່ບຸກຄົນຜູ້ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ພາມ ນີ້ຄືການເຈາະເປືອກໄຂ່ຄືອະວິດຊາອອກມາຄັ້ງທີ ໒ ຂອງເຮົາ ເໝືອນການເຈາະເປືອກໄຂ່ອອກມາຂອງລູກໄກ່

ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວຢ່າງນີ້ ເຮົານັ້ນໄດ້ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມີນີປະຕິປະທາ" ເມື່ອເຮົາຮູ້ເຫັນຢູ່ຢ່າງນີ້ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ອະວິດຊາ ສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ ອີກຕໍ່ໄປ"

ພາມ ເຮົາໄດ້ບັນລຸວິດຊາທີ ໓ ນີ້ແລ ໃນຍາມທີ ໓ ແຫ່ງຣາຕີ ຄວາມມືດມິດ ຄື ອະວິດຊາເຮົາກຳຈັດໄດ້ແລ້ວ ແສງສະຫວ່າງ ຄື ວິດຊາໄດ້ເກີດຂຶ້ນແກ່ເຮົາ ປຽບເໝືອນແສງສະຫວ່າງເກີດຂຶ້ນແກ່ບຸກຄົນຜູ້ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈ

ພາມ ນີ້ຄືການເຈາະເປືອກໄຂ່ຄືອະວິດຊາອອກມາຄັ້ງທີ ໓ ຂອງເຮົາ ເໝືອນການເຈາະເປືອກໄຂ່ອອກມາຂອງລູກໄກ່

## ເວຮັນຊະພາມສະແດງຕົນເປັນອຸປາສົກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ແລ້ວ ເວຮັນຊະພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານພຣະໂຄດົມເປັນອ້າຍໃຫຍ່ ເປັນຜູ້ປະເສີດທີ່ສຸດ ຂ້າແດ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະຍິ່ງ ຂ້າແຕ່ທ່ານພຣະໂຄດົມ ພາສິດຂອງທ່ານພຣະໂຄດົມຊັດເຈນໄພເລາະຍິ່ງ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ໄຕ້ປະທີບໃນທີ່ມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມໂຜດຊົງຈຳຂ້າພຣະອົງວ່າເປັນອຸປາສົກ ຜູ້ເຖິງສະຣະນະຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເວຮັນຊະສູດທີ ໑ ຈົບ**

# ໔. ສີຫະສູດ

## ວ່າດ້ວຍສີຫະເສນາບໍດີ

[໑໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ ສະໄໝນັ້ນແລ ເຈົ້າລິດສະຫວີຜູ້ມີຊື່ສຽງເປັນຈຳນວນຫຼາຍ ນັ່ງປະຊຸມກັນໃນສັນຖາຄານ ກ່າວສັນເສີນພຣະພຸດທະເຈົ້າ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງໂດຍປະການຕ່າງ ໆ

ສະໄໝນັ້ນ ສີຫະເສນາບໍດີສາວົກຂອງນິຄົນ ນັ່ງຢູ່ໃນທີ່ປະຊຸມນັ້ນດ້ວຍ ລຳດັບນັ້ນ ສີຫະເສນາບໍດີໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຕ້ອງເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າແນ່ນອນ ເພາະເຈົ້າລິດສະຫວີຜູ້ມີຊື່ສຽງຈຳນວນຫຼາຍເຫຼົ່ານີ້ ນັ່ງປະຊຸມກັນໃນສັນຖາຄານ ຕ່າງກໍກ່າວສັນເສີນພຣະພຸດທະເຈົ້າ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງໂດຍປະການຕ່າງ ໆ ທາງທີ່ດີ ເຮົາຄວນຈະເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ"

ຕໍ່ມາ ສີຫະເສນາບໍດີໄດ້ເຂົ້າໄປຫານິຄົນນາດຕະບຸດເຖິງທີ່ຢູ່ ໄດ້ກ່າວກັບນິຄົນ ນາດຕະບຸດດັ່ງນີ້ວ່າ "ຂ້າພະເຈົ້າປາຖະໜາຈະໄປເຝົ້າພຣະສະມະນະໂຄດົມ ຂ້ານ້ອຍ"

ນິຄົນ ນາດຕະບຸດກ່າວວ່າ "ສີຫະ ທ່ານເປັນຜູ້ສອນໃຫ້ເຮັດ ເຫດໃດຈຶ່ງຈະໄປເຝົ້າພຣະສະມະນະໂຄດົມຜູ້ສອນບໍ່ໃຫ້ເຮັດນໍ? ເພາະພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ຍ່ອມສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳສາວົກຕາມແນວນັ້ນ"

ຄັ້ງນັ້ນແລ ສີຫະເສນາບໍດີໄດ້ລົ້ມເລີກຄວາມຕັ້ງໃຈທີ່ຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າ

ແມ່ນຄັ້ງທີ ໔ ເຈົ້າລິດສະຫວີຜູ້ມີຊື່ສຽງເປັນຈຳນວນຫຼາຍ ກໍໄດ້ນັ່ງປະຊຸມກັນໃນສັນຖາຄານ ກ່າວສັນເສີນພຣະພຸດທະເຈົ້າ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງໂດຍປະການຕ່າງ ໆ

ແມ່ນຄັ້ງທີ ໔ ສີຫະເສນາບໍດີກໍມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຕ້ອງເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າແນ່ນອນ ເພາະເຈົ້າລິດສະຫວີຜູ້ມີຊື່ສຽງຈຳນວນຫຼາຍເຫຼົ່ານີ້ນັ່ງປະຊຸມກັນໃນສັນຖາຄານ ຕ່າງກໍກ່າວສັນເສີນພຣະພຸດທະເຈົ້າ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງໂດຍປະການຕ່າງ ໆ ທາງທີ່ດີ ເຮົາຄວນຈະເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ"

ຕໍ່ມາ ສີຫະເສນາບໍດີໄດ້ເຂົ້າໄປຫານິຄົນ ນາດຕະບຸດເຖິງທີ່ຢູ່ ໄດ້ກ່າວກັບນິຄົນ ນາດຕະບຸດ ວ່າ "ຂ້າພະເຈົ້າປາຖະໜາຈະໄປເຝົ້າພຣະສະມະນະໂຄດົມ ຂ້ານ້ອຍ"

ນິຄົນ ນາດຕະບຸດກ່າວວ່າ "ສີຫະ ທ່ານເປັນຜູ້ສອນໃຫ້ເຮັດ ເຫດໃດຈຶ່ງຈະໄປເຝົ້າພຣະສະມະນະໂຄດົມຜູ້ສອນບໍ່ໃຫ້ເຮັດນໍ ເພາະພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ຍ່ອມສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ"

ແມ່ນຄັ້ງທີ ໔ ສີຫະເສນາບໍດີກໍລົ້ມເລີກຄວາມຕັ້ງໃຈທີ່ຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າ

ແມ່ນຄັ້ງທີ ໓ ເຈົ້າລິດສະຫວີຜູ້ມີຊື່ສຽງເປັນຈຳນວນຫຼາຍ ກໍໄດ້ນັ່ງປະຊຸມກັນໃນສັນຖາຄານ ກ່າວສັນເສີນພຣະພຸດທະເຈົ້າ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງໂດຍປະການຕ່າງ ໆ

ແມ່ນຄັ້ງທີ ໓ ສີຫະເສນາບໍດີກໍມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຕ້ອງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າແນ່ນອນ ເພາະເຈົ້າລິດສະຫວີຜູ້ມີຊື່ສຽງຈຳນວນຫຼາຍ ເຫຼົ່ານີ້ ນັ່ງປະຊຸມກັນໃນສັນຖາຄານ ຕ່າງກໍກ່າວສັນເສີນພຣະພຸດທະເຈົ້າ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງໂດຍປະການຕ່າງໆ ກໍພວກນິຄົນເຫຼົ່ານີ້ ເຮົາຈະບອກຫຼືບໍ່ກໍບໍ່ມີປະໂຫຍດອັນໃດ ທາງທີ່ດີ ເຮົາຈະບໍ່ບອກພວກນິຄົນ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳ ພຸດທະເຈົ້າພຣະອົງນັ້ນ"

ຄັ້ງນັ້ນ ສີຫະເສນາບໍດີເດີນທາງອອກຈາກເມືອງເວສາລີແຕ່ຍັງເວັນ ພ້ອມດ້ວຍລົດ ៥໐໐ ຄັນ ເດີນທາງໄປດ້ວຍຍານພາຫະນະ ຕະຫຼອດພື້ນທີ່ ທີ່ຍານພາຫະນະຈະໄປໄດ້ ແລ້ວລົງຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຟັງມາດັ່ງນີ້ວ່າ "ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ" ຄົນເຫຼົ່າໃດກ່າວຢ່າງນີ້ວ່າ "ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ສະແດງທຳເພື່ອການບໍ່ໃຫ້ເຮັດທັງແນະນຳພວກສາວົກຕາມແນວນັ້ນ" ຄົນເຫຼົ່ານັ້ນຈະຊື່ວ່າ ເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະບໍ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນບໍ ບໍ່ມີແດ່ບໍ ທີ່ຄຳກ່າວເຊັ່ນນັ້ນແລະຄຳທີ ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕຳໜິໄດ້ ເພາະຂ້າພຣະອົງບໍ່ປະສົງຈະກ່າວຕູ່ພຣະຜູ້ມີພຣະພາກເຈົ້າເລີຍ"

## ຂໍ້ກ່າວຫາ ៨ ປະການ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ສີຫະ

១. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່

២. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນໃຫ້ເຮັດ ສະແດງທຳເພື່ອການໃຫ້ເຮັດ ທັງແນະນຳສາວົກຕາມແນວນັ້ນ" ນັ້ນມີມູນຢູ່

໓. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນໃຫ້ທຳລາຍສະແດງທຳ ເພື່ອຄວາມໃຫ້ທຳລາຍ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່

៤. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງຣັງກຽດ ສະແດງທຳເພື່ອຄວາມຣັງກຽດ ທັງແນະນຳພວກສາວົກຕາມແນວນັ້ນ" ມີມູນຢູ່

៥. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງກຳຈັດ ສະແດງທຳເພື່ອການກຳຈັດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່

៦. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານສະແດງທຳເພື່ອຄວາມເຜົາຜານ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່

ກ. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ຜຸດບໍ່ເກີດ ສະແດງທຳເພື່ອຄວາມບໍ່ຜຸດບໍ່ເກີດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່

໘. ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນເບົາໃຈ ສະແດງທຳເພື່ອຄວາມເບົາໃຈ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່

## ພຣະດຳຣັດແກ້ຂໍ້ກ່າວຫາ

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາສອນບໍ່ໃຫ້ທຳກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ຕະຫຼອດເຖິງການບໍ່ໃຫ້ເຮັດບາບອະກຸສົນທຳຕ່າງ ໆ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ແລ ມີມູນຢູ່

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນໃຫ້ເຮັດ ສະແດງທຳເພື່ອການໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາສອນໃຫ້ເຮັດກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ຕະຫຼອດເຖິງການໃຫ້ເຮັດກຸສົນທຳຕ່າງໆ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນໃຫ້ເຮັດ ສະແດງທຳເພື່ອການໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ແລມີມູນຢູ່

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນໃຫ້ທຳລາຍ ສະແດງທຳເພື່ອຄວາມໃຫ້ທຳລາຍ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາສອນໃຫ້ທຳລາຍຣາຄະ ໂທສະ ແລະໂມຫະ ຕະຫຼອດເຖິງໃຫ້ທຳລາຍບາບອະກຸສົນທຳຕ່າງ ໆ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຜູ້ສອນໃຫ້ທຳລາຍ ສະແດງທຳເພື່ອການໃຫ້ທຳລາຍ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ແລມີມູນຢູ່

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງຣັງກຽດ ສະແດງທຳເພື່ອຄວາມຣັງກຽດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາຊ່າງຣັງກຽດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ຕະຫຼອດເຖິງຣັງກຽດ ການປະກອບບາບອະກຸສົນທຳຕ່າງ ໆ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງຣັງກຽດ ສະແດງທຳເພື່ອຄວາມຣັງກຽດ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ ມີມູນຢູ່

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງກຳຈັດ ສະແດງທຳເພື່ອຄວາມກຳຈັດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາສະແດງທຳເພື່ອກຳຈັດຣາຄະ ໂທສະ ແລະໂມຫະ ຕະຫຼອດເຖິງສະແດງທຳ ເພື່ອກຳຈັດບາບອະກຸສົນທຳຕ່າງ ໆ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງກຳຈັດ ສະແດງທຳເພື່ອການກຳຈັດ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ແລມີມູນຢູ່

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານ ສະແດງທຳເພື່ອຄວາມເຜົາຜານ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາກ່າວເຖິງບາບອະກຸສົນທຳທັງຫຼາຍ ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດວ່າເປັນສິ່ງທີ່ຄວນເຜົາຜານ ເຮົາຮຽກຄົນທີ່ລະບາບອະກຸສົນທຳທີ່ຄວນເຜົາຜານ ໄດ້ ໝົດສິ້ນ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ວ່າ "ເປັນຄົນຊ່າງເຜົາຜານ" ຕະຖາຄົດລະບາບອະກຸສົນທຳທີ່ຄວນເຜົາຜານໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານ ສະແດງທຳເພື່ອການເຜົາຜານ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ແລມີມູນຢູ່

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນບໍ່ຜຸດບໍ່ເກີດ ສະແດງທຳເພື່ອຄວາມບໍ່ຜຸດບໍ່ເກີດ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາຮຽກຄົນທີ່ລະການຢູ່ໃນທ້ອງ ແລະການເກີດໃໝ່ໄດ້ໝົດສິ້ນ ຕັດຮາກ ກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ວ່າ "ເປັນຄົນບໍ່ຜຸດບໍ່ເກີດ" ຕະຖາຄົດລະການຢູ່ໃນທ້ອງ ແລະການເກີດໃໝ່ໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນ ຄົນບໍ່ຜຸດບໍ່ເກີດ ສະແດງທຳເພື່ອການບໍ່ຜຸດບໍ່ເກີດ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ມີມູນຢູ່

ຂໍ້ທີ່ ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມເປັນຄົນເບົາໃຈ ສະແດງທຳເພື່ອຄວາມ ເບົາໃຈ ທັງແນະນຳພວກສາວົກຕາມແນວນັ້ນ" ນັ້ນມີມູນຢູ່ ເປັນແນວໃດ?

ຄື ເພາະເຮົາເປັນຄົນເບົາໃຈດ້ວຍຄວາມເບົາໃຈຢ່າງຍິ່ງ ສະແດງທຳເພື່ອຄວາມເບົາໃຈ ແລະແນະນຳເຫຼົ່າສາວົກຕາມແນວນັ້ນ ຂໍ້ທີ່ບຸກຄົນກ່າວຫາເຮົາວ່າ "ພຣະສະມະນະໂຄດົມ ເປັນຄົນເບົາໃຈ ສະແດງທຳເພື່ອຄວາມເບົາໃຈ ທັງແນະນຳພວກສາວົກຕາມແນວນັ້ນ" ນີ້ແລມີມູນຢູ່

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຕອບຢ່າງນີ້ແລ້ວ ສີຫະເສນາບໍດີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນໄພເລາະຍິ່ງ ຂ້າແດ່ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນໄພເລາະຍິ່ງ ໆລໆ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຈຳຂ້າພຣະອົງວ່າເປັນອຸປາສົກ ຜູ້ເຖິງສະຣະນະຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີຫະ ທ່ານຈົ່ງພິຈາຣະນາກ່ອນແລ້ວຈຶ່ງຕັດສິນໃຈເທີ້ນ ຄົນທີ່ມີຊື່ສຽງເຊັ່ນທ່ານ ຕ້ອງພິຈາຣະນາໃຫ້ຮອບຄອບກ່ອນຈຶ່ງເປັນການດີ"

ສີຫະເສນາບໍດີຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຍິນດີຊື່ນໃຈຢ່າງຍິ່ງ ເພາະພຣະດຳຣັດທີ່ພຣະອົງຕັດວ່າ "ສີຫະ ທ່ານຈົ່ງພິຈາຣະນາກ່ອນແລ້ວຈຶ່ງຕັດສິນໃຈເທີ້ນ ຄົນທີ່ມີຊື່ສຽງເຊັ່ນທ່ານ ຕ້ອງພິຈາຣະນາໃຫ້ຮອບຄອບກ່ອນຈຶ່ງເປັນການດີ" ເພາະພວກ ອັນຍະເດຍຣະຖີໄດ້ ຂ້າພຣະອົງເປັນສາວົກແລ້ວ ກໍປ່າວປະກາດໄປທົ່ວເມືອງເວສາລີວ່າ "ສີຫະເສນາບໍດີເປັນສາວົກຂອງພວກເຮົາ" ແຕ່ພຣະອົງກັບຕັດວ່າ "ທ່ານຈົ່ງພິຈາຣະນາກ່ອນແລ້ວຈຶ່ງຕັດສິນໃຈເທີ້ນ ຄົນທີ່ມີຊື່ສຽງເຊັ່ນທ່ານ ຕ້ອງພິຈາຣະນາໃຫ້ຮອບຄອບກ່ອນຈຶ່ງເປັນການດີ" ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນຄັ້ງທີ ໒ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຈຳຂ້າພຣະອົງວ່າເປັນອຸປາສົກ ຜູ້ເຖິງສະຣະນະຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດເທີ້ນ"

## ຊົງສະໜັບສະໜູນໃຫ້ອຸບປະຖຳລັດທິທີ່ເຄີຍນັບຖືມາກ່ອນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີຫະ ຕະກູນຂອງທ່ານເຄີຍເປັນທີ່ຕ້ອນຮັບພວກນິຄົນມາດົນ ດັ່ງນັ້ນ ທ່ານເພິ່ງໃສ່ໃຈວ່າຄວນໃຫ້ບິນທະບາດແກ່ພວກນິຄົນຜູ້ເຂົ້າໄປຕະກູນ ຕໍ່ໄປເທີ້ນ"

ສີຫະເສນາບໍດີຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍິນດີຊື່ນໃຈຢ່າງຍິ່ງ ເພາະພຣະດຳຣັດທີ່ພຣະອົງຕັດວ່າ "ສີຫະ ຕະກູນຂອງທ່ານເຄີຍເປັນທີ່ຕ້ອນຮັບ ພວກນິຄົນມາດົນ ດັ່ງນັ້ນ ທ່ານເພິ່ງໃສ່ໃຈວ່າຄວນໃຫ້ບິນທະບາດແກ່ພວກນິຄົນຜູ້ເຂົ້າໄປຕະກູນຕໍ່ໄປເທີ້ນ" ຂ້າພຣະອົງໄດ້ຟັງມາດັ່ງນີ້ວ່າ ພຣະສະມະນະໂຄດົມຕັດຢ່າງນີ້ວ່າ "ຄວນໃຫ້ທານແກ່ເຮົາເທົ່ານັ້ນບໍ່ຄວນໃຫ້ທານແກ່ສາດສະດາອື່ນ ຄວນໃຫ້ທານແກ່ສາວົກຂອງເຮົາເທົ່ານັ້ນ ບໍ່ຄວນໃຫ້ທານແກ່ສາວົກຂອງສາດສະດາອື່ນ ທານທີ່ໃຫ້ແກ່ເຮົາເທົ່ານັ້ນມີຜົນຫຼາຍ ທານທີ່ໃຫ້ແກ່ສາດສະດາອື່ນບໍ່ມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງເຮົາເທົ່ານັ້ນມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງສາດສະດາອື່ນບໍ່ມີຜົນຫຼາຍ" ແຕ່ພຣະຜູ້ມີພຣະພາກເຈົ້າກັບຊົງຊັກຊວນໃຫ້ຂ້າພຣະອົງໃຫ້ທານ ແກ່ພວກນິຄົນ ຂ້າພຣະອົງຈະຮູ້ເວລາໃນເລື້ອງນີ້ເອງ ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນຄັ້ງທີ ໓ ຂ້າພຣະ

ອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກ ຜູ້ເຖິງສະຣະນະຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພີກະຖາແກ່ສີຫະເສນາບໍດີ ຄື ຊົງປະກາດ

໑. ທານະກະຖາ (ເລື່ອງທານ)
໒. ສີລະກະຖາ (ເລື່ອງສິນ)
໓. ສັກຄະກະຖາ (ເລື່ອງສະຫວັນ)
໔. ກາມາທີນະວະກະຖາ (ເລື່ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງການ)
໕. ເນກຂຳມານີສັງສະກະຖາ (ເລື່ອງອານີສົງແຫ່ງການອອກຈາກກາມ)

ເມື່ອຊົງຮູ້ວ່າ ສີຫະເສນາບໍດີມີຈິດຄວນບັນລຸທຳສະງົບ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສີກະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດແກ່ສີຫະເສນາບໍດີນັ້ນເທິງທີ່ນັ່ງນັ້ນເອງວ່າ “ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ” ປຽບເໝືອນຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ຄັ້ງນັ້ນແລ ສີຫະເສນາບໍດີໄດ້ເຫັນທຳ ບັນລຸທຳ ຮູ້ທຳ ຢັ່ງລົງສູ່ທຳ ຂ້າມພົ້ນຄວາມສົງໄສ ປາສະຈາກຄວາມເຄືອບແຄງ ເຖິງຄວາມແກ່ກ້າ ປາສະຈາກຄວາມມີຜູ້ອື່ນເປັນປັດໄຈໃນສາດສະ ໜາຂອງພຣະສາດສະດາ ຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ພ້ອມດ້ວຍພຣະພິກຂຸສົງໂຜດຮັບພັດຕາຫານໃນມື້ອື່ນນີ້ດ້ວຍເທີ້ນ”

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ສີຫະເສນາບໍດີນັ້ນ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຈາກໄປ

ລຳດັບນັ້ນ ສີຫະເສນາບໍດີໃຊ້ມະຫາດນ້ອຍຜູ້ໜຶ່ງວ່າ “ທ່ານໄປຫາຊື້ຊີ້ນສົດທີ່ມີຂາຍມາ” ເມື່ອຄືນນັ້ນຜ່ານໄປ ໄດ້ສັ່ງໃຫ້ຈັດກຽມຂອງຫຍ້ຳຂອງສັນອັນປະນີດໄວ້ໃນນິເວດຂອງຕົນແລ້ວ ຈຶ່ງໃຫ້ໄປຂາບທູນພັດຕະການວ່າ “ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານ ສຳເລັດແລ້ວ”

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດ ແລະຈີວອນ ສະເດັດເຂົ້າໄປສູ່ນິເວດຂອງສີຫະເສນາບໍດີພ້ອມດ້ວຍພິກຂຸສົງ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້

ສະໄໝນັ້ນ ພວກນີຄົນຈຳນວນຫຼາຍພາກັນກອດແຂນຄ່ຳຄວນໄປຕາມຖະໜົນສີ່ແຍກສາມແຍກ ທົ່ວເມືອງເວສາລີວ່າ "ວັນນີ້ ສີຫະເສນາບໍດີຂ້າສັດລ້ຽງຕົວຕຸ້ຍໆ ເຮັດອາຫານລ້ຽງພຣະສະມະນະໂຄດົມ ພຣະສະມະນະໂຄດົມທັງທີ່ຮູ້ຢູ່ກໍຍັງສັນຊີ້ນທີ່ເຂົາເຮັດເຈາະຈົງຕົນເອງ"

ຄັ້ງນັ້ນແລ ມະຫາດນ້ອຍຜູ້ໜຶ່ງເຂົ້າໄປຫາສີຫະເສນາບໍດີແລ້ວຊິ່ມບອກວ່າ "ທ່ານຂ້ານ້ອຍ ໄດ້ໂຜດຮູ້ ພວກນີຄົນຈຳນວນຫຼາຍພາກັນກອດແຂນຄ່ຳຄວນໄປຕາມຖະໜົນສີ່ແຍກສາມແຍກ ທົ່ວເມືອງເວສາລີວ່າ "ວັນນີ້ ສີຫະເສນາບໍດີຂ້າສັດລ້ຽງຕົວຕຸ້ຍໆ ເຮັດອາຫານ ລ້ຽງພຣະສະມະນະໂຄດົມ ພຣະສະມະນະໂຄດົມທັງທີ່ຮູ້ຢູ່ ກໍຍັງສັນຊີ້ນທີ່ເຂົາເຮັດເຈາະຈົງຕົນເອງ"

ສີຫະເສນາບໍດີຕອບວ່າ "ຊ່າງເທີ້ນ ທ່ານເຫຼົ່ານັ້ນປະສົງຈະຕຳໜິພຣະພຸດທະເຈົ້າ ປະສົງຈະຕຳໜິພຣະທຳ ປະສົງຈະຕຳໜິພຣະສົງມາດົນແລ້ວ ແລະທ່ານເຫຼົ່ານັ້ນກໍກ່າວຕູ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນດ້ວຍເລື້ອງທີ່ບໍ່ມີຢູ່ ເປົ່າປະໂຫຍດ ເປັນເລື້ອງຕົວະ ບໍ່ເປັນຈິງ ສ່ວນພວກເຮົາບໍ່ຈົງໃຈຂ້າສັດແມ່ນເພາະເຫດແຫ່ງຊີວິດ"

ຈາກນັ້ນ ສີຫະເສນາບໍດີໄດ້ນຳຂອງຂົບສັນ ອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າ ເປັນປະທານໃຫ້ຊົງອີ່ມໜຳດ້ວຍຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງວາງພຣະຫັດຈາກບາດ ສີຫະເສນາບໍດີຈຶ່ງເລືອກທີ່ນັ່ງຢູ່ບ່ອນທີ່ສົມຄວນທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ສີຫະເສນາບໍດີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈ ໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣິງດ້ວຍທຳມີກະຖາ ແລ້ວຊົງລຸກຈາກອາສະນະສະເດັດຈາກໄປ

**ສີຫະສູດທີ ໘ ຈົບ**

## ໙. ອັດສາຊານີຍະສູດ

## ວ່າດ້ວຍມ້າອາຊາໄນຍ

[໑໙] ພິກຂຸທັງຫຼາຍ ມ້າອາຊາໄນຍພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໗ ປະການ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະ ໂດຍແທ້ ອົງ ໗ ປະການ ອັນໃດແດ່ ຄື ມ້າອາຊາໄນພັນດີຂອງພຣະຣາຊາໃນໂລກນີ້

໑. ເປັນສັດມີກຳເນີດດີທັງຝ່າຍແມ່ມ້າ ແລະພໍ່ມ້າ ເກີດໃນທິດທີ່ມ້າອາຊາໄນພັນດີອື່ນ ໆ ພາກັນເກີດ
໒. ກິນຫຍ້າສົດ ຫຼື ຫຍ້າແຫ້ງທີ່ເຂົາໃຫ້ຢ່າງຮຽບຮ້ອຍບໍ່ກະຈາຍຮີກໄປທົ່ວ
໓. ຣັງກຽດທີ່ຈະໝອບທັບ ຫຼື ນອນທັບອຸດຈາຣະ ຫຼື ປັດສາວະ
໔. ເປັນສັດສະງົບສະງ່ຽມ ຢູ່ຮ່ວມກັນເປັນສຸກ ບໍ່ລົບກວນມ້າອື່ນ ໆ
໕. ເປັນສັດເປີດເຜີຍ ຄວາມໂອ້ອວດ ຄວາມພະຍົດ ແກ່ນາຍສາຣະຖີຕາມຄວາມເປັນຈິງ
໖. ນາຍສາຣະຖີພະຍາຍາມປາບຄວາມໂອ້ອວດ ຄວາມພະຍົດ ເຫຼົ່ານັ້ນຂອງມັນໄດ້
໗. ເປັນສັດແກ່ຂອງໜັກໄປໄດ້ ຄື ມີຄວາມຄິດວ່າ "ມ້າອື່ນ ໆ ຈະແກ່ຂອງໜັກໄປໄດ້ຫຼືບໍ່ກໍຕາມ ເຮົາຈັກແກ່ຂອງໜັກນີ້ໄປໃຫ້ໄດ້" ແລະເມື່ອຍ່າງໄປກໍຍ່າງໄປຕາມທາງກົງເທົ່ານັ້ນ
໘. ເປັນສັດມີກຳລັງ ຄື ຊົງກຳລັງໄວ້ໄດ້ຈົນເຖິງວາຣະສຸດທ້າຍແຫ່ງຊີວິດ

ພິກຂຸທັງຫຼາຍ ມ້າອາຊາໄນພັນດີຂອງພຣະຣາຊາ ປະກອບດ້ວຍອົງ ໘ ປະການນີ້ແລ ຍ່ອມເປັນມ້າຄວນແກ່ພຣະຣາຊາ ຄວນເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໘ ປະການ ກໍສັນນັ້ນຄືກັນ ຍ່ອມເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ ທຳ ໘ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍ ອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ສັນໂພຊະນະທີ່ເຂົາຖວາຍຈະເສົ້າໝອງ ຫຼື ປະນີດກໍຕາມ ໂດຍເຄົາລົບ ບໍ່ຣັງກຽດ

໓. ຣັງກຽດກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ຕະຫຼອດເຖິງຣັງກຽດການປະກອບບາບອະກຸສົນທຳຕ່າງ ໆ

໔. ເປັນຜູ້ສະງົບສະງ່ຽມ ຢູ່ຮ່ວມກັນເປັນສຸກ ບໍ່ລົບກວນພິກຂຸອື່ນ ໆ

໕. ເປັນຜູ້ເປີດເຜີຍຄວາມໂອ້ອວດ ຄວາມພະຍົດຄົດໂກງ ແກ່ພຣະສາດສະດາ ຫຼື ເພື່ອນພົມມະຈາຣີທັງຫຼາຍຜູ້ເປັນວິນຍູຊົນ ຕາມຄວາມເປັນຈິງ

໖. ພຣະສາດສະດາ ຫຼື ເພື່ອນພົມມະຈາຣີທັງຫຼາຍຜູ້ເປັນວິນຍູຊົນ ພະຍາຍາມ ຊ່ວຍກັນກຳຈັດຄວາມໂອ້ອວດ ຄວາມພະຍົດຄົດໂກງເຫຼົ່ານັ້ນຂອງທ່ານໄດ້

໗. ເປັນຜູ້ສຶກສາ ຄື ໃຝ່ໃຈຢູ່ວ່າ "ພິກຂຸອື່ນ ໆ ຈະສຶກສາ ຫຼື ບໍ່ກໍຕາມ ສະເພາະຂໍ້ ນີ້ເຮົາຈັກສຶກສາໄດ້" ເມື່ອດຳເນີນໄປກໍດຳເນີນໄປຕາມທາງກົງເທົ່ານັ້ນ ຄື ສຳ ມາທິດຖິ ຯລຯ ສຳມາສະມາທິ

໘. ເປັນຜູ້ຜາຣົບຄວາມພຽນຢູ່ວ່າ ຈະເຫຼືອຢູ່ແຕ່ໜັງ ເອັນ ກະດູກ ກໍຕາມທີ ຊີ້ນ ແລະເລືອດໃນສະຣີຣະຈົ່ງເຫືອດແຫ້ງໄປເຖີ້ນ ເຮົາຍັງບໍ່ບັນລຸຜົນ ທີ່ຈະເພິ່ງບັນ ລຸ ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນ ຂອງບຸຣຸດແລ້ວ ຈັກບໍ່ຢຸດຄວາມພຽນ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໘ ປະການນີ້ແລ ຍ່ອມເປັນຜູ້ຄວນແກ່ຂອງທີ່ ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ອັດສາຊານີຍະສູດທີ ໓ ຈົບ**

# ໔. ອັດສະຂະລຸງກະສູດ

## ວ່າດ້ວຍມ້າກະຈອກແລະຄົນກະຈອກ

[໑໔] ພິກຂຸທັງຫຼາຍ ເຮົາຈັກສະແດງມ້າກະຈອກ ໘ ຈຳພວກ ແລະໂທດຂອງມ້າກະ ຈອກ ໘ ປະການ ຄົນກະຈອກ ໘ ຈຳພວກ ແລະໂທດຂອງຄົນກະຈອກ ໘ ປະການ ທ່ານ ທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ມ້າກະຈອກ ໘ ຈຳພວກ ແລະໂທດຂອງມ້າກະຈອກ ໘ ປະການ ອັນໃດແດ່ ຄື

໑. ມ້າກະຈອກບາງຕົວໃນໂລກນີ້ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍ ປະຕັກເຕືອນຢູ່ກໍຖອຍຫຼັງ ດັນລົດໃຫ້ກັບຫຼັງ ມ້າກະຈອກ ບາງຕົວໃນໂລກນີ້ ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໑

໒. ມ້າກະຈອກບາງຕົວໃນໂລກນີ້ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍ ປະຕັກເຕືອນຢູ່ ລົ້ມລົງ ດັດທູບໃຫ້ຫັກ ມ້າກະຈອກບາງຕົວໃນໂລກນີ້ເປັນຢ່າງ ນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໒

໓. ມ້າກະຈອກບາງຕົວໃນໂລກນີ້ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ຍົກຂາຂຶ້ນເຂ່ຍງອນລົດ ຖີບງອນລົດ ມ້າກະຈອກ ບາງຕົວໃນໂລກນີ້ ເປັນເຊັ່ນນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໓

໔. ມ້າກະຈອກບາງຕົວໃນໂລກນີ້ ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ກໍຍ່າງຜິດທາງ ເຮັດໃຫ້ລົດໄປຜິດທາງ ມ້າກະຈອກບາງຕົວໃນໂລກນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໔

໕. ມ້າກະຈອກບາງຕົວໃນໂລກນີ້ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກ ເຕືອນຢູ່ ເຊີດກາຍສ່ວນໜ້າຂຶ້ນແລ່ນຂຶ້ນໄປ ມ້າກະຈອກບາງຕົວໃນໂລກນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໕

໖. ມ້າກະຈອກບາງຕົວໃນໂລກນີ້ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ (ບໍ່ຄຳນຶງເຖິງນາຍສາຣະຖີ) ບໍ່ຄຳນຶງເຖິງປະຕັກ ກັດບັງຫຽນຫຼີກໄປຕາມຄວາມປະສົງ ມ້າກະຈອກບາງຕົວໃນໂລກນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໖

໗. ມ້າກະຈອກບາງຕົວໃນໂລກນີ້ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ບໍ່ກ້າວໄປ ບໍ່ຖອຍຫຼັງ ຢືນທີ່ຢູ່ເໝືອນເສົາເຂື່ອນໃນທີ່ກົງນັ້ນເອງ ມ້າກະຈອກບາງຕົວໃນໂລກນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໗

໘. ມ້າກະຈອກບາງຕົວໃນໂລກນີ້ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ຄຸກຂາໜ້າ ແລະຂາຫຼັງລົງໝອບທັບຂາທັງ ໔ ຢູ່ທີ່ກົງນັ້ນເອງ ມ້າກະຈອກບາງຕົວໃນໂລກນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງມ້າກະຈອກປະການທີ ໘

ພິກຂຸທັງຫຼາຍ ມ້າກະຈອກ ໘ ຈຳພວກ ແລະໂທດຂອງມ້າກະຈອກ ໘ ປະການນີ້ແລ

ພິກຂຸທັງຫຼາຍ ຄົນກະຈອກ ໘ ຈຳພວກ ແລະໂທດຂອງຄົນກະຈອກ ໘ ປະການອັນໃດແດ່ ຄື

໑. ພິກຂຸທັງຫຼາຍໃນທຳວິໄນນີ້ໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາ ບັດນັ້ນ ຍ່ອມອຳພາງອາບັດໄວ້ ເພາະຣະນຶກບໍ່ໄດ້ວ່າ "ເຮົາຣະນຶກບໍ່ໄດ້ ເຮົາຣະນຶກບໍ່ໄດ້" ເຮົາກ່າວປຽບບຸກຄົນປະເພດນີ້ວ່າ ເໝືອນມ້າກະ

ຈອກທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ກໍຖອຍຫຼັງ ດັນລົດໃຫ້ກັບຫຼັງ ສະນັ້ນ ຄົນກະຈອກບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງຄົນກະຈອກປະການທີ ໑

໒. ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາບັດນັ້ນ ໂຕ້ຕອບພິກຂຸຜູ້ເປັນໂຈດວ່າ "ການກ່າວຂອງທ່ານຜູ້ເປັນ ຄົນພານ ບໍ່ສຽບແຫຼມ ຈະມີປະໂຫຍດອັນໃດນໍ? ທ່ານເອງຍ່ອມເຂົ້າໃຈ ສິ່ງທີ່ຄວນເວົ້າ" ເຮົາກ່າວປຽບບຸກຄົນປະເພດນີ້ວ່າ ເໝືອນມ້າກະຈອກທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ກໍລົ້ມລົງ ດັດທູບໃຫ້ຫັກ ສະນັ້ນ ຄົນກະຈອກບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງຄົນກະຈອກປະການທີ ໒

໓. ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາບັດນັ້ນ ກັບຍົກອາບັດຂຶ້ນປັບພິກຂຸຜູ້ເປັນໂຈດວ່າ "ທ່ານເອງກໍຕ້ອງອາບັດຊື່ນີ້ ທ່ານຈົ່ງເຮັດຄືນເສຍກ່ອນ" ເຮົາກ່າວປຽບບຸກຄົນປະເພດນີ້ ວ່າເໝືອນມ້າກະຈອກທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກ ເຕືອນຢູ່ ກໍຍົກຂາຂຶ້ນເຂ່ຍງອນລົດ ຖີບງອນລົດ ສະນັ້ນ ຄົນກະຈອກບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງຄົນກະຈອກປະການທີ ໓

໔. ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາບັດນັ້ນ ເວົ້າປົກປິດ ເວົ້ານອກເລື້ອງ ສະແດງອາການໂກດ ຂັດເຄືອງ ແລະບໍ່ພໍໃຈ ເຮົາກ່າວປຽບບຸກຄົນປະເພດນີ້ວ່າເໝືອນມ້າກະຈອກ ທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ກໍຍ່າງ ຜິດທາງ ເຮັດໃຫ້ລົດໄປຜິດທາງ ສະນັ້ນ ຄົນກະຈອກບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງຄົນກະຈອກປະການທີ ໔

໕. ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາບັດນັ້ນ ກັບແກວ່ງແຂນໃນທ່າມກາງສົງ ເຮົາກ່າວປຽບບຸກຄົນປະເພດນີ້ວ່າເໝືອນມ້າກະຈອກທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ເຊີດກາຍດ້ານໜ້າ ແລ່ນຂຶ້ນໄປ ສະນັ້ນ ຄົນກະຈອກ ບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງຄົນກະຈອກປະການທີ ໕

໖. ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດ ດ້ວຍອາບັດນັ້ນ ບໍ່ເອື້ອເຟື້ອສົງ ບໍ່ເອື້ອເຟື້ອພິກຂຸຜູ້ເປັນໂຈດ ທັງທີ່ມີອາບັດຕິດຕົວຢູ່

ກໍຫຼີກໄປຕາມຄວາມປະສົງ ເຮົາກ່າວປຽບບຸກຄົນ ປະເພດນີ້ວ່າ ເໝືອນມ້າກະຈອກທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ກໍບໍ່ຄຳນຶງເຖິງນາຍສາຣະຖີ ບໍ່ຄຳນຶງເຖິງປະຕັກ ກັດບັງຫຽນ ຫຼີກໄປຕາມປະສົງ ສະນັ້ນ ຄົນກະຈອກບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງຄົນກະຈອກປະການທີ ໖

໗. ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາບັດນັ້ນ ກ່າວຢ່າງນີ້ວ່າ "ເຮົາບໍ່ໄດ້ຕ້ອງອາບັດເລີຍ ເຮົາບໍ່ໄດ້ຕ້ອງອາບັດເລີຍ" ທ່ານໃຊ້ຄວາມນິ່ງເຮັດໃຫ້ສົງລຳບາກ ເຮົາກ່າວປຽບບຸກຄົນ ປະເພດນີ້ວ່າເໝືອນມ້າກະຈອກທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ກໍບໍ່ກ້າວໄປ ບໍ່ຖອຍກັບ ຢືນທີ່ຢູ່ເໝືອນເສົາເຂື່ອນ ໃນທີ່ກົງນັ້ນນັ້ນເອງ ສະນັ້ນ ຄົນກະຈອກບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີ ນີ້ເປັນໂທດຂອງຄົນກະຈອກປະການທີ ໗

໘. ພິກຂຸທັງຫຼາຍໂຈດພິກຂຸດ້ວຍອາບັດ ພິກຂຸອົງທີ່ຖືກພວກພິກຂຸໂຈດດ້ວຍອາບັດນັ້ນ ກ່າວຢ່າງນີ້ວ່າ "ເປັນຫຍັງນໍ ທ່ານຜູ້ມີອາຍຸທັງຫຼາຍ ຈຶ່ງພະຍາຍາມກ່າວຫາເຮົາແທ້ ເອົາລະ ເຮົາຈັກບອກຄືນສິກຂາກັບມາເປັນຄະລຶຫັດ" ທ່ານບອກຄືນສິກຂາກັບມາເປັນຄະລຶຫັດແລ້ວຈຶ່ງກ່າວຢ່າງນີ້ວ່າ "ບັດນີ້ ຂໍທ່ານຜູ້ມີອາຍຸທັງຫຼາຍໂຜດເບົາໃຈເທີ້ນ" ເຮົາກ່າວປຽບບຸກຄົນປະເພດນີ້ວ່າເໝືອນມ້າກະຈອກທີ່ນາຍສາຣະຖີສັ່ງວ່າ "ຍ່າງໄປ" ຖືກແທງດ້ວຍປະຕັກເຕືອນຢູ່ ຄຸກຂ້າໜ້າແລະຂາຫຼັງລົງ ໝອບທັບຂາ ທັງ ໔ ຢູ່ທີ່ກົງນັ້ນນັ້ນເອງ ສະນັ້ນ ຄົນກະຈອກບາງຄົນໃນທຳວິໄນນີ້ເປັນຢ່າງນີ້ກໍມີນີ້ເປັນໂທດຂອງຄົນກະຈອກປະການທີ ໘

ພິກຂຸທັງຫຼາຍ ຄົນກະຈອກ ໘ ຈຳພວກ ແລະໂທດຂອງຄົນກະຈອກ ໘ ປະການນີ້ແລ

**ອັດສະຂະລຸງກະສູດທີ ໔ ຈົບ**

# ໕. ມະລະສູດ

## ວ່າດ້ວຍມົນທິນ

[໑໕] ພິກຂຸທັງຫຼາຍ ມົນທິນ (ຄວາມມົວໝອງ) ໘ ປະການນີ້

ມົນທິນ ໘ ປະການ ອັນໃດແດ່ ຄື

໑. ມົນມີການບໍ່ທ່ອງຈົ່ມເປັນມົນທິນ
໒. ເຮືອນມີຄວາມບໍ່ຂະຫຍັນໝັ່ນພຽນເປັນມົນທິນ
໓. ຜິວພັນມີຄວາມຂີ້ຄ້ານເປັນມົນທິນ
໔. ຜູ້ຮັກສາມີຄວາມຜະໝາດເປັນມົນທິນ
໕. ສະຕິມີຄວາມປະພຶດຊົ່ວເປັນມົນທິນ
໖. ຜູ້ໃຫ້ມີຄວາມຂີ້ຖີ່ເປັນມົນທິນ
໗. ບາບອະກຸສົນທຳເປັນມົນທິນທັງໃນໂລກນີ້ແລະໂລກໜ້າ
໘. ມົນທິນທີ່ຍິ່ງກວ່າມົນທິນນັ້ນຄືອະວິດຊາ

ພິກຂຸທັງຫຼາຍ ມົນທິນ ໘ ປະການນີ້ແລ

ມົນມີການບໍ່ທ່ອງຈົ່ມເປັນມົນທິນ
ເຮືອນມີຄວາມບໍ່ຂະຫຍັນໝັ່ນພຽນເປັນມົນທິນ
ຜິວພັນມີຄວາມຂີ້ຄ້ານເປັນມົນທິນ
ຜູ້ຮັກສາມີຄວາມຜະໝາດເປັນມົນທິນ
ສະຕິມີຄວາມປະພຶດຊົ່ວເປັນມົນທິນ
ຜູ້ໃຫ້ມີຄວາມຂີ້ຖີ່ເປັນມົນທິນ
ບາບທຳເປັນມົນທິນທັງໃນໂລກນີ້ແລະໂລກໜ້າ
ມົນທິນທີ່ຍິ່ງກວ່າມົນທິນນັ້ນຄືອະວິດຊາ

**ມະລະສູດທີ ໕ ຈົບ**

## ໖. ທູເຕີຍຍະສູດ

## ວ່າດ້ວຍຄຸນສົມບັດຂອງທູດ

[໑໖] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການ ຄວນເຮັດໜ້າທີ່ທູດໄດ້ ທຳ ໘ ປະການ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ຮູ້ຈັກຟັງ
໒. ສາມາດເວົ້າໃຫ້ຜູ້ອື່ນຟັງໄດ້
໓. ໃຝ່ສຶກສາ
໔. ຊົງຈຳໄດ້ດີ
໕. ເປັນຜູ້ຮູ້ໄດ້ເຂົ້າໃຈແຈ້ງ

໖. ສາມາດເວົ້າໃຫ້ຜູ້ອື່ນເຂົ້າໃຈໄດ້
໗. ສະຫຼາດໃນສິ່ງທີ່ເປັນປະໂຫຍດແລະບໍ່ເປັນປະໂຫຍດ
໘. ບໍ່ກໍ່ຄວາມຜິດຖຽງກັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການນີ້ແລ ຄວນເຮັດໜ້າທີ່ທູດໄດ້

ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໘ ປະການ ຄວນເຮັດໜ້າທີ່ທູດໄດ້ ທຳ ໘ ປະການ ອັນໃດແດ່ ຄື ໃນທຳວິໄນນີ້ ສາຣີບຸດ

໑. ຮູ້ຈັກຟັງ
໒. ສາມາດເວົ້າໃຫ້ຜູ້ອື່ນຟັງໄດ້
໓. ໃຝ່ສຶກສາ
໔. ຊົງຈຳໄດ້ດີ
໕. ເປັນຜູ້ຮູ້ໄດ້ເຂົ້າໃຈແຈ້ງ
໖. ສາມາດເວົ້າໃຫ້ຜູ້ອື່ນເຂົ້າໃຈໄດ້
໗. ສະຫຼາດໃນສິ່ງທີ່ເປັນປະໂຫຍດແລະບໍ່ເປັນປະໂຫຍດ
໘. ບໍ່ກໍ່ຄວາມຜິດຖຽງກັນ

ພິກຂຸທັງຫຼາຍ ສາຣີບຸດປະກອບດ້ວຍທຳ ໘ ປະການນີ້ແລ ຄວນເຮັດໜ້າທີ່ທູດໄດ້

ພິກຂຸຜູ້ເຂົ້າສູ່ຊຸມຊົນທີ່ໂຕ້ຖຽງກັນຢ່າງຮຸນແຮງ
ກໍບໍ່ສະທົກສະທ້ານ ບໍ່ເຮັດຄຳເວົ້າໃຫ້ເສຍ
ບໍ່ປົກປິດຂ່າວສານ ຊີ້ແຈ່ງຢ່າງບໍ່ມີຂໍ້ສົງໄສ
ຖືກຍ້ອນຖາມ ກໍບໍ່ໂກດ
ພິກຂຸຜູ້ມີລັກສະນະເຊັ່ນນັ້ນ ຄວນເຮັດໜ້າທີ່ທູດໄດ້

**ທູເຕີຍຍະສູດທີ ໖ ຈົບ**

# ໗. ປະຖະມະພັນທະນະສູດ

## ວ່າດ້ວຍອາການທີ່ເປັນເຄື່ອງຜູກໃຈ ສູດທີ ໑

[໑໗] ພິກຂຸທັງຫຼາຍ ສະຕີຍ່ອມຜູກບຸຣຸດໄວ້ໄດ້ດ້ວຍອາການ ໘ ຢ່າງ

ອາການ ໘ ຢ່າງ ອັນໃດແດ່ ຄື

໑. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ຮູບ
໒. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ຮອຍຍິ້ມ
໓. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ວາຈາ
໔. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ມາຣະຍາດ
໕. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ດອກໄມ້ ຫຼື ໝາກໄມ້ທີ່ຫັກມາຈາກປ່າ
໖. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ກິ່ນ
໗. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ຣົດ
໘. ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍ ຜັດສະ

ພິກຂຸທັງຫຼາຍ ສະຕິຍ່ອມຜູກບຸຣຸດໄວ້ໄດ້ດ້ວຍອາການ ໘ ຢ່າງນີ້ແລ ສັດທີ່ຖືກຜັດສະຜູກໄວ້ ຊື່ວ່າຖືກຜູກໄວ້ດ້ວຍດີ

**ປະຖະມະພັນທະນະສູດທີ ໗ ຈົບ**

# ໘. ທຸຕິຍະພັນທະນະສູດ

## ວ່າດ້ວຍອາການທີ່ເປັນເຄື່ອງຜູກໃຈ ສູດທີ ໒

[໑໘] ພິກຂຸທັງຫຼາຍ ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍອາການ ໘ ຢ່າງ

ອາການ ໘ ຢ່າງ ອັນໃດແດ່ ຄື

໑. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ຮູບ
໒. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ຮອຍຍິ້ມ
໓. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ວາຈາ
໔. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ມາຣະຍາດ
໕. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ດອກໄມ້ ຫຼື ໝາກໄມ້ທີ່ຫັກມາຈາກປ່າ
໖. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ກິ່ນ
໗. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ຣົດ
໘. ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍ ຜັດສະ

ພິກຂຸທັງຫຼາຍ ບຸຣຸດຍ່ອມຜູກສະຕິໄວ້ໄດ້ດ້ວຍອາການ ໘ ຢ່າງນີ້ແລ ສັດທີ່ຖືກຜັດສະຜູກໄວ້ ຊື່ວ່າຖືກຜູກໄວ້ດ້ວຍດີ

**ທຸຕິຍະພັນທະນະສູດທີ ໘ ຈົບ**

# ໙. ປະຫາຣາທະສູດ

## ວ່າດ້ວຍທ້າວປະຫາຣາທະຈອມອະສູນ

[໑໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນຄວງຕົ້ນກະເດົາ ອັນເປັນທີ່ຢູ່ຂອງ ນະເລຣຸຍັກ ເຂດເມືອງເວຣັນຊາ ຄັ້ງນັ້ນ ທ້າວປະຫາຣາທະຈອມອະສູນ ເຂົ້າໄປເຝົ້າພຣະຜູ້ ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ຢືນຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກ ເຈົ້າໄດ້ຕັດກັບທ້າວປະຫາຣາທະຈອມອະສູນດັ່ງນີ້ ວ່າ

"ປະຫາຣາທະ ພວກອະສູນຕ່າງພາກັນຍິນດີໃນມະຫາສະມຸດແດ່ບໍ?"

ທ້າວປະຫາຣາທະຈອມອະສູນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພວກອະສູນຕ່າງ ພາກັນ ຍິນດີໃນມະຫາສະມຸດ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ປະຫາຣາທະ ໃນມະຫາສະມຸດ ມີສິ່ງທີ່ໜ້າອັດສະ ຈັນ ບໍ່ເຄີຍຜາກົດເທົ່າໃດ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ"

ທ້າວປະຫາຣາທະຈອມອະສູນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ໃນມະຫາສະມຸດ ມີສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີ"

ສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ອັນໃດແດ່ ຄື

໑. ມະຫາສະມຸດຕ່ຳໄປໂດຍລຳດັບ ລາດໄປໂດຍລຳດັບ ເລິກລົງໄປໂດຍລຳດັບ ບໍ່ເລິກ ຊັນດິ່ງໄປທັນທີ ການທີ່ມະຫາສະມຸດຕ່ຳໄປໂດຍລຳດັບ ລາດໄປໂດຍລຳດັບ ເລິກລົງໄປໂດຍລຳ ດັບ ບໍ່ເລິກຊັນດິ່ງໄປທັນທີ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໑ ໃນມະຫາສະ ມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໒. ມະຫາສະມຸດມີປົກກະຕິຄົງທີ່ ບໍ່ລົ້ນຝັ່ງ ການທີ່ມະຫາສະມຸດມີປົກກະຕິຄົງທີ່ ບໍ່ລົ້ນ ຝັ່ງ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໒ ໃນມະຫາສະມຸດທີ່ພວກອະສູນພົບ ເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໓. ມະຫາສະມຸດບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ ການທີ່ມະຫາສະມຸດບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ ນີ້ເປັນ

ສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໓ ໃນມະຫາສະມຸດ ທີ່ພວກອະສູນພົບເຫັນແລ້ວ ຕ່າງພາກັນຍິນດີໃນມະຫາສະມຸດ

໔. ມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ເມື່ອໄຫຼລົງສູ່ມະຫາສະມຸດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ “ມະຫາສະມຸດ” ທັງໝົດ ການທີ່ມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼລົງສູ່ມະຫາສະມຸດແລ້ວຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ “ມະຫາສະມຸດ” ທັງໝົດ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ່ ໔ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໕. ແມ່ນ້ຳສາຍໃດສາຍໜຶ່ງໃນໂລກ ທີ່ໄຫຼອອກໄປຈາກມະຫາສະມຸດ ແລະສາຍຝົນຕົກລົງຈາກຟາກຟ້າ ກໍບໍ່ເຮັດໃຫ້ມະຫາສະມຸດຂາດ ຫຼື ເຕັມໄດ້ ການທີ່ແມ່ນ້ຳສາຍໃດສາຍໜຶ່ງໃນໂລກ ທີ່ໄຫຼອອກໄປຈາກມະຫາສະມຸດ ແລະສາຍຝົນ ຕົກລົງຈາກຟາກຟ້າ ກໍບໍ່ເຮັດໃຫ້ມະຫາສະມຸດຂາດຫຼືເຕັມໄດ້ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໕ ໃນມະຫາສະມຸດທີ່ພວກອະສູນພົບ ເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໖. ມະຫາສະມຸດມີຣົດດຽວ ຄື ຣົດເຄັມ ການທີ່ມະຫາສະມຸດມີຣົດດຽວ ຄື ຣົດເຄັມ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໖ ໃນ ມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໗. ມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ແກ້ວປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ ການທີ່ມະຫາສະມຸດມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ແກ້ວປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໗ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

໘. ມະຫາສະມຸດເປັນທີ່ຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມີຕິມິງຄະລະ ປາຕິມິຣະມິງຄະລະ ອະສູນ ນາກ ຄົນທັນ ມີລຳຕົວ ໑໐໐ ໂຍດກໍມີ ມີລຳຕົວ ໒໐໐ ໂຍດກໍມີ ມີລຳຕົວ ໓໐໐ ໂຍດກໍມີ ມີລຳຕົວ ໔໐໐ ໂຍດກໍມີ ມີລຳຕົວ ໕໐໐ ໂຍດກໍມີ ການທີ່ມະຫາສະມຸດເປັນທີ່ຢູ່ອາໄສຂອງສັດຂະ ໜາດໃຫຍ່ ຄື ປາຕິມີຕິມິງຄະລະ ປາຕິມິຣະມິງຄະລະ ອະສູນ ນາກ ຄົນທັນ ມີລຳຕົວ ໑໐໐ ໂຍດກໍມີ ໗ລ໗ ມີລຳຕົວ ໓໐໐ ໂຍດກໍມີ ມີລຳຕົວ ໔໐໐ ໂຍດກໍມີ ມີລຳຕົວ ໕໐໐ ໂຍດກໍມີ ນີ້ເປັນສິ່ງທີ່ ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໘ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນ ຍິນດີໃນມະຫາສະມຸດ

ຂ້າແດ່ ພຣະອົງຜູ້ຈະເລີນ ໃນມະຫາສະມຸດມີສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້ແລ ທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸທັງຫຼາຍຕ່າງພາກັນຍິນດີໃນທຳວິໄນນີ້ແດ່ບໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ປະຫາຣາທະ ພິກຂຸທັງຫຼາຍຕ່າງພາກັນຍິນດີໃນທຳວິໄນນີ້"

ທ້າວປະຫາຣາທະຈອມອະສູນທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ໃນທຳວິໄນນີ້ມີທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດເທົ່າໃດ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ປະຫາຣາທະ ໃນທຳວິໄນນີ້ ມີທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນ

ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ອັນໃດແດ່ ຄື

໑. ທຳວິໄນນີ້ມີການສຶກສາໄປຕາມລຳດັບ ມີການພ່ຳເພັງໄປຕາມລຳດັບ ມີການປະຕິບັດໄປຕາມລຳດັບ ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ເໝືອນມະຫາສະມຸດຕ່ຳໄປໂດຍລຳດັບ ລາດໄປໂດຍລຳດັບ ເລິກລົງໄປໂດຍລຳດັບ ບໍ່ເລິກຊັນດິ່ງໄປທັນທີ ການທີ່ທຳວິໄນນີ້ມີການສຶກສາໄປຕາມລຳດັບ ມີການພ່ຳເພັງໄປຕາມລຳດັບ ມີການປະຕິບັດໄປຕາມລຳດັບ ບໍ່ແມ່ນມີການບັນລຸອະຣະ ຫັດຕະຜົນໂດຍທັນທີ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໑ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໔. ສາວົກທັງຫຼາຍຂອງເຮົາຍ່ອມບໍ່ລະເມີດສິກຂາບົດທີ່ເຮົາບັນຍັດໄວ້ ແມ່ນເພາະເຫດແຫ່ງຊີວິດ ເໝືອນມະຫາສະມຸດທີ່ມີປົກກະຕິຄົງທີ່ ບໍ່ລົ້ນຝັ່ງ ການທີ່ສາວົກທັງຫຼາຍຂອງເຮົາບໍ່ລະເມີດສິກຂາບົດທີ່ເຮົາບັນຍັດໄວ້ ແມ່ນເພາະເຫດແຫ່ງຊີວິດ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໔ ໃນ ທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໓. ບຸກຄົນໃດຜູ້ທຸສີນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າຣັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິນຍາວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິນຍາວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນເໝືອນມູນຝອຍ ສົງກໍບໍ່ຢູ່ຮ່ວມກັບບຸກຄົນນັ້ນ ຍ່ອມປະຊຸມກັນນຳທ່ານອອກໄປທັນທີ ແມ່ນທ່ານຈະນັ່ງຢູ່ໃນທ່າມກາງພິກຂຸສົງ ກໍຍັງຫ່າງໄກຈາກສົງ ແລະສົງກໍຫ່າງໄກຈາກທ່ານ ເໝືອນມະຫາສະມຸດບໍ່ຢູ່ຮ່ວມກັບຊາກສົບ ຍ່ອມຊັດຊາກສົບຂຶ້ນຝັ່ງຈົນເຖິງເທິງບົກທັນທີ ການທີ່ບຸກຄົນໃດຜູ້ທຸສີນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າຣັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິນຍາວ່າເປັນສະມະນະ

ບໍ່ແມ່ນພົມມະຈາຣີ ແຕ່ປະຕິນຍາວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນເໝືອນມູນຝອຍ ສົງບໍ່ຢູ່ຮ່ວມກັບບຸກຄົນນັ້ນ ຍ່ອມປະຊຸມກັນນຳທ່ານອອກໄປທັນທີ ແມ່ນທ່ານຈະນັ່ງຢູ່ໃນທ່າມກາງພິກຂຸສົງ ກໍຍັງຫ່າງໄກຈາກສົງ ແລະສົງກໍຫ່າງໄກຈາກທ່ານ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໓ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໔. ວັນນະ ໔ ເຫຼົ່ານີ້ ຄື ກະສັດ ພາມ ແພດ ສູດ ອອກຈາກ ເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ “ສະມະນະສາກະຍະບຸດ” ທັງໝົດ ເໝືອນມະຫານະທີທຸກສາຍ ຄື ຄົງຄາ ຍະມຸນາ ອະຈິຣະວະດີ ສະຣະພູ ມະຮີ ໄຫຼລົງສູ່ມະຫາສະມຸດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ “ມະຫາສະມຸດ” ທັງໝົດ ການທີ່ ວັນນະ ໔ ເຫຼົ່ານີ້ ຄື ກະສັດ ພາມ ແພດ ສູດ ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນ ທີ່ຕະຖາຄົດປະກາດແລ້ວ ຍ່ອມລະຊື່ແລະໂຄດເດີມຂອງຕົນ ລວມຮຽກວ່າ “ສະມະນະສາກະຍະບຸດ” ທັງໝົດ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໔ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໕. ແມ່ນຫາກພິກຂຸຈຳນວນຫຼາຍປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ກໍບໍ່ເຮັດໃຫ້ ນິບພານຂາດຫຼືເຕັມໄດ້ ເໝືອນແມ່ນ້ຳສາຍໃດສາຍໜຶ່ງໃນໂລກ ທີ່ໄຫຼອອກໄປຈາກມະຫາສະມຸດ ແລະສາຍຝົນຕົກລົງຈາກຟາກຟ້າ ກໍບໍ່ເຮັດໃຫ້ມະຫາສະມຸດຂາດຫຼືເຕັມໄດ້ ການທີ່ແມ່ນຫາກພິກຂຸຈຳນວນຫຼາຍປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ກໍບໍ່ເຮັດໃຫ້ນິບພານຂາດ ຫຼື ເຕັມໄດ້ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໕ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໖. ທຳວິໄນນີ້ມີຣົດດຽວ ຄື ວິມຸດຕິຣົດ ເໝືອນມະຫາສະມຸດມີຣົດດຽວຄື ຣົດເຄັມ ການທີ່ທຳວິໄນນີ້ມີຣົດດຽວ ຄື ວິມຸດຕິຣົດ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໖ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໗. ທຳວິໄນນີ້ມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ເໝືອນມະຫາສະມຸດທີ່ມີຣັດຕະນະຫຼາຍ ມີຣັດຕະນະຫຼາຍຊະນິດ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສິລາ ແກ້ວປະພານ ເງິນ ຄຳ ທັບທິມ ແກ້ວຕາແມວ ການທີ່ທຳວິໄນນີ້ ມີຣັດຕະນະຫຼາຍ ມີຣັດຕະນະຫຼາຍ ຊະນິດ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໗ ໃນທຳວິໄນນີ້ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

໗. ທຳວິໄນນີ້ເປັນທີ່ຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ພຣະສະກະທາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ ພຣະອະນາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງ ອະນາຄາມີຜົນ ພຣະອະຣະຫັນ ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນ ເໝືອນມະຫາສະມຸດເປັນທີ່ຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປະລາຕິມິຕິມິງຄະລະ ປະລາຕິມິຣະມິງຄະລະ ອະສູນ ນາກ ຄົນທັນ ມີລຳຕົວ ໑໐໐ ໂຍດກໍມີ ມີລຳຕົວ ໒໐໐ ໂຍດກໍມີ ມີລຳຕົວ ໓໐໐ ໂຍດກໍມີ ມີລຳຕົວ ໔໐໐ ໂຍດກໍມີ ມີລຳຕົວ ໕໐໐ ໂຍດກໍມີ ການທີ່ທຳວິໄນນີ້ເປັນ ທີ່ຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງ ໂສດາປັດຕິຜົນ ພຣະສະກະທາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງ ສະກະທາຄາມີຜົນ ພຣະອະນາຄາມີ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງ ອະນາຄາມີຜົນ ພຣະອະຣະຫັນ ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໗ ໃນທຳວິໄນນີ້ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

ປະຫາຣາທະ ໃນທຳວິໄນນີ້ ມີທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການນີ້ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

**ປະຫາຣາທະສູດທີ ໙ ຈົບ**

# ໑໐. ອຸໂປສົດສູດ

## ວ່າດ້ວຍເຫດທີ່ ພຣະພຸດທະເຈົ້າບໍ່ຊົງສະແດງປາຕິໂມກ

[໔໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ບຸບພາຣາມ ຜາສາດຂອງ ນາງວິສາຂາມິຄາຣະມາຕາ ເຂດເມືອງສາວັດຖີ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີພິກຂຸສົງແວດລ້ອມ ປະທັບນັ່ງ ໃນວັນອຸໂປສົດ ເມື່ອຣາຕີຜ່ານໄປແລ້ວ ປະຖົມຍາມຜ່ານໄປແລ້ວ ທ່ານພຣະອານົນລຸກຈາກອາ ສະນະ ຫົ່ມອຸດຕະຣາສົງບ່ງງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ປະຖົມຍາມຜ່ານໄປແລ້ວ ພິກຂຸສົງ ນັ່ງຖ້າຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂພດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸ ທັງຫຼາຍເທີ້ນ ຂ້ານ້ອຍ" ເມື່ອທ່ານພຣະອານົນຂາບທູນຢ່າງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຊົງນິ່ງ

ແມ່ນຄັ້ງທີ ໒ ເມື່ອຣາຕີຜ່ານໄປແລ້ວ ມັດຊິມະຍາມຜ່ານໄປແລ້ວ ທ່ານພຣະອານົນ ລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ງງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນດັ່ງ ນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ມັດຊິມະຍາມຜ່ານໄປແລ້ວ ພິກຂຸສົງ ນັ່ງຖ້າຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ"

ແມ່ນຄັ້ງທີ ໔ ພຣະຜູ້ມີພຣະພາກເຈົ້າກໍຊົງນິ່ງ

ແມ່ນຄັ້ງທີ ໓ ເມື່ອຣາຕີຜ່ານໄປແລ້ວ ປັດສິມຍາມຜ່ານໄປແລ້ວ ຍາມຮຸ່ງອະຣຸນເຣີ່ມສະຫວ່າງ ທ່ານພຣະອານົນລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ຽງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາຄປະທັບຢູ່ ໄດ້ຂາບທູນດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຣາຕີຜ່ານໄປແລ້ວ ປັດສິມຍາມຜ່ານໄປແລ້ວ ຍາມຮຸ່ງອະຣຸນເຣີ່ມສະຫວ່າງ ພິກຂຸສົງນັ່ງຖ້າຢູ່ດົນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ບໍລິສັດບໍ່ບໍລິສຸດ"

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ວ່າ "ອານົນ ບໍລິສັດບໍ່ບໍລິສຸດ" ຊົງໝາຍເຖິງໃຜກັນ ແລ້ວຈຶ່ງກຳນົດຈິດ (ຂອງພິກຂຸ) ດ້ວຍຈິດ(ຂອງຕົນ) ແລ້ວກວດເບິ່ງພິກຂຸສົງທຸກອົງ ຈຶ່ງໄດ້ເຫັນບຸກຄົນຜູ້ທຸສີນ ມີທຳຊົ່ວຊາມບໍ່ສະອາດ ມີຄວາມປະພຶດທີ່ໜ້າຣັງກຽດ ມີວຽກງານປົກປິດ ບໍ່ແມ່ນສະມະນະແຕ່ປະຕິນຍາວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິນຍາວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນເໝືອນມູນຝອຍ ນັ່ງຢູ່ໃນທ່າມກາງສົງນັ້ນ ເມື່ອເຫັນແລ້ວ ຈຶ່ງລຸກຈາກອາສະນະເຂົ້າໄປຫາບຸກຄົນນັ້ນ ໄດ້ກ່າວກັບບຸກຄົນນັ້ນວ່າ "ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານແລ້ວ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ" ເມື່ອພຣະມະຫາໂມກຄັນລານະກ່າວຢ່າງນີ້ແລ້ວ ບຸກຄົນນັ້ນກໍຍັງນິ່ງຢູ່

ແມ່ນຄັ້ງທີ ໔ ທ່ານພຣະມະຫາໂມກຄັນລານະ ກໍໄດ້ກ່າວກັບບຸກຄົນນັ້ນວ່າ "ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານແລ້ວ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ"

ແມ່ນຄັ້ງທີ ໔ ບຸກຄົນນັ້ນກໍຍັງນິ່ງຢູ່

ແມ່ນຄັ້ງທີ ໓ ທ່ານພຣະມະຫາໂມກຄັນລານະກໍໄດ້ກ່າວກັບບຸກຄົນນັ້ນວ່າ "ທ່ານຈົ່ງລຸກຂຶ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫັນທ່ານແລ້ວ ທ່ານບໍ່ມີສັງວາດກັບພິກຂຸທັງຫຼາຍ"

ແມ່ນຄັ້ງທີ ໓ ບຸກຄົນນັ້ນກໍຍັງນິ່ງຢູ່

ເມື່ອແລ້ວ ທ່ານພຣະມະຫາໂມກຄັນລານະ ຈຶ່ງຈັບແຂນດຶງໃຫ້ລຸກຂຶ້ນແລ້ວໄລ່ໃຫ້ອອກໄປນອກ ຊຸ້ມປະຕູໃສ່ກອນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໃຫ້ບຸກຄົນນັ້ນອອກໄປພົ້ນແລ້ວ ບໍລິສັດບໍລິສຸດ ແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ໂມກຄັນລານະ ໂມຄະບຸຣຸດນີ້ດື້ຈົນຕ້ອງໄດ້ຈັບແຂນດຶງໃຫ້ລຸກຂຶ້ນ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ຕັ້ງແຕ່ບັດນີ້ໄປ ທ່ານທັງຫຼາຍເພິ່ງເຮັດອຸໂປສົດ ເພິ່ງຍົກປາຕິໂມກຂຶ້ນສະແດງ ພິກຂຸທັງຫຼາຍ ຕັ້ງແຕ່ວັນນີ້ເປັນຕົ້ນໄປ ເຮົາຈັກບໍ່ສະແດງອຸໂປສົດ ຈັກບໍ່ຍົກປາຕິໂມກຂຶ້ນສະແດງ ພິກຂຸທັງຫຼາຍເປັນໄປບໍ່ໄດ້ທີ່ຕະຖາຄົດຈະຍົກປາຕິໂມກຂຶ້ນສະແດງໃນເມື່ອບໍລິສັດບໍ່ບໍລິສຸດ

ພິກຂຸທັງຫຼາຍ ໃນມະຫາສະມຸດມີສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ອັນໃດແດ່ ຄື

໑. ມະຫາສະມຸດຕໍ່າໄປໂດຍລໍາດັບ ລາດໄປໂດຍລໍາດັບ ເລິກລົງໄປໂດຍລໍາດັບ ບໍ່ເລິກຊັນດິ່ງໄປທັນທີ ການທີ່ມະຫາສະມຸດຕໍ່າໄປໂດຍລໍາດັບ ລາດໄປໂດຍລໍາດັບ ເລິກລົງໄປໂດຍລໍາດັບ ບໍ່ເລິກຊັນດິ່ງໄປທັນທີ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໑ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ ຯລຯ

໘. ມະຫາສະມຸດເປັນທີ່ຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິຕິມິງຄະລະ ປາຕິມິຣະມິງຄະລະ ອະສູນ ນາກ ຄົນທັບ ມີລໍາຕົວ ໑໐໐ ໂຍດກໍມີ ຯລຯ ມີລໍາຕົວ ໕໐໐ ໂຍດກໍມີ ການທີ່ມະຫາສະມຸດເປັນທີ່ຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິຕິມິງຄະລະ ປາຕິມິຣະມິງຄະລະ ອະສູນ ນາກ ຄົນທັບ ມີລໍາຕົວ ໑໐໐ ໂຍດກໍມີ ຯລຯ ມີລໍາຕົວ ໕໐໐ ໂຍດກໍມີ ນີ້ເປັນສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໘ ໃນມະຫາສະມຸດທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ພິກຂຸທັງຫຼາຍ ໃນມະຫາສະມຸດມີສິ່ງທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້ແລທີ່ພວກອະສູນພົບເຫັນແລ້ວຕ່າງພາກັນຍິນດີໃນມະຫາສະມຸດ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ໃນທຳວິໄນນີ້ ມີທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໒ ປະການ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໒ ປະການ ອັນໃດແດ່ ຄື

໑. ທຳວິໄນນີ້ມີການສຶກສາໄປຕາມລຳດັບ ມີການພ່ຳເພັງໄປຕາມລຳດັບ ມີການປະຕິບັດໄປຕາມລຳດັບ ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ເໝືອນມະຫາສະມຸດທີ່ຕ່ຳໄປໂດຍລຳດັບ ລາດໄປໂດຍລຳດັບ ເລິກລົງໄປໂດຍລຳດັບ ບໍ່ເລິກຊັນດິ່ງໄປທັນທີ ການທີ່ທຳວິໄນນີ້ມີການສຶກສາໄປຕາມລຳດັບ ມີການພ່ຳເພັງໄປຕາມລຳດັບ ມີການປະຕິບັດໄປຕາມລຳດັບ ບໍ່ແມ່ນມີການບັນລຸອະຣະຫັດຕະຜົນໂດຍທັນທີ ນີ້ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໑ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້ ຯລຯ

໒. ທຳວິໄນນີ້ເປັນທີ່ຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ ຯລຯ ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນ ເໝືອນມະຫາສະມຸດເປັນທີ່ຢູ່ອາໄສຂອງສັດຂະໜາດໃຫຍ່ ຄື ປາຕິມິຕິມິງຄະລະ ປາຕິມິຣະມິງຄະລະ ອະສູນ ນາກ ຄົນທັນ ມີລຳຕົວ ໑໐໐ ໂຍດກໍມີ ຯລຯ ມີລຳຕົວ ໕໐໐ ໂຍດກໍມີ ການທີ່ທຳວິໄນນີ້ເປັນທີ່ຢູ່ຂອງຜູ້ໃຫຍ່ ຄື ພຣະໂສດາບັນ ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງ ໂສດາປັດຕິຜົນ ຯລຯ ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນນີ້ເປັນທຳ ທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໒ ໃນທຳວິໄນນີ້ທີ່ພິກຂຸທັງຫຼາຍ ພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

ພິກຂຸທັງຫຼາຍ ໃນທຳວິໄນນີ້ມີທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໒ ປະການ ທີ່ພິກຂຸທັງຫຼາຍພົບເຫັນແລ້ວຕ່າງພາກັນຍິນດີໃນທຳວິໄນນີ້

**ອຸໂປສົດສູດທີ ໑໐ ຈົບ**

**ມະຫາວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ຄະຫະປະຕິວັກ

## ໝວດວ່າດ້ວຍຄະຫະບໍດີ

# ໑. ປະຖະມະອຸກຄະສູດ

## ວ່າດ້ວຍທຳທີ່ໜ້າອັດສະຈັນຂອງອຸກຄະຄະຫະບໍດີ ສູດທີ ໑

[໔໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈຳອຸກຄະຄະຫະບໍດີຊາວເມືອງເວສາລີວ່າ ເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດໄດ້ຕັດໄວຍາກອນພາສິດນີ້ແລ້ວ ສະເດັດລຸກຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ເມື່ອໃນເວລາເຊົ້າ ພິກຂຸອົງໜຶ່ງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ນິເວດຂອງອຸກຄະຄະຫະບໍດີຊາວເມືອງເວສາລີ ແລ້ວນັ່ງເທິງອາສະນະທີ່ປູລາດໄວ້ ລຳດັບນັ້ນ ອຸກຄະຄະຫະບໍດີຊາວເມືອງເວສາລີເຂົ້າໄປຫາພິກຂຸນັ້ນເຖິງທີ່ຢູ່ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພິກຂຸນັ້ນໄດ້ຖາມອຸກຄະຄະຫະບໍດີນັ້ນດັ່ງນີ້ວ່າ

"ທ່ານອຸກຄະຄະຫະບໍດີ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າ ທ່ານເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການ ທີ່ເປັນເຫດໃຫ້ທ່ານໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າ ເປັນແນວໃດ?"

ອຸກຄະຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍບໍ່ຮູ້ເລີຍວ່າ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າ ຂ້ານ້ອຍເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການເຫຼົ່າໃດ ແຕ່ຂໍທ່ານໂຜດຟັງທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການທີ່ຂ້ານ້ອຍມີຢູ່ເທີ້ນ ໂຜດໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ ພິກຂຸນັ້ນຮັບຄຳແລ້ວ ອຸກຄະຄະຫະບໍດີຊາວເມືອງເວສາລີຈຶ່ງໄດ້ກ່າວເລື້ອງນີ້ວ່າ

໑. "ເມື່ອຂ້ານ້ອຍໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ແຕ່ທີ່ໄກເປັນຄັ້ງທຳອິດ ພ້ອມກັບການເຫັນນັ້ນເອງ ຂ້ານ້ອຍກໍມີຈິດເຫຼື້ອມໃສຕໍ່ພຣະຜູ້ມີພຣະພາກເຈົ້າ ນີ້ແລ ເປັນທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດປະການທີ ໑ ທີ່ຂ້ານ້ອຍມີຢູ່

໔. ຂ້ານ້ອຍມີຈິດເຫຼື້ອມໃສແລ້ວ ເຂົ້າໄປນັ່ງໃກ້ພຣະຜູ້ມີພຣະພາກເຈົ້າ ພຣະອົງໄດ້ຊົງສະແດງອະນຸປຸບພີກະຖາແກ່ຂ້ານ້ອຍ ຄື ຊົງປະກາດທານະກະຖາ (ເລື້ອງທານ) ສີລະກະຖາ (ເລື້ອງສີນ) ສັກຄະກະຖາ (ເລື້ອງສະຫວັນ) ກາມາທີນະວະກະຖາ (ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ) ເນກຂຳມານີສັງສະກະຖາ (ເລື້ອງອານີສົງແຫ່ງການອອກຈາກກາມ)

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ຂ້ານ້ອຍເປັນຜູ້ມີຈິດຄວນອ່ອນ ປາສະຈາກນິວອນເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສີກະເທດສະໜາ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳຈັກຊຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດແກ່ຂ້ານ້ອຍເທິງທີ່ນັ່ງນັ້ນເອງວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ປຽບເໝືອນຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ ທ່ານຜູ້ຈະເລີນ ຂ້ານ້ອຍນັ້ນໄດ້ເຫັນທຳ ບັນລຸທຳ ຮູ້ທຳ ຢັ່ງລົງສູ່ທຳ ຂ້າມພົ້ນຄວາມສົງໄສ ປາສະຈາກຄວາມເຄືອບແຄງເຖິງຄວາມແກ່ກ້າ ປາສະຈາກຄວາມມີຜູ້ອື່ນເປັນປັດໄຈໃນສາດສະໜາຂອງພຣະສາດສະດາ ໄດ້ເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງເປັນສະຣະນະແລ້ວ ແລະໄດ້ສະມາທານສິກຂາບົດທີ່ມີພົມມະຈັນເປັນທີ ໕ ເທິງທີ່ນັ່ງນັ້ນເອງ ນີ້ແລເປັນທຳ ທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໔ ທີ່ຂ້ານ້ອຍມີຢູ່

໓. ຂ້ານ້ອຍນັ້ນ ມີພັນລະຍາທີ່ເປັນສາວລຸ້ນ ໔ ຄົນ ຂ້ານ້ອຍເຂົ້າໄປຫາພັນລະຍາເຫຼົ່ານັ້ນເຖິງທີ່ຢູ່ແລ້ວກ່າວກັບພວກນາງວ່າ "ນາງທັງຫຼາຍ ເຮົາໄດ້ສະມາທານ ສິກຂາບົດທີ່ມີພົມມະຈັນເປັນທີ ໕ ແລ້ວ ຍິງໃດປາຖະໜາ ຍິງນັ້ນ ຈົ່ງໃຊ້ຈ່າຍໂພຄະຊັບເຫຼົ່ານີ້ ແລະຈົ່ງເຮັດບຸນ ຫຼື ກັບໄປສູ່ຕະກູນຍາດຂອງຕົນເທີ້ນ ຫຼື ມີຄວາມປະສົງຊາຍ ເຮົາກໍຈະມອບພວກເຈົ້າໃຫ້ແກ່ເຂົາ" ເມື່ອຂ້ານ້ອຍກ່າວຢ່າງນີ້ແລ້ວ ພັນລະຍາຫຼວງໄດ້ກ່າວກັບຂ້ານ້ອຍວ່າ "ຂໍທ່ານໂຜດມອບຂ້ານ້ອຍໃຫ້ແກ່ຊາຍຜູ້ມີຊື່ນີ້ເທີ້ນ" ລຳດັບນັ້ນ ຂ້ານ້ອຍໄດ້ຮຽກຊາຍ ຄົນນັ້ນມາ ໃຊ້ມືຊ້າຍຈັບພັນລະຍາ ມືຂວາຈັບເຕົ້ານ້ຳຢາດນ້ຳມອບໃຫ້ຊາຍຄົນນັ້ນໄປ ເມື່ອບໍລິຈາກພັນລະຍາສາວລຸ້ນໃຫ້ເປັນທານ ຂ້ານ້ອຍບໍ່ຮູ້ສຶກ ວ່າຈິດປ່ຽນໄປ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໓ ທີ່ຂ້ານ້ອຍມີຢູ່

໔. ຕະກູນຂອງຂ້ານ້ອຍມີໂພຄະຊັບຢູ່ພ້ອມ ແລະໂພຄະຊັບເຫຼົ່ານັ້ນ ຂ້ານ້ອຍໄດ້ແຈກຈ່າຍໃຫ້ກັບຜູ້ມີສີນ ມີກັນລະຍານະທຳ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໔ ທີ່ຂ້ານ້ອຍມີຢູ່

໕. ຂ້ານ້ອຍເຂົ້າໄປນັ່ງໃກ້ພິກຂຸໃດ ກໍເຂົ້າໄປນັ່ງໃກ້ໂດຍເຄົາລົບເທົ່ານັ້ນ ບໍ່ແມ່ນເຂົ້າໄປນັ່ງໃກ້ໂດຍບໍ່ເຄົາລົບ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ປະການທີ ໕ ທີ່ຂ້ານ້ອຍມີຢູ່

໖. ຫາກທ່ານຜູ້ມີອາຍຸນັ້ນ ຈະສະແດງທຳແກ່ຂ້ານ້ອຍ ຂ້ານ້ອຍຈະຟັງໂດຍເຄົາລົບເທົ່ານັ້ນ ບໍ່ແມ່ນຟັງໂດຍບໍ່ເຄົາລົບ ຫາກທ່ານຜູ້ມີອາຍຸນັ້ນ ຈະບໍ່ສະແດງທຳແກ່ຂ້ານ້ອຍ ຂ້ານ້ອຍກໍຈະສະແດງທຳແກ່ທ່ານ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໖ ທີ່ຂ້ານ້ອຍມີຢູ່

໗. ບໍ່ໜ້າອັດສະຈັນເລີຍ ທີ່ພວກເທວະດາເຂົ້າມາຫາຂ້ານ້ອຍແລ້ວບອກວ່າ "ທ່ານ ຄະຫະບໍດີ ທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ" ເມື່ອພວກເທວະດາກ່າວຢ່າງນີ້ແລ້ວ ຂ້ານ້ອຍໄດ້ກ່າວກັບເທວະດາເຫຼົ່ານັ້ນຢ່າງນີ້ວ່າ "ເທວະດາ ພວກທ່ານຈະບອກຢ່າງນີ້ຫຼືບໍ່ບອກຢ່າງນີ້ກໍຕາມ ທຳກໍເປັນທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ" ຂ້ານ້ອຍ ບໍ່ຮູ້ສຶກໃຈຟູເພາະເຫດນັ້ນເລີຍວ່າ "ພວກເທວະດາເຂົ້າມາຫາຂ້ານ້ອຍຫຼືຂ້ານ້ອຍສົນທະນາກັບພວກເທວະດາ" ນີ້ແລ ປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໗ ທີ່ຂ້ານ້ອຍມີຢູ່

໘. ສັງໂຍດເບື້ອງຕ່ຳ ໕ ປະການ ທີ່ພຣະຜູ້ມີພຣະພາກເຈົ້າໄດ້ຊົງສະແດງໄວ້ ຂ້ານ້ອຍບໍ່ເຫັນສັງໂຍດອັນໃດໃນຕົນທີ່ຍັງລະບໍ່ໄດ້ ນີ້ແລ ປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໘ ທີ່ຂ້ານ້ອຍມີຢູ່

ທ່ານຜູ້ຈະເລີນ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້ແລ ທີ່ຂ້ານ້ອຍມີຢູ່ ແຕ່ຂ້ານ້ອຍບໍ່ຮູ້ເລີຍວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນວ່າ ຂ້ານ້ອຍເປັນຜູ້ປະກອບດ້ວຍທຳ ທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການເຫຼົ່າໃດ"

ລຳດັບນັ້ນ ພິກຂຸນັ້ນ ຮັບບິນທະບາດໃນນິເວດຂອງອຸກຄະຄະຫະບໍດີຊາວເມືອງເວສາລີແລ້ວ ລຸກຈາກອາສະນະຈາກໄປ ທ່ານກັບຈາກບິນທະບາດ ຫຼັງຈາກສັນອາຫານສຳເລັດແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນເລື້ອງທີ່ສົນທະນາປາໄສກັບອຸກຄະຄະຫະບໍດີ ຊາວເມືອງເວສາລີທັງໝົດໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ອຸກຄະຄະຫະບໍດີຊາວເມືອງເວສາລີ ເມື່ອຈະພະຍາກອນໃຫ້ຖືກຕ້ອງ ເພິ່ງພະຍາກອນໄປຕາມນັ້ນ ພິກຂຸ ເຮົາພະຍາກອນວ່າ ອຸກຄະຄະຫະບໍດີຊາວເມືອງເວສາລີເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້ ແລະທ່ານຈົ່ງຊົງຈຳອຸກຄະຄະຫະບໍດີຊາວເມືອງເວສາລີວ່າ ເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້"

**ປະຖະມະອຸກຄະສູດທີ ໑ ຈົບ**

# ໔. ທຸຕິຍະອຸກຄະສູດ

## ວ່າດ້ວຍທຳທີ່ໜ້າອັດສະຈັນຂອງອຸກຄະຄະຫະບໍດີ ສູດທີ ໔

[໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ບ້ານຫັດຖີຄາມ ແຄວ້ນວັດຊີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈຳອຸກຄະຄະຫະບໍດີຊາວບ້ານຫັດຖີຄາມວ່າ ເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດ ໗ ປະການ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດໄດ້ຕັດໄວຍາກອນພາສິດນີ້ແລ້ວ ສະເດັດລຸກຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ເມື່ອເວລາເຊົ້າ ພິກຂຸອົງໜຶ່ງຄອງອັນຕະຣະວາສົກ ຖືບາດ ແລະຈີວອນເຂົ້າໄປສູ່ນິເວດຂອງອຸກຄະຄະຫະບໍດີຊາວບ້ານຫັດຖີຄາມ ແລ້ວນັ່ງເທິງອາສະນະທີ່ປູລາດໄວ້ ຕໍ່ມາ ອຸກຄະຄະຫະບໍດີຊາວບ້ານຫັດຖີຄາມເຂົ້າໄປຫາພິກຂຸນັ້ນເຖິງທີ່ຢູ່ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພິກຂຸນັ້ນໄດ້ກ່າວກັບອຸກຄະຄະຫະບໍດີຊາວບ້ານຫັດຖີຄາມດັ່ງນີ້ວ່າ

"ທ່ານອຸກຄະຄະຫະບໍດີ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າ ທ່ານເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ທ່ານອຸກຄະຄະຫະບໍດີ ທຳທີ່ໜ້າອັດສະຈັນບໍ່ເຄີຍຜາກົດ ໗ ປະການ ອັນໃດແດ່"

ອຸກຄະຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍບໍ່ຮູ້ເລີຍວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຊົງ ພະຍາກອນວ່າຂ້ານ້ອຍ ເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການເຫຼົ່າໃດ ແຕ່ຂໍທ່ານໂຜດຟັງທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການທີ່ຂ້ານ້ອຍ ມີຢູ່ເທີ້ນ ໂຜດໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ ພິກຂຸນັ້ນຮັບຄຳແລ້ວ ອຸກຄະຄະຫະບໍດີຊາວບ້ານ ຫັດຖີຄາມຈຶ່ງໄດ້ກ່າວເລື້ອງນີ້ວ່າ

໑. ເມື່ອຂ້ານ້ອຍກຳລັງທ່ຽວຊົມຢູ່ໃນສວນນາຄະວັນ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າແຕ່ທີ່ໄກເປັນຄັ້ງທຳອິດ ພ້ອມກັບການເຫັນນັ້ນເອງ ຂ້ານ້ອຍກໍມີຈິດເຫຼື້ອມໃສຕໍ່ພຣະຜູ້ມີພຣະພາກເຈົ້າ ແລະສ່າງຈາກເມົາສຸຣາ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໑ ທີ່ຂ້ານ້ອຍມີຢູ່

໔. ຂ້ານ້ອຍ ມີຈິດເຫຼື້ອມໃສແລ້ວ ເຂົ້າໄປນັ່ງໃກ້ພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າຊົງສະແດງອະນຸປຸບພິກະຖາແກ່ຂ້ານ້ອຍ ຄື ຊົງປະກາດທານະກະຖາ ສີລະກະຖາ ສັກຄະກະຖາ ກາມາທີນະວະກະຖາ ເນກຂຳມານິສັງສະກະຖາ

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ຂ້ານ້ອຍມີຈິດຄວນ ອ່ອນນຸ້ມ ປາສະຈາກນິວອນ

ເປັກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະເທດສະໜາ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳ ຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດແກ່ຂ້ານ້ອຍເທິງທີ່ນັ່ງນັ້ນເອງວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ປຽບເໝືອນຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ ທ່ານຜູ້ຈະເລີນ ຂ້ານ້ອຍນັ້ນໄດ້ເຫັນທຳ ບັນລຸທຳ ຮູ້ທຳ ຢັ່ງລົງສູ່ທຳ ຂ້າມພົ້ນຄວາມສົງໄສ ປາສະຈາກຄວາມເຄືອບແຄງເຖິງຄວາມແກ່ກ້າ ປາສະຈາກຄວາມມີຜູ້ອື່ນ ເປັນປັດໄຈໃນສາດສະໜາຂອງພຣະສາດສະດາໄດ້ເຖິງ ພຣະພຸດທະເຈົ້າ ພຣະທຳ ແລະພຣະສົງເປັນສະຣະນະແລ້ວ ແລະໄດ້ສະມາທານສິກຂາບົດທີ່ມີພົມມະຈັນເປັນທີ ໕ ເທິງທີ່ນັ່ງນັ້ນເອງ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໔ ທີ່ຂ້ານ້ອຍມີຢູ່

໓. ຂ້ານ້ອຍນັ້ນມີພັນລະຍາທີ່ເປັນສາວລຸ້ນ ໔ ຄົນ ຂ້ານ້ອຍເຂົ້າໄປຫາພັນລະຍາເຫຼົ່ານັ້ນເຖິງທີ່ຢູ່ແລ້ວກ່າວກັບພວກນາງວ່າ "ນາງທັງຫຼາຍ ເຮົາໄດ້ສະມາທານ ສິກຂາບົດທີ່ມີພົມມະຈັນເປັນທີ ໕ ແລ້ວ ຍິງໃດປາຖະໜາ ຍິງນັ້ນຈົ່ງໃຊ້ຈ່າຍໂພຄະຊັບເຫຼົ່ານີ້ ແລະຈົ່ງເຮັດບຸນ ຫຼື ກັບໄປສູ່ຕະກູນຍາດຂອງຕົນເທີ້ນ ຫຼື ມີຄວາມປະສົງຊາຍ ເຮົາກໍຈະມອບພວກເຈົ້າໃຫ້ແກ່ເຂົາ" ເມື່ອຂ້ານ້ອຍກ່າວຢ່າງນີ້ແລ້ວ ພັນລະຍາຫຼວງໄດ້ກ່າວກັບຂ້ານ້ອຍວ່າ "ຂໍທ່ານໂຜດມອບຂ້ານ້ອຍໃຫ້ແກ່ຊາຍຜູ້ມີຊື່ນີ້ເທີ້ນ" ລຳດັບນັ້ນ ຂ້ານ້ອຍໄດ້ຮຽກຊາຍຄົນນັ້ນມາໃຊ້ມືຊ້າຍຈັບພັນລະຍາ ມືຂວາຈັບເຕົ້ານ້ຳຢາດນ້ຳມອບໃຫ້ຊາຍຄົນນັ້ນໄປ ເມື່ອບໍລິຈາກພັນລະຍາສາວລຸ້ນໃຫ້ເປັນທານຂ້ານ້ອຍບໍ່ຮູ້ສຶກວ່າຈິດປ່ຽນໄປ ນີ້ແລເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໓ ທີ່ຂ້ານ້ອຍມີຢູ່

໔. ຕະກູນຂອງຂ້ານ້ອຍມີໂພຄະຊັບຢູ່ພ້ອມ ແລະໂພຄະຊັບເຫຼົ່ານັ້ນ ຂ້ານ້ອຍໄດ້ແຈກຈ່າຍກັບຜູ້ມີສິນ ມີກັນລະຍານະທຳ ນີ້ແລ ປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໔ ທີ່ຂ້ານ້ອຍມີຢູ່

໕. ຂ້ານ້ອຍເຂົ້າໄປນັ່ງໃກ້ພິກຂຸໃດ ກໍເຂົ້າໄປນັ່ງໃກ້ໂດຍເຄົາລົບເທົ່ານັ້ນ ບໍ່ແມ່ນເຂົ້າໄປນັ່ງໃກ້ໂດຍບໍ່ເຄົາລົບ ຫາກທ່ານຜູ້ມີອາຍຸນັ້ນ ຈະສະແດງທຳແກ່ຂ້ານ້ອຍ ຂ້ານ້ອຍຈະຟັງໂດຍເຄົາລົບເທົ່ານັ້ນ ບໍ່ແມ່ນຟັງໂດຍບໍ່ເຄົາລົບ ຫາກທ່ານຜູ້ມີອາຍຸນັ້ນຈະບໍ່ສະແດງທຳແກ່ຂ້ານ້ອຍຂ້ານ້ອຍກໍຈະສະແດງທຳແກ່ທ່ານ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໕ ທີ່ຂ້ານ້ອຍມີຢູ່

໖. ບໍ່ໜ້າອັດສະຈັນເລີຍ ທີ່ເມື່ອຂ້ານ້ອຍນິມົນພຣະສົງມາແລ້ວ ພວກເທວະດາເຂົ້າມາຫາຂ້ານ້ອຍ ແລ້ວບອກວ່າ "ທ່ານຄະຫະບໍດີ ພິກຂຸອົງນັ້ນເປັນອຸພະໂຕພາຄະວິມຸດ ອົງນັ້ນເປັນປັນຍາວິມຸດ ອົງນັ້ນເປັນກາຍະສັກຂີ ອົງນັ້ນເປັນທິດຖິປັດຕະ ອົງນັ້ນເປັນສັດທາວິມຸດ ອົງນັ້ນ

ເປັນທຳມານຸສາຣີ ອົງນັ້ນເປັນສັດທານຸສາຣີ ອົງນັ້ນເປັນຜູ້ມີສິນ ມີກັນລະຍານະທຳ ອົງນັ້ນເປັນຜູ້ທຸສິນ ມີບາບທຳ" ທ່ານຜູ້ຈະເລີນ ເມື່ອອັງຄາດພຣະສົງ ຂ້ານ້ອຍບໍ່ຮູ້ສຶກໃຫ້ເກີດຄວາມຄິດຢ່າງນີ້ວ່າ "ຈະຖວາຍແກ່ທ່ານອົງນີ້ ໜ້ອຍ ຫຼື ຈະຖວາຍແກ່ທ່ານອົງນີ້ຫຼາຍ" ແທ້ຈິງຂ້ານ້ອຍວາງຈິດສະໝ່ຳສະເໝີຖວາຍ ນີ້ແລປັນທຳທີ່ ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໖ ທີ່ຂ້ານ້ອຍມີຢູ່

໗. ບໍ່ໜ້າອັດສະຈັນເລີຍ ທີ່ພວກເທວະດາເຂົ້າມາຫາຂ້ານ້ອຍແລ້ວບອກວ່າ "ທ່ານ ຄະຫະບໍດີ ທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ" ເມື່ອພວກເທວະດາກ່າວຢ່າງນີ້ແລ້ວຂ້ານ້ອຍໄດ້ກ່າວກັບເທວະດາເຫຼົ່ານັ້ນຢ່າງນີ້ວ່າ "ເທວະດາ ພວກທ່ານຈະບອກຢ່າງນີ້ ຫຼື ບໍ່ບອກຢ່າງນີ້ກໍຕາມ ທຳກໍເປັນທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ" ຂ້ານ້ອຍບໍ່ຮູ້ສຶກຟູໃຈເພາະເຫດນັ້ນເລີຍວ່າ "ພວກເທວະດາເຂົ້າມາຫາຂ້ານ້ອຍ ຫຼື ຂ້ານ້ອຍສົນທະນາກັບພວກເທວະດາ" ນີ້ແລ ປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໗ ທີ່ຂ້ານ້ອຍມີຢູ່

໘. ຫາກຂ້ານ້ອຍຈະສິ້ນຊີວິດກ່ອນພຣະຜູ້ມີພຣະພາກເຈົ້າ ກໍບໍ່ໜ້າອັດສະຈັນເລີຍທີ່ພຣະຜູ້ມີພຣະພາກເຈົ້າຈະຊົງພະຍາກອນຢ່າງນີ້ວ່າ ສັງໂຍດທີ່ເປັນເຫດໃຫ້ອຸກຄະຄະຫະບໍດີ ຊາວບ້ານຫັດຖີຄາມກັບມາສູ່ໂລກນີ້ອີກບໍ່ມີ ນີ້ແລ ເປັນທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດປະການທີ ໘ ທີ່ຂ້ານ້ອຍມີຢູ່

ທ່ານຜູ້ຈະເລີນ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້ແລ ທີ່ຂ້ານ້ອຍມີຢູ່ ແຕ່ຂ້ານ້ອຍບໍ່ຮູ້ເລີຍວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນວ່າ ຂ້ານ້ອຍເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການເຫຼົ່າໃດ"

ລຳດັບນັ້ນ ພິກຂຸນັ້ນຮັບບິນທະບາດໃນນິເວດຂອງອຸກຄະຄະຫະບໍດີ ຊາວບ້ານຫັດຖີຄາມແລ້ວ ລຸກຈາກອາສະນະຈາກໄປ ທ່ານກັບຈາກບິນທະບາດ ຫຼັງຈາກສັນອາຫານສຳເລັດແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນເລື່ອງທີ່ ສົນທະນາປາໄສກັບອຸກຄະຄະຫະບໍດີ ຊາວບ້ານຫັດຖີຄາມທັງໝົດໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮູ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ອຸກຄະຄະຫະບໍດີຊາວບ້ານຫັດຖີຄາມ ເມື່ອຈະພະຍາກອນໃຫ້ຖືກຕ້ອງ ເພິ່ງພະຍາກອນໄປຕາມນັ້ນ ພິກຂຸ ເຮົາໄດ້ພະຍາກອນວ່າອຸກຄະຄະຫະບໍດີ ຊາວບ້ານຫັດຖີຄາມປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້ແລ ແລະທ່ານຈົ່ງຊົງຈຳອຸກຄະຄະຫະບໍດີ ຊາວບ້ານຫັດຖີຄາມວ່າເປັນຜູ້ປະກອບດ້ວຍທຳ ທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໘ ປະການນີ້"

**ທຸຕິຍະອຸກຄະສູດທີ ໘ ຈົບ**

# ៣. ປະຖະມະຫັດຖະກະສູດ

## ວ່າດ້ວຍທຳທີ່ໜ້າອັດສະຈັນຂອງຫັດຖະກະອຸປາສົກ ສູດທີ ໑

[໔໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ອັກຄາລະວະເຈດີ ເມືອງອາລະວີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈຳຫັດຖະກະອຸປາສົກ ຊາວເມືອງອາລະວີວ່າເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ອັນໃດແດ່ ຄື

ຫັດຖະກະອຸປາສົກຊາວເມືອງອາລະວີ

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນຜູ້ມີຫິຣິ
໔. ເປັນຜູ້ມີໂອດຕັບປະ
໕. ເປັນພະຫູສູດ
໖. ເປັນຜູ້ມີຈາຄະ
໗. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈຳຫັດຖະກະອຸປາສົກຊາວເມືອງອາລະວີວ່າ ເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການນີ້ແລ"

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດໄດ້ຕັດໄວຍາກອນພາສິດນີ້ແລ້ວ ສະເດັດລຸກຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ເມື່ອເວລາເຊົ້າ ພິກຂຸອົງໜຶ່ງຄອງອັນຕະຣະວາສົກ ຖືບາດ ແລະຈີວອນເຂົ້າໄປສູ່ນິເວດຂອງຫັດຖະກະອຸປາສົກຊາວເມືອງອາລະວີແລ້ວນັ່ງເທິງອາສະນະທີ່ປູລາດໄວ້

ຕໍ່ມາ ຫັດຖະກະອຸປາສົກຊາວເມືອງອາລະວີເຂົ້າໄປຫາພິກຂຸນັ້ນເຖິງທີ່ຢູ່ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພິກຂຸນັ້ນໄດ້ກ່າວກັບຫັດຖະກະອຸປາສົກຊາວເມືອງອາລະວີດັ່ງນີ້ວ່າ

"ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າ ທ່ານເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ອັນໃດແດ່ ຄື

ຫັດຖະກະອຸປາສົກຊາວເມືອງອາລະວີ

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນຜູ້ມີຫິຣິ
໔. ເປັນຜູ້ມີໂອດຕັບປະ

໕. ເປັນພະຫູສູດ ໖. ເປັນຜູ້ມີຈາຄະ

໗. ເປັນຜູ້ມີປັນຍາ

ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າ ທ່ານເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການນີ້ແລ"

ຫັດຖະກະອຸປາສົກຊາວເມືອງອາລະວີຖາມວ່າ "ທ່ານຜູ້ຈະເລີນ ຄະລືຫັດຜູ້ນຸ່ງຜ້າຂາວ ບໍ່ມີໃນຕຳແໜ່ງທີ່ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນນີ້ເລີຍແດ່ບໍ?"

ພິກຂຸນັ້ນກ່າວວ່າ "ຜູ້ມີອາຍຸ ຄະລືຫັດຜູ້ນຸ່ງຜ້າຂາວ ບໍ່ມີໃນຕຳແໜ່ງທີ່ພຣະຜູ້ມີ ພຣະພາກເຈົ້າຊົງພະຍາກອນນີ້ເລີຍ"

ຫັດຖະກະອຸປາສົກກ່າວວ່າ "ທ່ານຜູ້ຈະເລີນ ດີຫຼາຍ ຄະລືຫັດຜູ້ນຸ່ງຜ້າຂາວ ບໍ່ມີໃນຕຳແໜ່ງທີ່ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນນີ້ເລີຍ"

ລຳດັບນັ້ນ ພິກຂຸນັ້ນຮັບບິນທະບາດໃນນິເວດຂອງຫັດຖະກະອຸປາສົກຊາວເມືອງອາລະວີລຸກຈາກອາສະນະແລ້ວຈາກໄປ ກັບຈາກບິນທະບາດແລ້ວ ຫຼັງຈາກສັນພັດຕາຫານສຳເລັດແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ໃນເວລາເຊົ້າ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດ ແລະຈີວອນເຂົ້າໄປສູ່ນິເວດຂອງຫັດຖະກະອຸປາສົກຊາວເມືອງອາລະວີ ນັ່ງເທິງອາສະນະທີ່ປູລາດໄວ້ ຕໍ່ມາ ຫັດຖະກະອຸປາສົກຊາວເມືອງອາລະວີ ໄດ້ເຂົ້າມາຫາຂ້າພຣະອົງ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ກ່າວກັບຫັດຖະກະອຸປາສົກຊາວເມືອງອາລະວີວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນວ່າ ທ່ານເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ອັນໃດແດ່ ຄື ຫັດຖະກະອຸປາສົກຊາວເມືອງອາລະວີ

໑. ເປັນຜູ້ມີສັດທາ ໒. ເປັນຜູ້ມີສິນ

໓. ເປັນຜູ້ມີຫິຣິ ໔. ເປັນຜູ້ມີໂອດຕັບປະ

໕. ເປັນພະຫູສູດ ໖. ເປັນຜູ້ມີຈາຄະ

໗. ເປັນຜູ້ມີປັນຍາ

ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນວ່າ ທ່ານເປັນຜູ້ປະກອບດ້ວຍທຳທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການນີ້"

ເມື່ອຂ້າພຣະອົງກ່າວຢ່າງນີ້ແລ້ວ ຫັດຖະກະອຸປາສົກຊາວເມືອງອາລະວີໄດ້ກ່າວກັບ ຂ້າພຣະອົງດັ່ງນີ້ວ່າ "ທ່ານຜູ້ຈະເລີນ ຄະລິຫັດຜູ້ນຸ່ງຜ້າຂາວ ບໍ່ມີໃນຕໍາແໜ່ງທີ່ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນນີ້ເລີຍແດ່ບໍ?" ຂ້າພຣະອົງຕອບວ່າ "ຜູ້ມີອາຍຸ ຄະລິຫັດຜູ້ນຸ່ງຜ້າຂາວ ບໍ່ມີໃນຕໍາແໜ່ງທີ່ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນນີ້" ເຂົາຕອບວ່າ "ທ່ານຜູ້ຈະເລີນ ດີຫຼາຍ ຄະລິຫັດຜູ້ນຸ່ງຜ້າຂາວ ບໍ່ມີໃນຕໍາແໜ່ງທີ່ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນນີ້ເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ພິກຂຸຜູ້ເປັນກຸນລະບຸດນັ້ນເປັນຜູ້ມັກ ໜ້ອຍ ບໍ່ປາຖະໜາໃຫ້ຜູ້ອື່ນຮູ້ກຸສົນທໍາທີ່ມີຢູ່ໃນຕົນ ພິກຂຸ ຖ້າເຊັ່ນນັ້ນ ທ່ານຈົ່ງຊົງຈໍາຫັດຖະກະອຸປາສົກຊາວເມືອງອາລະວີວ່າ ເປັນຜູ້ປະກອບດ້ວຍທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດນີ້ ຄື ບໍ່ປາຖະໜາໃຫ້ຜູ້ອື່ນຮູ້ກຸສົນທໍາທີ່ມີຢູ່ໃນຕົນ ເພາະຄວາມເປັນຜູ້ມັກໜ້ອຍ"

**ປະຖະມະຫັດຖະກະສູດທີ ໗**

# ໔. ທຸຕິຍະຫັດຖະກະສູດ

## ວ່າດ້ວຍທໍາທີ່ໜ້າອັດສະຈັນຂອງຫັດຖະກະອຸປາສົກ ສູດທີ ໘

[໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ອັກຄາລະວະເຈດີ ເຂດເມືອງອາລະວີ ລໍາດັບນັ້ນ ຫັດຖະກະອຸປາສົກຊາວເມືອງອາລະວີມີອຸປາສົກປະມານ ໕໐໐ ຄົນແວດລ້ອມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບຫັດຖະກະອຸປາສົກຊາວເມືອງອາລະວີ ວ່າ

"ຫັດຖະກະ ບໍລິສັດຂອງທ່ານນີ້ເທົ່າໃດ? ທ່ານສົງເຄາະບໍລິສັດຈໍານວນຫຼາຍນີ້ຢ່າງໃດ?"

ຫັດຖະກະອຸປາສົກຊາວເມືອງອາລະວີຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງສົງເຄາະບໍລິສັດຈໍານວນຫຼາຍນີ້ດ້ວຍສັງຄະຫະວັດຖຸ ໔ ປະການ ທີ່ພຣະຜູ້ມີພຣະພາກເຈົ້າໄດ້ຊົງສະແດງໄວ້ແລ້ວ ຄື ຂ້າພຣະອົງຮູ້ວ່າ "ຜູ້ນີ້ຄວນສົງເຄາະດ້ວຍທານ" ກໍສົງເຄາະດ້ວຍທານ ຮູ້ວ່າ "ຜູ້ນີ້ຄວນສົງເຄາະດ້ວຍຄໍາເວົ້າອັນໄພເລາະ" ກໍສົງເຄາະດ້ວຍຄໍາເວົ້າອັນໄພເລາະ ຮູ້ວ່າ "ຜູ້ນີ້ຄວນສົງເຄາະດ້ວຍການເຮັດປະໂຫຍດໃຫ້" ກໍສົງເຄາະດ້ວຍການ ເຮັດປະໂຫຍດໃຫ້ຮູ້ວ່າ "ຜູ້ນີ້ຄວນສົງເຄາະດ້ວຍການວາງຕົວສະໝໍ່າສະເໝີ" ກໍສົງເຄາະດ້ວຍການວາງຕົວສະໝໍ່າສະເໝີ ຂ້າແດ່ພຣະອົງຜູ້ຈະເລີນ ໂພຄະຊັບໃນຕະກູນຂອງຂ້າພຣະອົງມີຢູ່ພ້ອມ ຄົນທັງຫຼາຍຍ່ອມເຂົ້າໃຈຄໍາເວົ້າຂອງຂ້າພຣະອົງວ່າຄວນຟັງ ບໍ່ເໝືອນຄໍາເວົ້າຂອງຄົນຈົນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ຫັດຖະກະ ວິທີນີ້ຂອງທ່ານເປັນອຸບາຍທີ່ຈະສົງເຄາະບໍລິສັດຈໍານວນຫຼາຍໄດ້ ຈິງຢູ່ ໃຜກໍຕາມທີ່ສົງເຄາະບໍລິສັດຈໍານວນຫຼາຍໄດ້ໃນອະດີດຕະການ ກໍລ້ວນແຕ່ສົງເຄາະດ້ວຍສັງຄະຫະວັດຖຸ ໔ ປະການນີ້ແລ ໃຜກໍຕາມທີ່ຈັກສົງເຄາະບໍລິສັດຈໍານວນຫຼາຍໃນອະນາຄົດຕະການ ກໍລ້ວນແຕ່ຈັກສົງເຄາະດ້ວຍສັງຄະຫະວັດຖຸ ໔ ປະການນີ້ແລ ໃຜກໍຕາມທີ່ ກໍາລັງສົງເຄາະບໍລິສັດຈໍານວນຫຼາຍໃນປັດຈຸບັນ ກໍລ້ວນແຕ່ສົງເຄາະດ້ວຍສັງຄະຫະວັດຖຸ ໔ ປະການນີ້ແລ"

ຫຼັງຈາກນັ້ນ ຫັດຖະກະອຸປາສົກຊາວເມືອງອາລະວີທີ່ພຣະຜູ້ມີພຣະພາກເຈົ້າຊີ້ງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນ ຮ່າເຣີງດ້ວຍທໍາມີກະຖາແລ້ວ ລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທໍາປະທັກຂີນແລ້ວຈາກໄປ

ລໍາດັບນັ້ນ ເມື່ອຫັດຖະກະອຸປາສົກຊາວເມືອງອາລະວີຫຼີກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈໍາຫັດຖະກະອຸປາສົກຊາວເມືອງອາລະວີວ່າເປັນຜູ້ປະກອບດ້ວຍທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການ ອັນໃດແດ່ ຄື ຫັດຖະກະອຸປາສົກຊາວເມືອງອາລະວີ

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີສີນ
໓. ເປັນຜູ້ມີຫິຣິ
໔. ເປັນຜູ້ມີໂອດຕັບປະ
໕. ເປັນພະຫູສູດ
໖. ເປັນຜູ້ມີຈາຄະ
໗. ເປັນຜູ້ມີປັນຍາ
໘. ເປັນຜູ້ມີຄວາມມັກໜ້ອຍ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈໍາຫັດຖະກະອຸປາສົກຊາວເມືອງອາລະວີວ່າ ເປັນຜູ້ປະກອບດ້ວຍທໍາທີ່ໜ້າອັດສະຈັນ ບໍ່ເຄີຍຜາກົດ ໗ ປະການນີ້ແລ"

**ທຸຕິຍະຫັດຖະກະສູດທີ ໔ ຈົບ**

## ໕. ມະຫານາມະສູດ

### ວ່າດ້ວຍເຈົ້າສາກະຍະພຣະນາມວ່າມະຫານາມ

[໔໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນິໂຄທາຣາມ ເຂດເມືອງ ກະບິນລະພັດ ແຄວັ້ນສັກກະ ລໍາດັບນັ້ນ ເຈົ້າສາກະຍະພຣະນາມວ່າ ມະຫານາມສະເດັດເຂົ້າໄປເຝົ້າ

ພຣະຜູ້ມີພຣະ ພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວປະທັບຢູ່ໃນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນຊື່ວ່າອຸປາສົກ ດ້ວຍເຫດພຽງເທົ່າໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫານາມ ເມື່ອໃດແລ ບຸກຄົນເປັນຜູ້ເຖິງພຣະພຸດທະເຈົ້າເປັນສະຣະນະ ເປັນຜູ້ເຖິງພຣະທຳເປັນສະຣະນະ ເປັນຜູ້ເຖິງພຣະສົງເປັນສະຣະນະ ເມື່ອນັ້ນ ບຸກຄົນຊື່ວ່າອຸປາສົກ ດ້ວຍເຫດພຽງເທົ່ານີ້ແລ"

"ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາສົກຊື່ວ່າຜູ້ມີສີນ ດ້ວຍເຫດພຽງເທົ່າໃດ"

"ມະຫານາມ ເມື່ອໃດ ອຸປາສົກເປັນຜູ້ເວັ້ນຂາດຈາກການຂ້າສັດ ເປັນຜູ້ເວັ້ນຂາດຈາກການລັກຊັບ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເມື່ອນັ້ນອຸປາສົກຊື່ວ່າຜູ້ມີສີນ ດ້ວຍເຫດພຽງເທົ່ານີ້ແລ"

"ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາສົກຊື່ວ່າ ຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່າໃດ?"

"ມະຫານາມ ເມື່ອໃດແລ ອຸປາສົກ ຕົນເອງເປັນຜູ້ເຖິງພ້ອມດ້ວຍສັດທາ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍສັດທາ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍສີນ ຕົນເອງເປັນຜູ້ເຖິງພ້ອມດ້ວຍຈາຄະ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍຈາຄະ ຕົນເອງເປັນຜູ້ປະສົງຈະເຫັນພິກຂຸ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ເຫັນພິກຂຸ ຕົນເອງເປັນຜູ້ປະສົງຈະຟັງສັດທຳ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ຟັງສັດທຳ ຕົນເອງເປັນຜູ້ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ຕົນເອງເປັນຜູ້ພິຈາລະນາເນື້ອຄວາມແຫ່ງທຳທີ່ຟັງແລ້ວ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ພິຈາລະນາເນື້ອຄວາມແຫ່ງທຳ ຕົນເອງເປັນຜູ້ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳໆ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ປະຕິບັດທຳສົມຄວນແກ່ທຳ ເມື່ອນັ້ນອຸປາສົກຊື່ວ່າ ຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່ານີ້ແລ"

"ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາສົກຊື່ວ່າ ຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແລະເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່າໃດ"

"ມະຫານາມ ເມື່ອໃດແລ ອຸປາສົກ ຕົນເອງເປັນຜູ້ເຖິງພ້ອມດ້ວຍສັດທາ ແລະຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍສັດທາ ຕົນເອງເປັນຜູ້ເຖິງພ້ອມດ້ວຍສີນ ແລະຊັກຊວນຜູ້ອື່ນໃຫ້

ເປັນຜູ້ເຖິງພ້ອມດ້ວຍສິນ ຕົນເອງເປັນຜູ້ເຖິງພ້ອມດ້ວຍຈາຄະ ແລະຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍຈາຄະ ຕົນເອງເປັນຜູ້ປະສົງຈະເຫັນພິກຂຸ ແລະຊັກຊວນຜູ້ອື່ນໃຫ້ເຫັນພິກຂຸ ຕົນເອງເປັນຜູ້ປະສົງຈະຟັງສັດທໍາ ແລະຊັກຊວນຜູ້ອື່ນໃຫ້ຟັງສັດທໍາ ຕົນເອງເປັນຜູ້ຊົງຈໍາທໍາທີ່ຟັງແລ້ວໄວ້ໄດ້ ແລະຊັກຊວນຜູ້ອື່ນໃຫ້ຊົງຈໍາທໍາທີ່ຟັງແລ້ວໄວ້ໄດ້ ຕົນເອງເປັນຜູ້ພິຈາລະນາເນື້ອຄວາມແຫ່ງທໍາທີ່ຟັງແລ້ວ ແລະຊັກຊວນຜູ້ອື່ນໃຫ້ພິຈາລະນາເນື້ອຄວາມແຫ່ງທໍາ ຕົນເອງເປັນຜູ້ຮູ້ອັດຖະຮູ້ທໍາແລ້ວປະຕິບັດທໍາຕາມສົມຄວນແກ່ທໍາ ແລະຊັກຊວນຜູ້ອື່ນໃຫ້ປະຕິບັດທໍາສົມຄວນແກ່ທໍາ ເມື່ອນັ້ນ ອຸປາສົກຊື່ວ່າຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແລະເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່ານີ້ແລ"

**ມະຫານາມະສູດທີ ໕ ຈົບ**

# ໖. ຊີວະກະສູດ

## ວ່າດ້ວຍໝໍຊີວົກໂກມາຣະພັດ

[໔໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ຊີວະກໍາພະວັນ ເຂດເມືອງຣາດຊະຄຶ ລໍາດັບນັ້ນ ໝໍຊີວົກໂກມາຣະພັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນຊື່ວ່າອຸປາສົກ ດ້ວຍພຽງເຫດເທົ່າໃດນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຊີວົກ ເມື່ອໃດ ບຸກຄົນເປັນຜູ້ເຖິງພຣະພຸດທະເຈົ້າເປັນສະ ຣະນະ ເປັນຜູ້ເຖິງພຣະທໍາເປັນສະຣະນະ ແລະເປັນຜູ້ເຖິງພຣະສົງເປັນສະຣະນະ ເມື່ອນັ້ນບຸກຄົນຊື່ວ່າອຸປາສົກ ດ້ວຍເຫດພຽງເທົ່ານີ້ແລ"

"ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາສົກຊື່ວ່າຜູ້ມີສິນ ດ້ວຍເຫດພຽງເທົ່າໃດ?"

"ຊີວົກ ເມື່ອໃດ ອຸປາສົກເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເປັນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເມື່ອນັ້ນ ອຸປາສົກຊື່ວ່າຜູ້ມີສິນ ດ້ວຍເຫດພຽງເທົ່ານີ້"

"ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາສົກຊື່ວ່າ ຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່າໃດ"

"ຊີວົກ ເມື່ອໃດແລ ອຸປາສົກ ຕົນເອງເປັນຜູ້ເຖິງພ້ອມດ້ວຍສັດທາ ແຕ່ບໍ່ຊັກຊວນ ຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍສັດທາ ຯລຯ ຕົນເອງເປັນຜູ້ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳ ສົມຄວນແກ່ທຳ ແຕ່ບໍ່ຊັກຊວນຜູ້ອື່ນໃຫ້ປະຕິບັດທຳສົມຄວນແກ່ທຳ ເມື່ອນັ້ນ ອຸປາສົກຊື່ວ່າ ຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແຕ່ບໍ່ປະຕິບັດເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່ານີ້"

"ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາສົກຊື່ວ່າຜູ້ປະຕິບັດເພື່ອເກື້ອກູນຕົນເອງ ແລະເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່າໃດ?"

"ຊີວົກ ເມື່ອໃດແລ ອຸປາສົກ ຕົນເອງເປັນຜູ້ເຖິງພ້ອມດ້ວຍສັດທາ ແລະຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍສັດທາ ຕົນເອງເປັນຜູ້ເຖິງພ້ອມດ້ວຍສິນ ແລະຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍສິນ ຕົນເອງເປັນຜູ້ເຖິງພ້ອມດ້ວຍຈາຄະ ແລະຊັກຊວນຜູ້ອື່ນໃຫ້ເປັນຜູ້ເຖິງພ້ອມດ້ວຍຈາຄະ ຕົນເອງເປັນຜູ້ປະສົງຈະເຫັນພິກຂຸ ແລະຊັກຊວນຜູ້ອື່ນໃຫ້ເຫັນພິກຂຸ ຕົນເອງເປັນຜູ້ປະສົງຈະຟັງສັດທຳ ແລະຊັກຊວນຜູ້ອື່ນໃຫ້ຟັງສັດທຳ ຕົນເອງເປັນຜູ້ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ແລະຊັກຊວນຜູ້ອື່ນໃຫ້ຊົງຈຳທຳໄວ້ໄດ້ ຕົນເອງເປັນຜູ້ພິຈາລະນາເນື້ອຄວາມແຫ່ງທຳທີ່ຟັງແລ້ວ ແລະຊັກຊວນຜູ້ອື່ນໃຫ້ພິຈາລະນາເນື້ອຄວາມແຫ່ງທຳ ຕົນເອງເປັນຜູ້ຮູ້ອັດຖະ ຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແລະຊັກຊວນຜູ້ອື່ນໃຫ້ປະຕິບັດທຳສົມຄວນແກ່ທຳ ເມື່ອນັ້ນ ອຸປາສົກຊື່ວ່າ ຜູ້ປະຕິບັດເພື່ອເກື້ອກູນຕົນເອງແລະເພື່ອເກື້ອກູນຜູ້ອື່ນ ດ້ວຍເຫດພຽງເທົ່ານີ້"

**ຊີວະກະສູດທີ ໖ ຈົບ**

# ໗. ປະຖະມະພະລະສູດ

## ວ່າດ້ວຍກຳລັງ ສູດທີ ໑

[໔໗] ພິກຂຸທັງຫຼາຍ ກຳລັງ ໘ ປະການນີ້

ກຳລັງ ໘ ປະການ ອັນໃດແດ່ ຄື

໑. ເດັກມີການຮ້ອງໄຫ້ເປັນກຳລັງ
໒. ມາຕຸຄາມມີຄວາມໂກດເປັນກຳລັງ
໓. ໂຈນມີອາວຸດເປັນກຳລັງ
໔. ພຣະຣາຊາມີອິດສະຣິຍະຍົດເປັນກຳລັງ
໕. ຄົນພານມີການເພ່ງໂທດເປັນກຳລັງ
໖. ບັນດິດມີການບໍ່ເພ່ງໂທດຜູ້ອື່ນເປັນກຳລັງ

໗. ຄົນຜູ້ເປັນພະຫູສູດມີການພິຈາລະນາເປັນກຳລັງ
໘. ສະມະນະພາມມີຂັນຕິເປັນກຳລັງ

ພິກຂຸທັງຫຼາຍ ກຳລັງ ໘ ປະການນີ້ແລ

**ປະຖະມະພະລະສູດທີ ໗ ຈົບ**

# ໘. ທຸຕິຍະພະລະສູດ

## ວ່າດ້ວຍກຳລັງ ສູດທີ ໔

[໔໘] ຄັ້ງນັ້ນ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະສາຣີບຸດດັ່ງນີ້ ວ່າ

"ສາຣີບຸດ ພິກຂຸຂີນາສົບມີກຳລັງເທົ່າໃດ ຈຶ່ງປະຕິນຍາຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

ທ່ານພຣະສາຣີບຸດຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຂີນາສົບມີກຳລັງ ໘ ປະການ ຈຶ່ງປະຕິນຍາຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

ກຳລັງຂອງພິກຂຸຂີນາສົບ ໘ ປະການ ອັນໃດແດ່ ຄື

໑. ສັງຂານທັງປວງເປັນທຳທີ່ພິກຂຸຂີນາສົບໃນພຣະທຳວິໄນນີ້ເຫັນວ່າ ເປັນສະພາວະບໍ່ທ່ຽງດ້ວຍປັນຍາອັນຊອບຕາມຄວາມເປັນຈິງ ແມ່ນຂໍ້ທີ່ສັງຂານທັງປວງເປັນທຳທີ່ພິກຂຸຂີນາສົບເຫັນວ່າເປັນສະພາວະບໍ່ທ່ຽງດ້ວຍ ປັນຍາອັນຊອບຕາມຄວາມເປັນຈິງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິນຍາຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

໔. ກາມທັງຫຼາຍ ເປັນທຳທີ່ພິກຂຸຂີນາສົບເຫັນວ່າປຽບດ້ວຍຂຸມຖ່ານເພີງ ດ້ວຍປັນຍາອັນຊອບຕາມຄວາມເປັນຈິງ ແມ່ນຂໍ້ທີ່ກາມທັງຫຼາຍເປັນທຳທີ່ພິກຂຸຂີນາສົບເຫັນວ່າປຽບດ້ວຍຂຸມຖ່ານເພີງດ້ວຍປັນຍາອັນຊອບ ຕາມຄວາມເປັນຈິງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບອາໄສປະຕິນຍາຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

໓. ຈິດຂອງພິກຂຸຂີນາສົບເປັນທຳມະຊາດນ້ອມໄປ ໂນ້ມໄປ ໂອນໄປ ຕັ້ງຢູ່ໃນວິເວກ[໒] ຍິນດີຍິ່ງໃນເນກຂຳມະ[໓] ປາສະຈາກເງື່ອນທຳ[໔]ອັນເປັນທີ່ຕັ້ງແຫ່ງອາສະວະໂດຍປະການທັງປວງ ແມ່ນ

ຂໍ້ທີ່ຈິດຂອງພິກຂຸຂີນາສົບເປັນທຳມະຊາດ ນ້ອມໄປ ໂນ້ມໄປ ໂອນໄປ ຕັ້ງຢູ່ໃນວິເວກ ຍິນດີຍິ່ງໃນເນກຂຳມະ ປາສະຈາກ ເງື່ອນທຳອັນເປັນທີ່ຕັ້ງແຫ່ງອາສະວະໂດຍປະການທັງປວງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິນຍາຄວາມສິ້ນອາສະວະ ທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

໔. ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິນຍາຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

໕. ອິດທິບາດ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ

໖. ອິນຊີ ໕ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ

໗. ໂພດຊົງ ໗ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ

໘. ອະຣິຍະມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ອະຣິຍະມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບອາໄສປະຕິນຍາຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸຂີນາສົບມີກຳລັງ ໘ ປະການນີ້ແລ ຈຶ່ງປະຕິນຍາ ຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາສິ້ນແລ້ວ"

**ທຸຕິຍະພະລະສູດທີ ໘ ຈົບ**

# ໙. ອັກຂະນະສູດ

## ວ່າດ້ວຍຂະນະທີ່ ບໍ່ສົມຄວນຢູ່ປະພຶດພົມມະຈັນ

[໒໙] ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບກ່າວວ່າ "ຊາວໂລກເຮັດກິດໃນຂະນະຊາວໂລກເຮັດກິດໃນຂະນະ" ແຕ່ເຂົາບໍ່ຮູ້ຂະນະ ຫຼື ບໍ່ແມ່ນຂະນະເລີຍ ພິກຂຸທັງຫຼາຍ ການທີ່ບໍ່ແມ່ນຂະນະບໍ່ແມ່ນສະໄໝທີ່ຈະຢູ່ປະພຶດພົມມະຈັນ ໘ ປະການນີ້

ການ ໘ ປະການ ອັນໃດແດ່ ຄື

໑. ຕະຖາຄົດຜູ້ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກ ໄດ້ຢ່າງ

ປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ອຸບັດຂຶ້ນແລ້ວໃນໂລກນີ້ ແລະສະແດງທຳທີ່ນຳຄວາມສະງົບມາໃຫ້ ເປັນໄປເພື່ອປະຣິນິບພານໃຫ້ເຖິງການຕັດສະຮູ້ ທີ່ພຣະສຸຄົດຊົງປະກາດແລ້ວ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງນະຣົກ ນີ້ບໍ່ແມ່ນຂະນະ ບໍ່ແມ່ນສະໄໝທີ່ຈະຢູ່ປະພຶດພົມມະຈັນປະການທີ ໑

໒. ຕະຖາຄົດ ฯລฯ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ອຸບັດຂຶ້ນແລ້ວໃນໂລກ ແລະສະແດງທຳທີ່ນຳຄວາມສະງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຮູ້ທີ່ພຣະສຸຄົດຊົງປະກາດແລ້ວ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງກຳເນີດສັດດິຣັດສານ ฯລฯ

໓. ຕະຖາຄົດ ฯລฯ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງເຜດວິໄສ ฯລฯ

໔. ຕະຖາຄົດ ฯລฯ ແຕ່ບຸກຄົນນີ້ເປັນຜູ້ເຂົ້າເຖິງເທບນິກາຍທີ່ມີອາຍຸຍືນຊັ້ນໃດຊັ້ນໜຶ່ງແລ້ວ ฯລฯ

໕. ຕະຖາຄົດ ฯລฯ ແຕ່ບຸກຄົນນີ້ເປັນຜູ້ກັບມາເກີດໃນປັດຈັນຕະຊົນນະບົດ ແລະຢູ່ໃນພວກມິລັກຂະທີ່ບໍ່ຮູ້ດຽງສາ ທີ່ບໍ່ມີພິກຂຸ ພິກຂຸນີ ອຸປາສົກ ແລະ ອຸປາສິກາຜ່ານໄປມາ ฯລฯ

໖. ຕະຖາຄົດ ฯລฯ ແຕ່ບຸກຄົນນີ້ເປັນຜູ້ກັບມາເກີດໃນມັດຊິມະຊົນນະບົດ ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ ฯລฯ

໗. ຕະຖາຄົດ ฯລฯ ແຕ່ບຸກຄົນນີ້ເປັນຜູ້ກັບມາເກີດໃນມັດຊິມະຊົນນະບົດ ເປັນຄົນມີປັນຍາຊາມ ໂງ່ຈ້າ ເປັນຄົນປືກ ບໍ່ສາມາດຈະຮູ້ເນື້ອຄວາມແຫ່ງສຸພາສິດ ແລະທຸບພາສິດໄດ້ ນີ້ບໍ່ແມ່ນຂະນະບໍ່ແມ່ນສະໄໝທີ່ຈະຢູ່ປະພຶດພົມມະຈັນປະການທີ ໗

໘. ຕະຖາຄົດຜູ້ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ฯລฯ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ບໍ່ອຸບັດຂຶ້ນແລ້ວໃນໂລກ ແລະບໍ່ສະແດງທຳທີ່ນຳຄວາມສະງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຮູ້ ທີ່ພຣະສຸຄົດ ຊົງປະກາດແລ້ວ ເຖິງບຸກຄົນນີ້ຈະກັບມາເກີດໃນມັດຊິມະຊົນນະບົດ ແລະ ເປັນຜູ້ມີປັນຍາ ບໍ່ໂງ່ຈ້າ ບໍ່ເປັນຄົນປືກ ສາມາດຮູ້ເນື້ອຄວາມ ແຫ່ງສຸພາສິດ ແລະທຸບພາສິດໄດ້ ນີ້ບໍ່ແມ່ນຂະນະ ບໍ່ແມ່ນສະໄໝທີ່ຈະຢູ່ປະພຶດພົມມະຈັນປະການທີ ໘

ພິກຂຸທັງຫຼາຍ ການທີ່ບໍ່ແມ່ນຂະນະ ບໍ່ແມ່ນສະໄໝ ທີ່ຈະຢູ່ປະພຶດພົມມະຈັນ ໙ ປະການເປັນຢ່າງນີ້ແລ

ພິກຂຸທັງຫຼາຍ ຂະນະ ແລະສະໄໝທີ່ຄວນຢູ່ປະພຶດພົມມະຈັນມີປະການດຽວເທົ່ານັ້ນ

ຂະນະ ແລະສະໄໝປະການດຽວນັ້ນ ເປັນແນວໃດ?

ຄື ຕະຖາຄົດເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ອຸບັດຂຶ້ນແລ້ວໃນໂລກນີ້ ແລະສະແດງທຳທີ່ຈະນຳຄວາມສະງົບມາໃຫ້ ເປັນໄປເພື່ອປະຣິນິບພານ ໃຫ້ເຖິງການຕັດສະຣູ້ ທີ່ພຣະສຸຄົດຊົງປະກາດແລ້ວ ແລະບຸກຄົນນີ້ກັບມາເກີດໃນມັດຊິມະຊົນນະບົດ ແລະເປັນຜູ້ມີປັນຍາ ບໍ່ໂງ່ຈ້າ ບໍ່ເປັນຄົນປຶກ ສາມາດຮູ້ເນື້ອຄວາມແຫ່ງສຸພາສິດ ແລະທຸບພາສິດໄດ້ ພິກຂຸທັງຫຼາຍ ນີ້ເປັນຂະນະ ແລະສະໄໝທີ່ຈະຢູ່ປະພຶດພົມມະຈັນປະການດຽວເທົ່ານັ້ນ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ເຫຼົ່າຊົນຜູ້ໄດ້ເກີດເປັນມະນຸດແລ້ວ
ເມື່ອພຣະຕະຖາຄົດຊົງປະກາດສັດທຳດີແລ້ວ
ຍັງບໍ່ໄດ້ຂະນະ ຊື່ວ່າປ່ອຍຂະນະໃຫ້ລ່ວງໄປ
ຊົນທັງຫຼາຍກ່າວເຖິງການທີ່ບໍ່ແມ່ນຂະນະວ່າເຮັດອັນຕະລາຍຕໍ່ມັກ
ພຣະຕະຖາຄົດທັງຫຼາຍຊົງອຸບັດຂຶ້ນໃນໂລກພຽງບາງເທື່ອບາງເວລາ
ສິ່ງທີ່ມາພ້ອມກັນທີ່ຫາໄດ້ຍາກໃນໂລກ ຄື
ການໄດ້ກຳເນີດເປັນມະນຸດ ແລະການສະແດງສັດທຳ
ຊົນຜູ້ຕ້ອງການປະໂຫຍດ ຄວນພະຍາຍາມໃນການດັ່ງກ່າວມານັ້ນ
ບຸກຄົນຄວນເຂົ້າໃຈສັດທຳ
ຂະນະຢ່າໄດ້ລ່ວງເລີຍທ່ານທັງຫຼາຍໄປ
ເພາະຄົນຜູ້ລ່ວງເລີຍຂະນະໄປ
ຍ່ອມບຽດສຽດເສົ້າໂສກຢູ່ໃນນະຣົກ
ຫາກເຂົາປ່ອຍປະໂຫຍດໃຫ້ເສຍໄປ
ບໍ່ບັນລຸຄວາມເປັນຜູ້ແນ່ນອນຕໍ່ສັດທຳໃນໂລກນີ້ໄດ້
ຈັກເດືອດຮ້ອນໃນພາຍຫຼັງສິ້ນການລະນານ

ເໝືອນພໍ່ຄ້າຜູ້ປ່ອຍປະໂຫຍດໃຫ້ເສຍໄປ

ຄົນຜູ້ຖືກອະວິດຊາຫຸ້ມຫໍ່ໄວ້ ພາດຈາກສັດທຳ

ຈັກສະເຫວີຍສັງສາຣະວັດຄືຊາດແລະມໍລະນະສິ້ນການລະນານ

ສ່ວນຊົນເຫຼົ່າໃດໄດ້ຄວາມເປັນມະນຸດແລ້ວ

ເມື່ອພຣະຕະຖາຄົດຊົງປະກາດສັດທຳດີແລ້ວ

ໄດ້ເຮັດແລ້ວ ຈັກເຮັດ ຫຼື ກຳລັງເຮັດຕາມພຣະດຳຣັດຂອງພຣະສາດສະດາ

ປະຕິບັດຕາມແນວທາງທີ່ພຣະຕະຖາຄົດຊົງປະກາດແລ້ວ

ຊົນເຫຼົ່ານັ້ນຊື່ວ່າໄດ້ຮູ້ແຈ້ງຂະນະ

ຄືພົມມະຈັນອັນປະເສີດໃນໂລກ

ບຸກຄົນເພິ່ງເປັນຜູ້ຄຸ້ມຄອງສັງວອນທີ່ພຣະຕະຖາຄົດຜູ້ມີພຣະຈັກຂຸ

ຜູ້ເປັນເຜົ່າພັນແຫ່ງພຣະອາທິດຊົງສະແດງແລ້ວ

ເພິ່ງເປັນຜູ້ບໍ່ຊຸ່ມດ້ວຍຣາຄະ ມີສະຕິຢູ່ທຸກເມື່ອ

ຊົນເຫຼົ່າໃດຕັດອະນຸໄສທັງປວງທີ່ໄປຕາມຝັ່ງຄືບ້ວງແຫ່ງມານ

ເປັນຜູ້ເຖິງຄວາມສິ້ນອາສະວະແລ້ວ

ຊົນເຫຼົ່ານັ້ນຊື່ວ່າເປັນຜູ້ເຖິງຝັ່ງໃນໂລກ

**ອັກຂະນະສູດທີ ໙ ຈົບ**

# ໑໐. ອະນຸຣຸດທະມະຫາວິຕັກກະສູດ

## ວ່າດ້ວຍມະຫາປຸຣິສະວິຕົກຂອງພຣະອະນຸຣຸດທະ

[໓໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນປ່າເພສະກະລາມິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວ້ນພັກຄະ ສະໄໝນັ້ນແລ ທ່ານພຣະອະນຸຣຸດທະຢູ່ທີ່ປາຈີນວັງສະທາຍະວັນ ຄັ້ງນັ້ນ ທ່ານພຣະອະນຸຣຸດທະຫຼີບຫຼີກຢູ່ໃນທີ່ສະຫງັດ ເກີດຄວາມຄິດຢ່າງນີ້ວ່າ "ນີ້ເປັນທຳຂອງບຸກຄົນຜູ້ມັກໜ້ອຍ ບໍ່ແມ່ນທຳຂອງບຸກຄົນຜູ້ມັກຫຼາຍ ນີ້ເປັນທຳຂອງບຸກຄົນຜູ້ສັນໂດດ ບໍ່ແມ່ນທຳຂອງບຸກຄົນຜູ້ບໍ່ສັນໂດດ ນີ້ເປັນທຳຂອງບຸກຄົນຜູ້ສະຫງັດ ບໍ່ແມ່ນທຳຂອງບຸກຄົນ ຜູ້ຍິນດີໃນການຄຸກຄີ ນີ້ເປັນທຳຂອງບຸກຄົນຜູ້ຜາຣົບຄວາມພຽນ ບໍ່ແມ່ນທຳຂອງບຸກຄົນຜູ້ຂີ້ຄ້ານ ນີ້ເປັນທຳຂອງບຸກຄົນຜູ້ມີສະຕິ ຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ຫຼົງລືມສະຕິ ນີ້ເປັນທຳຂອງບຸກຄົນຜູ້ມີໃຈຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ມີໃຈບໍ່ຕັ້ງໝັ້ນ ນີ້ເປັນທຳຂອງບຸກຄົນຜູ້ມີປັນຍາດີ ບໍ່ແມ່ນທຳຂອງບຸກຄົນຜູ້ມີປັນຍາຊາມ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຄຶດຂອງທ່ານພຣະອະນຸຣຸດທະດ້ວຍພຣະຫະໄທແລ້ວ ຊົງຫາຍຈາກເພສະກະລາມິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວ້ນພັກຄະໄປຜາກົດຕໍ່ໜ້າທ່ານພຣະອະນຸຣຸດທະທີ່ປາຈີນວັງສະທາຍວັນ ແຄວ້ນເຈຕີ ເໝືອນບຸຣຸດມີກຳລັງຢຽດແຂນ ອອກຫຼືຄູ້ແຂນເຂົ້າ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຝ່າຍທ່ານພຣະອະນຸຣຸດທະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບທ່ານພຣະອະນຸຣຸດທະດັ່ງນີ້ວ່າ

"ດີແລ້ວ ດີແລ້ວ ອະນຸຣຸດທະ ດີຈິງ ອະນຸຣຸດທະ ທ່ານນຶກມະຫາປຸຣິສະວິຕົກວ່າ "ນີ້ເປັນທຳ ຂອງບຸກຄົນຜູ້ມັກໜ້ອຍ ບໍ່ແມ່ນທຳຂອງບຸກຄົນຜູ້ມັກຫຼາຍ ນີ້ເປັນທຳຂອງບຸກຄົນຜູ້ສັນໂດດ ບໍ່ແມ່ນທຳຂອງບຸກຄົນຜູ້ບໍ່ສັນໂດດ ນີ້ເປັນທຳຂອງບຸກຄົນຜູ້ສະຫງັດ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນການຄຸກຄີ ນີ້ເປັນທຳຂອງບຸກຄົນຜູ້ຜາຣົບຄວາມພຽນ ບໍ່ແມ່ນທຳຂອງບຸກຄົນຜູ້ຂີ້ຄ້ານ ນີ້ເປັນທຳຂອງບຸກຄົນຜູ້ມີສະຕິຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ຫຼົງລືມສະຕິ ນີ້ເປັນທຳຂອງບຸກຄົນຜູ້ມີໃຈຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ມີໃຈບໍ່ຕັ້ງໝັ້ນ ນີ້ເປັນທຳຂອງບຸກຄົນຜູ້ມີປັນຍາ ບໍ່ແມ່ນທຳຂອງບຸກຄົນຜູ້ມີປັນຍາຊາມ" ອະນຸຣຸດທະ ຖ້າຢ່າງນັ້ນ ທ່ານຈົ່ງນຶກມະຫາປຸຣິສະວິຕົກຂໍ້ທີ ໘ ນີ້ວ່າ "ນີ້ເປັນທຳຂອງບຸກຄົນຜູ້ຍິນດີໃນນິບປະປັນຈະທຳ ຜູ້ພໍໃຈໃນນິບປະປັນຈະທຳ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນປະປັນຈະທຳ ຜູ້ພໍໃຈໃນປະປັນຈະທຳ"

ອະນຸຣຸດທະ ເມື່ອໃດ? ທ່ານຈັກນຶກມະຫາປຸຣິສະວິຕົກ ໘ ປະການນີ້ ເມື່ອນັ້ນ ທ່ານຈັກຫວັງໄດ້ຢ່າງແນ່ນອນວ່າ "ຈັກສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່"

ອະນຸຣຸດທະ ເມື່ອໃດ ທ່ານຈັກນຶກມະຫາປຸຣິສະວິຕົກ ໘ ປະການນີ້ ເມື່ອນັ້ນ ທ່ານຈັກຫວັງໄດ້ຢ່າງແນ່ນອນວ່າ "ເພາະວິຕົກວິຈານສະງົບຣະງັບໄປ ຈັກບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່"

ອະນຸຣຸດທະ ເມື່ອໃດ ທ່ານຈັກນຶກມະຫາປຸຣິສະວິຕົກ ໘ ປະການນີ້ ເມື່ອນັ້ນ ທ່ານຈັກຫວັງໄດ້ຢ່າງແນ່ນອນວ່າ "ເພາະປີຕິຈາງຄາຍອອກ ຈັກເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກ ດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາມີສະຕິຢູ່ເປັນສຸກ"

ອະນຸຣຸດທະ ເມື່ອໃດ ທ່ານຈັກນຶກມະຫາປຸຣິສະວິຕົກ ໘ ປະການນີ້ ເມື່ອນັ້ນ ທ່ານຈັກຫວັງໄດ້ຢ່າງແນ່ນອນວ່າ "ເພາະລະສຸກ ແລະທຸກໄດ້ ເພາະໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ຈັກບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່"

ອະນຸຣຸດທະ ເມື່ອໃດ ທ່ານຈັກນຶກມະຫາປຸຣິສະວິຕົກ ໗ ປະການນີ້ ແລະຈັກໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເມື່ອນັ້ນ ຜ້າບັງສຸກຸນຈີວອນຈັກຜາກົດແກ່ທ່ານຜູ້ສັນໂດດ ຢູ່ດ້ວຍຄວາມຍິນດີ ດ້ວຍຄວາມບໍ່ສະດຸ້ງຢ້ານ ດ້ວຍຄວາມຢູ່ຜາສຸກ ດ້ວຍການກ້າວລົງສູ່ນິບພານ ປຽບເໝືອນຫີບໃສ່ຜ້າຂອງຄະຫະບໍດີ ຫຼືບຸດຄະຫະບໍດີເຕັມໄປດ້ວຍຜ້າທີ່ຍ້ອມດ້ວຍສີຕ່າງ ໆ ສະນັ້ນ

ອະນຸຣຸດທະ ເມື່ອໃດ ທ່ານຈັກນຶກມະຫາປຸຣິສະວິຕົກ ໗ ປະການນີ້ ແລະຈັກໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເມື່ອນັ້ນ ອາຫານຄື ຄຳເຂົ້າທີ່ໄດ້ມາດ້ວຍລຳແຂ່ງຈັກຜາກົດ ແກ່ທ່ານຜູ້ສັນໂດດ ຢູ່ດ້ວຍຄວາມຍິນດີ ດ້ວຍຄວາມບໍ່ສະດຸ້ງຢ້ານ ດ້ວຍຄວາມຢູ່ຜາສຸກ ດ້ວຍການກ້າວລົງສູ່ນິບພານ ປຽບເໝືອນເຂົ້າສຸກແຫ່ງເຂົ້າສາລີຂອງຄະຫະບໍດີ ຫຼື ບຸດຄະຫະບໍດີ ທີ່ຄັດກາກອອກແລ້ວ ມີແກງຫຼາຍຢ່າງ ມີກັບຫຼາຍຢ່າງ ສະນັ້ນ

ອະນຸຣຸດທະ ເມື່ອໃດ ທ່ານຈັກນຶກມະຫາປຸຣິສະວິຕົກ ໗ ປະການນີ້ ແລະຈັກໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເມື່ອນັ້ນ ເສນາສະນະ ຄື ເຫງົ້າໄມ້ຈັກຜາກົດແກ່ທ່ານຜູ້ສັນໂດດ ຢູ່ດ້ວຍຄວາມຍິນດີ ດ້ວຍຄວາມບໍ່ສະດຸ້ງຢ້ານ ດ້ວຍຄວາມຢູ່ຜາສຸກ ດ້ວຍການກ້າວລົງສູ່ນິບພານ ປຽບເໝືອນເຮືອນຍອດຂອງຄະຫະບໍດີ ຫຼື ບຸດຄະຫະບໍດີທີ່ໝັ້ນທັງພາຍໃນ ແລະພາຍນອກລົມພັດ ເຂົ້າບໍ່ໄດ້ ມີບານປະຕູປິດມິດຊິດ ໜ້າຕ່າງປິດສະນິດ ສະນັ້ນ

ອະນຸຣຸດທະ ເມື່ອໃດແລ ທ່ານຈັກນຶກມະຫາປຸຣິສະວິຕົກ ໗ ປະການນີ້ ແລະຈັກໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເມື່ອນັ້ນ ທີ່ນອນແລະທີ່ນັ່ງ ທີ່ປູລາດດ້ວຍຫຍ້າຈັກຜາກົດແກ່ທ່ານຜູ້ສັນໂດດ ຢູ່ດ້ວຍຄວາມ ຍິນດີ ດ້ວຍຄວາມບໍ່ສະດຸ້ງຢ້ານ ດ້ວຍຄວາມຢູ່ຜາສຸກ ດ້ວຍການກ້າວລົງສູ່ນິບພານ ປຽບເໝືອນບັນລັງຂອງຄະຫະບໍດີ ຫຼື ບຸດຄະຫະບໍດີທີ່ປູລາດດ້ວຍຜ້າໂກເຊົາ ປູລາດດ້ວຍເຄື່ອງປູລາດຂົນແກະສີຂາວ ປູລາດດ້ວຍເຄື່ອງລາດເຮັດດ້ວຍຂົນແກະລາຍ ປູລາດດ້ວຍເຄື່ອງລາດຢ່າງດີເຮັດດ້ວຍໜັງຊະມົດ ຂ້າງເທິງມີເພດານ ມີໝອນສີແດງວາງໄວ້ທັງ ໔ ຂ້າງ ສະນັ້ນ

ອະນຸຣຸດທະ ເມື່ອໃດ ທ່ານຈັກນຶກມະຫາປຸຣິສະວິຕົກ ໗ ປະການນີ້ ແລະຈັກໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເມື່ອນັ້ນ ຢາດອງດ້ວຍນ້ຳມູດເນົ່າຈັກຜາກົດແກ່ທ່ານຜູ້ສັນໂດດ ຢູ່ດ້ວຍຄວາມຍິນດີ ດ້ວຍຄວາມບໍ່ສະດຸ້ງຢ້ານ ດ້ວຍຄວາມຢູ່ຜາສຸກ ດ້ວຍການກ້າວລົງສູ່ນິບພານ ປຽບເໝືອນເພສັດຊະນິດຕ່າງ ໆ ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍຂອງຄະຫະບໍດີ ຫຼື ບຸດຄະຫະບໍດີ

ອະນຸຣຸດທະ ເພາະເຫດນັ້ນ ທ່ານຄວນຢູ່ຈຳພັນສາທີ່ປາຈີນວັງສະທາຍະວັນ ແຄວ້ນເຈຕີ ນີ້ຕໍ່ໄປເທີ້ນ" ເມື່ອແລ້ວ ທ່ານພຣະອະນຸຣຸດທະ ໄດ້ທູນຮັບສະໜອງພຣະດຳຣັດແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດສອນທ່ານພຣະອະນຸຣຸດທະດ້ວຍພຣະໂອວາດນີ້ ແລ້ວ ຊົງຫາຍຈາກປາຈີນວັງສະທາຍະວັນ ແຄວ້ນເຈຕີ ໄປຜາກົດທີ່ເພສະກະລາມິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວ້ນພັກຄະ ເໝືອນບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ແລ້ວຮັບສັ່ງຮຽກພິກຂຸທັງ ຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງມະຫາປຸຣິສະວິຕົກ ໘ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ໆລໆ

ມະຫາປຸຣິສະວິຕົກ ໘ ປະການ ອັນໃດແດ່ ຄື

໑. ນີ້ເປັນທຳຂອງບຸກຄົນຜູ້ມັກໜ້ອຍ ບໍ່ແມ່ນທຳຂອງບຸກຄົນຜູ້ມັກຫຼາຍ
໒. ນີ້ເປັນທຳຂອງບຸກຄົນຜູ້ສັນໂດດ ບໍ່ແມ່ນທຳຂອງບຸກຄົນຜູ້ບໍ່ສັນໂດດ
໓. ນີ້ເປັນທຳຂອງບຸກຄົນຜູ້ສະຫງັດ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນການຄຸກຄີ
໔. ນີ້ເປັນທຳຂອງບຸກຄົນຜູ້ຜາຣົບຄວາມພຽນ ບໍ່ແມ່ນທຳຂອງບຸກຄົນຜູ້ຂີ້ຄ້ານ
໕. ນີ້ເປັນທຳຂອງບຸກຄົນຜູ້ມີສະຕິຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ຫຼົງລືມສະຕິ
໖. ນີ້ເປັນທຳຂອງບຸກຄົນຜູ້ມີໃຈຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ມີໃຈບໍ່ຕັ້ງໝັ້ນ
໗. ນີ້ເປັນທຳຂອງບຸກຄົນຜູ້ມີປັນຍາດີ ບໍ່ແມ່ນທຳຂອງບຸກຄົນຜູ້ມີປັນຍາຊາມ
໘. ນີ້ເປັນທຳຂອງບຸກຄົນຜູ້ຍິນດີໃນນິບປະປັນຈະທຳ ຜູ້ພໍໃຈໃນນິບປະປັນຈະທຳ ບໍ່ແມ່ນ ທຳຂອງບຸກຄົນຜູ້ຍິນດີໃນປະປັນຈະທຳ ຜູ້ພໍໃຈໃນປະປັນຈະທຳ

ເຮົາກ່າວໄວ້ເຊັ່ນນີ້ວ່າ "ນີ້ເປັນທຳຂອງບຸກຄົນຜູ້ມັກໜ້ອຍ ບໍ່ແມ່ນທຳຂອງບຸກຄົນຜູ້ມັກ ຫຼາຍ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ເປັນຜູ້ມັກໜ້ອຍ ບໍ່ປາຖະໜາ ວ່າ ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ມັກໜ້ອຍ" ເປັນຜູ້ສັນໂດດ ບໍ່ປາຖະໜາວ່າ ຄົນ ທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ສັນໂດດ" ເປັນຜູ້ສະຫງັດ ບໍ່ປາຖະໜາວ່າ "ຄົນທັງຫຼາຍ ເພິ່ງ ຮູ້ຈັກເຮົາວ່າ "ເປັນຜູ້ສະຫງັດ" ເປັນຜູ້ຜາຣົບຄວາມພຽນ ບໍ່ປາຖະໜາວ່າ ຄົນທັງຫຼາຍເພິ່ງຮູ້ຈັກ ເຮົາວ່າ "ເປັນຜູ້ຜາຣົບຄວາມພຽນ" ເປັນຜູ້ມີສະຕິຕັ້ງໝັ້ນ ບໍ່ປາຖະໜາວ່າ ຄົນທັງຫຼາຍເພິ່ງຮູ້ຈັກ ເຮົາວ່າ "ເປັນຜູ້ມີສະຕິຕັ້ງໝັ້ນ" ເປັນຜູ້ມີໃຈຕັ້ງໝັ້ນ ບໍ່ປາຖະໜາວ່າ ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ມີໃຈຕັ້ງໝັ້ນ" ເປັນຜູ້ມີປັນຍາ ບໍ່ປາຖະໜາວ່າ ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ມີ

ປັນຍາ" ເປັນຜູ້ຍິນດີໃນນິບປະປັນຈະທຳ ບໍ່ປາຖະໜາວ່າ ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ຍິນດີໃນນິບປະປັນຈະທຳ"

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ມັກໜ້ອຍ ບໍ່ແມ່ນທຳຂອງບຸກຄົນຜູ້ມັກຫຼາຍ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ນີ້ເປັນທຳຂອງບຸກຄົນຜູ້ສັນໂດດ ບໍ່ແມ່ນທຳຂອງບຸກຄົນຜູ້ບໍ່ສັນໂດດ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ເປັນຜູ້ສັນໂດດດ້ວຍ ຈີວອນບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ສັນໂດດ ບໍ່ແມ່ນທຳຂອງບຸກຄົນຜູ້ບໍ່ສັນໂດດ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ນີ້ເປັນທຳຂອງບຸກຄົນຜູ້ສະຫງັດ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນການຄຸກຄີ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ມີພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ແລະສາວົກຂອງເດຍຣະຖີ ທັງຫຼາຍເຂົ້າໄປຫາໃນທີ່ນັ້ນ ພິກຂຸມີຈິດນ້ອມໄປ ໂນ້ມໄປ ໂອນໄປ ຕັ້ງຢູ່ໃນວິເວກ ຍິນດີຍິ່ງໃນເນກຂຳມະ ບໍ່ຈຳເປັນຕ້ອງເວົ້າຮອດກ່ຽວກັບການສົ່ງການຮັບເລີຍ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ສະຫງັດ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນການຄຸກຄີ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ນີ້ເປັນທຳຂອງບຸກຄົນຜູ້ຜາຣົບຄວາມພຽນ ບໍ່ແມ່ນທຳຂອງບຸກຄົນຜູ້ຂີ້ຄ້ານ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳ ທັງຫຼາຍ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ຜາຣົບຄວາມພຽນ ບໍ່ແມ່ນທຳຂອງບຸກ ຄົນຜູ້ຂີ້ຄ້ານ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ນີ້ເປັນທຳຂອງບຸກຄົນຜູ້ມີສະຕິຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ຫຼົງລືມສະຕິ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນເປັນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດ ຄຳທີ່ເວົ້າ ແມ່ນຜ່ານມາດົນແລ້ວໄດ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ມີສະຕິຕັ້ງໝັ້ນ ບໍ່ແມ່ນຂອງບຸກຄົນຜູ້ຫຼົງລືມສະຕິ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ນີ້ເປັນທຳຂອງບຸກຄົນຜູ້ມີໃຈຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ມີໃຈບໍ່ຕັ້ງໝັ້ນ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ຯລຯ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ມີໃຈຕັ້ງໝັ້ນ ບໍ່ແມ່ນທຳຂອງບຸກຄົນຜູ້ມີໃຈບໍ່ຕັ້ງໝັ້ນ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ນີ້ເປັນທຳຂອງບຸກຄົນຜູ້ມີປັນຍາ ບໍ່ແມ່ນທຳຂອງບຸກຄົນຜູ້ມີປັນຍາຊາມ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ມີປັນຍາດີ ບໍ່ແມ່ນຂອງບຸກຄົນຜູ້ມີປັນຍາຊາມ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ນີ້ເປັນທຳຂອງບຸກຄົນຜູ້ຍິນດີໃນນິບປະປັນຈະທຳ ຜູ້ພໍໃຈໃນນິບປະປັນຈະທຳ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນປະປັນຈະທຳ ຜູ້ພໍໃຈໃນປະປັນຈະທຳ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ພິກຂຸທັງຫຼາຍ ເພາະອາໄສເຫດນີ້ວ່າ ຈິດຂອງພິກຂຸໃນທຳວິໄນນີ້ຍ່ອມແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນປະປັນຈະນິໂຣດ ຍ່ອມລຸດພົ້ນໄດ້

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ນີ້ເປັນທຳຂອງບຸກຄົນຜູ້ຍິນດີໃນນິບປະປັນຈະທຳ ຜູ້ພໍໃຈໃນນິບປະປັນຈະທຳ ບໍ່ແມ່ນທຳຂອງບຸກຄົນຜູ້ຍິນດີໃນປະປັນຈະທຳ ຜູ້ພໍໃຈໃນປະປັນຈະທຳ"

ຄັ້ງນັ້ນ ທ່ານພຣະອະນຸຣຸດທະໄດ້ຢູ່ຈຳພັນສາທີ່ປາຈີນວັງສະທາຍະວັນ ແຄວັນເຈຕີນັ້ນຕໍ່ໄປອີກ ທ່ານຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດ ກໍໄດ້ເຮັດໃຫ້ແຈ້ງປະໂຫຍດປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຊອບຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ"

ທ່ານພຣະອະນຸຣຸດທະໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ທ່ານພຣະອະນຸຣຸດທະຜູ້ໄດ້ບັນລຸພຣະອະຣະຫັດແລ້ວ ຈຶ່ງໄດ້ກ່າວຄາຖາເຫຼົ່ານີ້ໃນເວລານັ້ນວ່າ

ພຣະສາດສະດາຜູ້ປະເສີດໃນໂລກ
ຊົງຮູ້ຄວາມດຳຣິຂອງເຮົາແລ້ວ
ຈຶ່ງສະເດັດມາຫາເຮົາດ້ວຍມະໂນມະຍະກາຍລິດ
ພຣະພຸດທະເຈົ້າຜູ້ຊົງຍິນດີໃນນິບປະປັນຈະທຳ
ຊົງສະແດງມະຫາປຸຣິສະວິຕົກຍິ່ງກວ່າຄວາມດຳຣິຂອງເຮົາ
ຊົງສະແດງນິບປະປັນຈະທຳແລ້ວ
ເຮົາໄດ້ຮູ້ທົ່ວເຖິງທຳຂອງພຣະອົງແລ້ວ
ຍິນດີໃນພຣະສາດສະໜາຢູ່
ເຮົາໄດ້ບັນລຸວິດຊາ ໓ ໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າເຮົາໄດ້ເຮັດຕາມແລ້ວ

**ອະນຸຣຸດທະມະຫາວິຕັກກະສູດທີ ໑໐ ຈົບ**

**ຄະຫະປະຕິວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ທານະວັກ

## ໝວດວ່າດ້ວຍທານ

## ໑. ປະຖະມະທານະສູດ

### ວ່າດ້ວຍທານ ສູດທີ ໑

[໓໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທານ ໘ ປະການນີ້

ທານ ໘ ປະການ ອັນໃດແດ່ ຄື

໑. ບຸກຄົນບາງຄົນໃຫ້ທານເພາະຄວາມຮັກ
໒. ບຸກຄົນບາງຄົນໃຫ້ທານເພາະຄວາມຢ້ານ
໓. ບຸກຄົນບາງຄົນໃຫ້ທານເພາະຄິດວ່າ "ເຂົາໄດ້ໃຫ້ແກ່ເຮົາແລ້ວ"
໔. ບຸກຄົນບາງຄົນໃຫ້ທານເພາະຄິດວ່າ "ເຂົາຈັກໃຫ້ແກ່ເຮົາ"
໕. ບຸກຄົນບາງຄົນໃຫ້ທານເພາະຄິດວ່າ "ການໃຫ້ທານເປັນການດີ"
໖. ບຸກຄົນບາງຄົນໃຫ້ທານເພາະຄິດວ່າ "ເຮົາຫຸງຫາກິນເອງໄດ້ ຊົນເຫຼົ່ານີ້ຫຸງຫາກິນເອງບໍ່ໄດ້ ການທີ່ເຮົາຫຸງຫາກິນເອງໄດ້ຈະບໍ່ໃຫ້ທານແກ່ຊົນເຫຼົ່ານີ້ຜູ້ຫຸງຫາກິນເອງບໍ່ໄດ້ ບໍ່ຄວນ"
໗. ບຸກຄົນບາງຄົນໃຫ້ທານດ້ວຍຄິດວ່າ "ເມື່ອເຮົາໃຫ້ທານນີ້ ກິດຕິສັບອັນງາມຍ່ອມຂະຈອນໄປ"
໘. ບຸກຄົນບາງຄົນໃຫ້ທານເພື່ອເປັນເຄື່ອງປະດັບຈິດ ແລະປຸງແຕ່ງຈິດ

ພິກຂຸທັງຫຼາຍ ທານ ໘ ປະການນີ້ແລ

**ປະຖະມະທານະສູດທີ ໑ ຈົບ**

## ໒. ທຸຕິຍະທານະສູດ

### ວ່າດ້ວຍທານ ສູດທີ ໒

[໓໒] ທຳເຫຼົ່ານີ້ ຄື ສັດທາ ຫິຣິ ທານທີ່ເປັນກຸສົນ
ອັນສັດຕະບຸຣຸດດຳເນີນຕາມແລ້ວ
ສັດຕະບຸຣຸດທັງຫຼາຍກ່າວວ່າທຳ ໓ ປະການນີ້ແລ

ເປັນທາງໄປສູ່ເທວະໂລກ
ເພາະດ້ວຍທຳ ໓ ປະການນີ້ ບຸກຄົນຈຶ່ງໄປສູ່ເທວະໂລກໄດ້

**ທຸຕິຍະທານະສູດທີ່ ໒ ຈົບ**

# ໓. ທານະວັດຖຸສູດ

## ວ່າດ້ວຍທານະວັດຖຸ

[໓໓] ພິກຂຸທັງຫຼາຍ ທານະວັດຖຸ[໔] ໘ ປະການນີ້

ທານະວັດຖຸ ໘ ປະການ ອັນໃດແດ່ ຄື
໑. ບຸກຄົນບາງຄົນໃຫ້ທານເພາະຄວາມຮັກ
໒. ບຸກຄົນບາງຄົນໃຫ້ທານເພາະຄວາມຊັງ
໓. ບຸກຄົນບາງຄົນໃຫ້ທານເພາະຄວາມຫຼົງ
໔. ບຸກຄົນບາງຄົນໃຫ້ທານເພາະຄວາມຢ້ານ
໕. ບຸກຄົນບາງຄົນໃຫ້ທານເພາະຄິດວ່າ “ພໍ່ແລະລຸງເຄີຍໃຫ້ທານ ເຄີຍເຮັດທານ ເຮົາບໍ່ຄວນເຮັດໃຫ້ປະເພນີໃນວົງຕະກູນເກົ່າແກ່ເສື່ອມຫາຍໄປ”
໖. ບຸກຄົນບາງຄົນໃຫ້ທານເພາະຄິດວ່າ “ເຮົາໃຫ້ທານນີ້ແລ້ວ ຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ”
໗. ບຸກຄົນບາງຄົນໃຫ້ທານເພາະຄິດວ່າ “ເມື່ອເຮົາໃຫ້ທານນີ້ ຈິດຍ່ອມຜ່ອງໃສ ເກີດຄວາມຊື່ນຊົມໂສມະນັດ”
໘. ບຸກຄົນບາງຄົນໃຫ້ທານເພື່ອເປັນເຄື່ອງປະດັບຈິດແລະປຸງແຕ່ງຈິດ

ພິກຂຸທັງຫຼາຍ ທານະວັດຖຸ ໘ ປະການນີ້ແລ

**ທານະວັດຖຸສູດທີ່ ໓ ຈົບ**

# ໔. ເຂດຕະສູດ

## ວ່າດ້ວຍນາດີແລະນາບໍ່ດີ

[໓໔] ພິກຂຸທັງຫຼາຍ ພືດທີ່ຫວ່ານລົງໃນນາທີ່ປະກອບດ້ວຍອົງ ໘ ປະການ ຍ່ອມບໍ່ມີຜົນຫຼາຍ ບໍ່ມີຄວາມຊື່ນໃຈຫຼາຍ ບໍ່ມີຄວາມຈະເລີນຫຼາຍ

ນາທີ່ປະກອບດ້ວຍອົງ ໘ ປະການ ເປັນແນວໃດ?

ຄື ນາໃນໂລກນີ້

໑. ເປັນທີ່ລຸ່ມແລະດອນ
໒. ເປັນທີ່ມີຫີນແລະກ້ອນກວດ
໓. ເປັນທີ່ດິນເຄັມ
໔. ເປັນທີ່ໄຖລົງເລິກບໍ່ໄດ້
໕. ເປັນທີ່ບໍ່ມີທາງນ້ຳເຂົ້າ
໖. ເປັນທີ່ບໍ່ມີທາງນ້ຳອອກ
໗. ເປັນທີ່ບໍ່ມີເໝືອງ
໘. ເປັນທີ່ບໍ່ມີຄັນນາ

ພິກຂຸທັງຫຼາຍ ພືດທີ່ຫວ່ານລົງໃນນາທີ່ປະກອບດ້ວຍອົງ ໘ ປະການ ຢ່າງນີ້ ຍ່ອມບໍ່ມີຜົນຫຼາຍ ບໍ່ມີຄວາມຊື່ນໃຈຫຼາຍ ບໍ່ມີຄວາມຈະເລີນຫຼາຍ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ທານທີ່ບຸກຄົນໃຫ້ໃນສະມະນະພາມຜູ້ປະກອບດ້ວຍອົງ ໘ ປະການ ຍ່ອມບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ບໍ່ມີຄວາມຮຸ່ງເຮືອງຫຼາຍ ບໍ່ມີຄວາມແຜ່ຫຼາຍ

ສະມະນະພາມຜູ້ປະກອບດ້ວຍອົງ ໘ ປະການ ເປັນແນວໃດ?

ຄື ສະມະນະພາມໃນໂລກນີ້

໑. ເປັນຜູ້ມີມິດສາທິດຖິ (ເຫັນຜິດ)
໒. ເປັນຜູ້ມີມິດສາສັງກັບປະ (ດຳຣິຜິດ)
໓. ເປັນຜູ້ມີມິດສາວາຈາ (ເຈຣະຈາຜິດ)
໔. ເປັນຜູ້ມີມິດສາກຳມັນຕະ (ກະທຳຜິດ)
໕. ເປັນຜູ້ມີມິດສາອາຊີວະ (ລ້ຽງຊີບຜິດ)
໖. ເປັນຜູ້ມີມິດສາວາຍາມະ (ພະຍາຍາມຜິດ)
໗. ເປັນຜູ້ມີມິດສາສະຕິ (ຣະນຶກຜິດ)
໘. ເປັນຜູ້ມີມິດສາສະມາທິ (ຕັ້ງຈິດໝັ້ນຜິດ)

ພິກຂຸທັງຫຼາຍ ທານທີ່ໃຫ້ໃນສະມະນະພາມຜູ້ປະກອບດ້ວຍອົງ ໘ ປະການ ຢ່າງນີ້ ຍ່ອມບໍ່ມີຜົນຫຼາຍ ບໍ່ມີອານິສົງຫຼາຍ ບໍ່ມີຄວາມຮຸ່ງເຮືອງຫຼາຍ ບໍ່ມີຄວາມແຜ່ຫຼາຍ

ພິກຂຸທັງຫຼາຍ ພືດທີ່ຫວ່ານລົງໃນນາທີ່ປະກອບດ້ວຍອົງ ໘ ປະການ ຍ່ອມມີຜົນຫຼາຍ ມີຄວາມຊື່ນໃຈຫຼາຍ ມີຄວາມຈະເລີນຫຼາຍ

ນາທີ່ປະກອບດ້ວຍອົງ ໘ ປະການ ເປັນແນວໃດ?

ຄື ນາໃນໂລກນີ້

໑. ເປັນທີ່ບໍ່ລຸ່ມແລະດອນ
໒. ເປັນທີ່ບໍ່ມີຫີນແລະກ້ອນກວດ
໓. ເປັນທີ່ບໍ່ມີດິນເຄັມ
໔. ເປັນທີ່ໄຖລົງເລິກໄດ້
໕. ເປັນທີ່ມີທາງນ້ຳເຂົ້າ
໖. ເປັນທີ່ມີທາງນ້ຳອອກ
໗. ເປັນທີ່ມີເໝືອງ
໘. ເປັນທີ່ມີຄັນນາ

ພິກຂຸທັງຫຼາຍ ພືດທີ່ຫວ່ານລົງໃນນາທີ່ປະກອບດ້ວຍອົງ ໘ ປະການຢ່າງນີ້ ຍ່ອມມີຜົນຫຼາຍ ມີຄວາມຊື່ນໃຈຫຼາຍ ມີຄວາມຈະເລີນຫຼາຍ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ທານທີ່ໃຫ້ໃນສະມະນະພາມຜູ້ປະກອບດ້ວຍອົງ ໘ ປະການ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ມີຄວາມແຜ່ຫຼາຍ

ສະມະນະພາມຜູ້ປະກອບດ້ວຍອົງ ໘ ປະການ ເປັນແນວໃດ?

ຄື ສະມະນະພາມໃນໂລກນີ້

໑. ເປັນຜູ້ມີສຳມາທິດຖິ (ເຫັນຖືກ)
໒. ເປັນຜູ້ມີສຳມາສັງກັບປະ (ດຳຣິຖືກ)
໓. ເປັນຜູ້ມີສຳມາວາຈາ (ເຈຣະຈາຖືກ)
໔. ເປັນຜູ້ມີສຳມາກຳມັນຕະ (ກະທຳຖືກ)
໕. ເປັນຜູ້ມີສຳມາອາຊີວະ (ລ້ຽງຊີບຖືກ)
໖. ເປັນຜູ້ມີສຳມາວາຍາມະ (ພະຍາຍາມຖືກ)
໗. ເປັນຜູ້ມີສຳມາສະຕິ (ຣະນຶກຖືກ)
໘. ເປັນຜູ້ມີສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ພິກຂຸທັງຫຼາຍ ທານທີ່ໃຫ້ໃນສະມະນະພາມຜູ້ປະກອບດ້ວຍອົງ ໘ ປະການຢ່າງນີ້ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ມີຄວາມແຜ່ຫຼາຍ

ພືດທີ່ສົມບູນຖືກຫວ່ານລົງໃນນາທີ່ສົມບູນ
ເມື່ອຝົນຕົກຕ້ອງຕາມລະດູການ ທັນຍະຊາດຍ່ອມງອກງາມໄດ້
ເພາະບໍ່ມີສັດຕູພືດ ມີຄວາມຈະເລີນງອກງາມ
ມີຄວາມໄພບູນ ມີຜົນສົມບູນເຕັມທີ່ ສັນໃດ
ໂພຊະນະທີ່ສົມບູນ ທີ່ບຸກຄົນໃຫ້
ໃນສະມະນະພາມຜູ້ມີສີນສົມບູນ ກໍສັນນັ້ນຄືກັນ

ຍ່ອມນຳມາເຊິ່ງກຸສົນອັນສົມບູນ
ເພາະກຳທີ່ເຂົາເຮັດໄວ້ນັ້ນສົມບູນແລ້ວ
ເພາະສະນັ້ນ ບຸກຄົນຜູ້ຫວັງກຸສົນອັນສົມບູນ
ຈຶ່ງເປັນຜູ້ສົມບູນໃນກຸສົນນີ້
ເພິ່ງຄົບທ່ານຜູ້ມີປັນຍາສົມບູນ
ບຸນສຳປະທາທັງຫຼາຍຍ່ອມສຳເລັດໄດ້ຢ່າງນີ້ ຄື
ທ່ານຜູ້ເຖິງພ້ອມດ້ວຍວິດຊາແລະຈະຣະນະ
ໄດ້ຄວາມສົມບູນແຫ່ງຈິດແລ້ວ ເຮັດກຳໃຫ້ບໍລິບູນ
ໄດ້ປະໂຫຍດທີ່ສົມບູນ
ຮູ້ໂລກຕາມຄວາມເປັນຈິງແລ້ວ
ບັນລຸທິດຖິສຳປະທາ (ຄວາມເຖິງພ້ອມດ້ວຍທິດຖິ)
ອາໄສມັກຄະສຳປະທາແລ້ວ ມີໃຈບໍລິບູນ
ຍ່ອມບັນລຸອະຣະຫັດຕະຜົນໄດ້
ກຳຈັດມົນທິນທັງປວງແລ້ວ ຈະບັນລຸນິບພານສຳປະທາໄດ້
ການລຸດພົ້ນຈາກທຸກທັງປວງນັ້ນ ຈັດເປັນສັບພະສຳປະທາ

**ເຂດຕະສູດທີ ໔ ຈົບ**

# ໕. ທານູປະປັດຕິສູດ

## ວ່າດ້ວຍຜົນທີ່ເກີດຈາກການໃຫ້ທານ

[໓໕] ພິກຂຸທັງຫຼາຍ ຜົນທີ່ເກີດຈາກການໃຫ້ທານ ໘ ປະການນີ້

ຜົນທີ່ເກີດຈາກການໃຫ້ທານ ໘ ປະການ ອັນໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ແລະເຄື່ອງປະທີບແກ່ສະມະນະຫຼືພາມ ເຂົາໃຫ້ສິ່ງໃດ ກໍຫວັງສິ່ງນັ້ນຕອບແທນ ເຂົາເຫັນພວກ ຂັດຕິຍະມະຫາສານ ພາມມະຫາສານ ຫຼື ຄະຫະບໍດີມະຫາສານ[໑] ຜູ້ເອີບອີ່ມພັ່ງພ້ອມບຳເຣີຕົນຢູ່ດ້ວຍກາມມະຄຸນ ໕ ຈຶ່ງມີຄວາມປາຖະໜາຢ່າງນີ້ວ່າ "ໂອນໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດຮ່ວມກັບພວກຂັດຕິຍະມະຫາສານ ພາມມະຫາສານ ຫຼື ຄະຫະບໍດີມະຫາສານ" ເຂົາຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດຂອງເຂົາໂນ້ມໄປໃນທາງຕ່ຳ ຈະເລີນໃຫ້ຍິ່ງຂຶ້ນໄປບໍ່ໄດ້ ຍ່ອມເປັນໄປເພື່ອເກີດໃນທີ່ນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງເກີດ

ຮ່ວມກັບພວກຂັດຕິຍະມະຫາສານ ພາມມະຫາສານ ຫຼື ຄະຫະບໍດີມະຫາສານ ຂໍ້ນີ້ ເຮົາກ່າວໄວ້ ສຳລັບຜູ້ມີສິນ ບໍ່ແມ່ນສຳລັບຜູ້ທຸສິນ ພິກຂຸທັງຫຼາຍ ມະໂນປະນິທານຂອງທ່ານຜູ້ມີສິນຍ່ອມສຳເລັດໄດ້ເພາະເປັນຜູ້ບໍລິສຸດ

໔. ບຸກຄົນບາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ແລະເຄື່ອງປະທີບ ເຂົາໃຫ້ສິ່ງໃດ ກໍຫວັງສິ່ງນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທວະດາຊັ້ນຈາຕຸມະຫາຣາດ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ" ຈຶ່ງມີຄວາມປາຖະໜາຢ່າງນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດຮ່ວມກັບພວກເທວະດາຊັ້ນຈາຕຸມະຫາຣາດ" ເຂົາຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດຂອງເຂົາໂນ້ມໄປໃນທາງຕ່ຳ ຈະເລີນໃຫ້ຍິ່ງຂຶ້ນໄປບໍ່ໄດ້ ຍ່ອມເປັນໄປເພື່ອເກີດໃນທີ່ນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງເກີດຮ່ວມກັບພວກເທວະດາຊັ້ນຈາຕຸມະຫາຣາດ ຂໍ້ນີ້ ເຮົາກ່າວໄວ້ສຳລັບຜູ້ມີສິນ ບໍ່ແມ່ນສຳລັບຜູ້ທຸສິນ ພິກຂຸທັງຫຼາຍ ມະໂນປະນິທານຂອງທ່ານຜູ້ມີສິນຍ່ອມສຳເລັດໄດ້ ເພາະເປັນຜູ້ບໍລິສຸດ

໕. ບຸກຄົນບາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ແລະເຄື່ອງປະທີບ ແກ່ສະມະນະຫຼືພາມ ເຂົາໃຫ້ສິ່ງໃດ ກໍຫວັງສິ່ງນັ້ນຕອບແທນ ເຂົາໄດ້ສະດັບມາວ່າ ພວກເທວະດາຊັ້ນຕາວະຕິງສາ ฯລฯ

໖. ບຸກຄົນບາງຄົນໃນໂລກນີ້ ฯລฯ ພວກເທວະດາຊັ້ນຍາມາ ฯລฯ

໗. ບຸກຄົນບາງຄົນໃນໂລກນີ້ ฯລฯ ພວກເທວະດາຊັ້ນດຸສິດ ฯລฯ

໘. ບຸກຄົນບາງຄົນໃນໂລກນີ້ ฯລฯ ພວກເທວະດາຊັ້ນນິມມານະຣະດີ ฯລฯ

໙. ບຸກຄົນບາງຄົນໃນໂລກນີ້ ฯລฯພວກເທວະດາຊັ້ນປະຣະນິມມິຕະວະສະວັດດີ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງປາຖະໜາຢ່າງນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງເກີດຮ່ວມກັບພວກເທວະດາຊັ້ນປະຣະນິມມິຕະວະສະວັດດີ" ເຂົາຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດຂອງເຂົາໂນ້ມໄປໃນທາງຕ່ຳ ຈະເລີນໃຫ້ຍິ່ງຂຶ້ນໄປບໍ່ໄດ້ ຍ່ອມເປັນໄປເພື່ອເກີດໃນທີ່ນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງເກີດຮ່ວມກັບພວກເທວະດາຊັ້ນປະຣະນິມມິຕະວະສະວັດດີ ຂໍ້ນີ້ ເຮົາກ່າວໄວ້ສຳລັບຜູ້ມີສິນ ບໍ່ແມ່ນສຳລັບຜູ້ທຸສິນ ພິກຂຸທັງຫຼາຍ ມະໂນປະນິທານຂອງທ່ານຜູ້ມີສິນຍ່ອມສຳເລັດໄດ້ ເພາະເປັນຜູ້ບໍລິສຸດ

໑໐. ບຸກຄົນບາງຄົນໃນໂລກນີ້ໃຫ້ທານ ຄື ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ແລະເຄື່ອງປະທີບ ແກ່ສະມະນະຫຼືພາມ ເຂົາໃຫ້ສິ່ງໃດ ກໍຫວັງສິ່ງນັ້ນຕອບແທນ ເຂົາໄດ້ສະດັບມາວ່າ "ພວກເທວະດາ ຊັ້ນພົມກາຍິກາ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາຢ່າງນີ້ວ່າ "ໂອໜໍ ຫຼັງຈາກຕາຍແລ້ວ ເຮົາເພິ່ງ

ເກີດຮ່ວມກັບພວກເທວະດາຊັ້ນພົມກາຍິກາ" ເຂົາຕັ້ງຈິດນັ້ນ ອະທິຖານຈິດນັ້ນ ຈະເລີນຈິດນັ້ນຢູ່ ຈິດຂອງເຂົາໂນ້ມໄປໃນທາງຕ່ຳ ຈະເລີນໃຫ້ຍິ່ງຂຶ້ນໄປບໍ່ໄດ້ ຍ່ອມເປັນໄປເພື່ອເກີດໃນທີ່ນັ້ນ ຫຼັງຈາກຕາຍແລ້ວ ເຂົາຈຶ່ງເກີດຮ່ວມກັບພວກເທວະດາຊັ້ນພົມກາຍິກາ ຂໍ້ນີ້ແລ ເຮົາກ່າວໄວ້ສຳລັບຜູ້ມີສິນ ບໍ່ແມ່ນສຳລັບຜູ້ທຸສິນ ສຳລັບຜູ້ປາສະຈາກຣາຄະ[១] ບໍ່ແມ່ນສຳລັບຜູ້ມີຣາຄະ ພິກຂຸທັງຫຼາຍ ມະໂນປະນິທານຂອງທ່ານຜູ້ມີສິນ ຍ່ອມສຳເລັດໄດ້ ເພາະເປັນຜູ້ປາສະຈາກຣາຄະ

ພິກຂຸທັງຫຼາຍ ຜົນທີ່ເກີດຈາກການໃຫ້ທານ ໗ ປະການນີ້ແລ

**ທານູປະປັດຕິສູດທີ ໔ ຈົບ**

# ໖. ປຸນຍະກິຣິຍາວັດຖຸສູດ

## ວ່າດ້ວຍບຸນກິຣິຍາວັດຖຸ

[໓໖] ພິກຂຸທັງຫຼາຍ ບຸນກິຣິຍາວັດຖຸ ໓ ປະການນີ້

ບຸນກິຣິຍາວັດຖຸ ໓ ປະການ ອັນໃດແດ່ ຄື

໑. ບຸນກິຣິຍາວັດຖຸທີ່ ສຳເລັດດ້ວຍທານ
໒. ບຸນກິຣິຍາວັດຖຸທີ່ ສຳເລັດດ້ວຍສິນ
໓. ບຸນກິຣິຍາວັດຖຸທີ່ ສຳເລັດດ້ວຍພາວະນາ

ພິກຂຸທັງຫຼາຍ ບຸກຄົນບາງຄົນໃນໂລກນີ້ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານບໍ່ຫຼາຍ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສິນບໍ່ຫຼາຍ ແລະບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະນາເລີຍ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ໂຊກຮ້າຍໃນມະນຸດ

ບຸກຄົນບາງຄົນໃນໂລກນີ້ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານພໍປະມານ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສິນພໍປະມານ ແຕ່ບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະນາເລີຍ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ໂຊກດີໃນມະນຸດ

ບຸກຄົນບາງຄົນໃນໂລກນີ້ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານມີປະມານຍິ່ງ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສິນມີປະມານຍິ່ງ ແຕ່ບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະນາເລີຍ ຫຼັງຈາກຕາຍແລ້ວ ເຂົາຍ່ອມເກີດຮ່ວມກັບເທວະດາຊັ້ນຈາຕຸມະຫາຣາດ ພິກຂຸທັງຫຼາຍ ທ້າວມະຫາຣາດທັງ ໔ ໃນຊັ້ນນັ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານໃຫ້ຍິ່ງຂຶ້ນ ທຳບຸນກິຣິ

ຍາວັດຖຸທີ່ສຳເລັດດ້ວຍສີນໃຫ້ຍິ່ງຂຶ້ນ ຍ່ອມຄອບງຳເທວະດາຊັ້ນຈາຕຸມະຫາຣາດໄດ້ໂດຍ ຖານະ ໑໐ ປະການ ຄື ອາຍຸທີ່ເປັນທິບ ວັນນະທີ່ເປັນທິບ ສຸກທີ່ເປັນທິບ ຍົດທີ່ເປັນທິບ ອະທິປະໄຕທີ່ເປັນທິບ ຮູບທີ່ເປັນທິບ ສຽງທີ່ເປັນທິບ ກິ່ນທີ່ເປັນທິບ ຣົດທີ່ເປັນທິບ ໂຜດຖັບພະທີ່ເປັນທິບ

ບຸກຄົນບາງຄົນໃນໂລກ ນີ້ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານມີປະມານຍິ່ງ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສີນມີປະມານຍິ່ງ ແຕ່ບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະນາເລີຍ ຫຼັງຈາກຕາຍແລ້ວ ເຂົາຍ່ອມເກີດຮ່ວມກັບເທວະດາຊັ້ນຕາວະຕິງສາ ພິກຂຸທັງຫຼາຍ ທ້າວສັກກະຈອມເທບໃນຊັ້ນຕາວະຕິງສານັ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານໃຫ້ຍິ່ງຂຶ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສີນໃຫ້ຍິ່ງຂຶ້ນ ຍ່ອມຄອບງຳເທວະດາຊັ້ນຕາວະຕິງສາໄດ້ໂດຍຖານະ ໑໐ ປະການ ຄື ອາຍຸທີ່ເປັນທິບ ຯລຯ ໂຜດຖັບພະທີ່ເປັນທິບ

ບຸກຄົນບາງຄົນໃນໂລກນີ້ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານມີປະມານຍິ່ງ ທຳບຸນກິຣິຍາ ວັດຖຸທີ່ສຳເລັດດ້ວຍສີນມີປະມານຍິ່ງ ແຕ່ບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະນາເລີຍຫຼັງຈາກຕາຍແລ້ວ ເຂົາຍ່ອມເກີດຮ່ວມກັບເທວະດາຊັ້ນຍາມາ ພິກຂຸທັງຫຼາຍ ທ້າວສຸຍາມະເທບພະບຸດໃນຊັ້ນຍາມານັ້ນທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານໃຫ້ຍິ່ງຂຶ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສີນໃຫ້ຍິ່ງຂຶ້ນ ຍ່ອມຄອບງຳເທວະດາຊັ້ນຍາມາໄດ້ໂດຍຖານະ ໑໐ ປະການ ຄື ອາຍຸທີ່ເປັນທິບ ຯລຯ ໂຜດຖັບພະທີ່ເປັນທິບ

ບຸກຄົນບາງຄົນໃນໂລກນີ້ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານມີປະມານຍິ່ງ ທຳບຸນກິຣິຍາ ວັດຖຸທີ່ສຳເລັດດ້ວຍສີນມີປະມານຍິ່ງ ແຕ່ບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະນາເລີຍ ຫຼັງຈາກຕາຍແລ້ວ ເຂົາຍ່ອມເກີດຮ່ວມກັບເທວະດາຊັ້ນດຸສິດ ພິກຂຸທັງຫຼາຍ ທ້າວສັນດຸສິດໃນຊັ້ນດຸສິດນັ້ນທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານໃຫ້ຍິ່ງຂຶ້ນ ທຳບຸນກິຣິຍາວັດຖຸ ທີ່ສຳເລັດດ້ວຍສີນໃຫ້ຍິ່ງຂຶ້ນ ຍ່ອມຄອບງຳເທວະດາຊັ້ນດຸສິດໄດ້ໂດຍຖານະ ໑໐ ປະການ ຄື ອາຍຸທີ່ເປັນທິບ ຯລຯ ໂຜດຖັບພະທີ່ເປັນທິບ

ບຸກຄົນບາງຄົນໃນໂລກນີ້ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານມີປະມານຍິ່ງ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສີນມີປະມານຍິ່ງ ແຕ່ບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະນາເລີຍ ຫຼັງຈາກຕາຍແລ້ວ ເຂົາຍ່ອມເກີດຮ່ວມກັບເທວະດາຊັ້ນນິມມານະຣະດີ ພິກຂຸທັງຫຼາຍ ທ້າວສຸນິມມິດເທບພະບຸດໃນຊັ້ນນິມມານະຣະດີນັ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານໃຫ້ຍິ່ງຂຶ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສີນໃຫ້ຍິ່ງຂຶ້ນ ຍ່ອມຄອບງຳເທວະດາຊັ້ນນິມມານະຣະດີໄດ້ໂດຍຖານະ ໑໐ ປະການ ຄື ອາຍຸທີ່ເປັນທິບ ຯລຯ ໂຜດຖັບພະທີ່ເປັນທິບ

ບຸກຄົນບາງຄົນໃນໂລກນີ້ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານມີປະມານຍິ່ງ ທຳບຸນກິຣິຍາ ວັດຖຸທີ່ສຳເລັດດ້ວຍສີນມີປະມານຍິ່ງ ແຕ່ບໍ່ຈັດແຈງບຸນກິຣິຍາວັດຖຸທີ່ສຳເລັດດ້ວຍພາວະ

ນາເລີຍ ຫຼັງຈາກຕາຍແລ້ວ ເຂົາຍ່ອມເກີດຮ່ວມກັບເທວະດາຊັ້ນປະຣະນິມມິຕະວະສະວັດດີ ພິກຂຸທັງຫຼາຍ ທ້າວສະວັດດີເທບພະບຸດໃນຊັ້ນປະຣະນິມມິຕະວະສະວັດດີນັ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍທານໃຫ້ຍິ່ງຂຶ້ນ ທຳບຸນກິຣິຍາວັດຖຸທີ່ສຳເລັດດ້ວຍສີນໃຫ້ຍິ່ງຂຶ້ນ ຍ່ອມຄອບງຳເທວະດາຊັ້ນປະຣະນິມມິຕະວະສະວັດດີໄດ້ ໂດຍຖານະ ໑໐ ປະການ ຄື ອາຍຸທີ່ເປັນທິບ ວັນນະ ທີ່ເປັນທິບ ສຸກທີ່ເປັນທິບ ຍົດທີ່ເປັນທິບ ອະທິປະໄຕທີ່ເປັນທິບ ຣູບທີ່ເປັນທິບ ສຽງທີ່ເປັນທິບ ກິ່ນທີ່ເປັນທິບ ຣົດທີ່ເປັນທິບ ໂຜດຖັບພະທີ່ເປັນທິບ

ພິກຂຸທັງຫຼາຍ ບຸນກິຣິຍາວັດຖຸ ໓ ປະການນີ້ແລ

**ປຸນຍະກິຣິຍາວັດຖຸສູດທີ ໖ ຈົບ**

## ໗. ສັບປຸຣິສະທານະສູດ

## ວ່າດ້ວຍສັບປຸຣິສະທານ

[໕໗] ພິກຂຸທັງຫຼາຍ ສັບປຸຣິສະທານ ໘ ປະການນີ້

ສັບປຸຣິສະທານ ໘ ປະການ ອັນໃດແດ່ ຄື

໑. ສັດຕະບຸຣຸດຍ່ອມໃຫ້ຂອງທີ່ສະອາດ
໒. ສັດຕະບຸຣຸດຍ່ອມໃຫ້ຂອງທີ່ປະນີດ
໓. ສັດຕະບຸຣຸດຍ່ອມໃຫ້ຕາມການ
໔. ສັດຕະບຸຣຸດຍ່ອມໃຫ້ຂອງທີ່ສົມຄວນ
໕. ສັດຕະບຸຣຸດຍ່ອມເລືອກໃຫ້
໖. ສັດຕະບຸຣຸດຍ່ອມໃຫ້ເປັນນິດ
໗. ສັດຕະບຸຣຸດກຳລັງໃຫ້ກໍທຳຈິດໃຫ້ຜ່ອງໃສ
໘. ສັດຕະບຸຣຸດເມື່ອໃຫ້ແລ້ວກໍດີໃຈ

ພິກຂຸທັງຫຼາຍ ສັບປຸຣິສະທານ ໘ ປະການນີ້ແລ

ສັດຕະບຸຣຸດຍ່ອມໃຫ້ທານ ຄື
ໃຫ້ນ້ຳແລະໂພຊະນະທີ່ສະອາດ ໃຫ້ຂອງທີ່ປະນີດ
ໃຫ້ຕາມການ ໃຫ້ຂອງທີ່ສົມຄວນ ໃຫ້ເປັນນິດ
ໃນທ່ານຜູ້ປະພຶດພົມມະຈັນ ຜູ້ເປັນເຂດດີ
ບໍລິຈາກອາມິດຫລວງຫຼາຍກໍບໍ່ເດືອດຮ້ອນ

ທ່ານຜູ້ເຫັນແຈ້ງຍ່ອມສັນເສີນທານທີ່ສັດຕະບຸຣຸດໃຫ້ແລ້ວຢ່າງນີ້
ບັນດິດຜູ້ມີປັນຍາ ມີສັດທາ ມີໃຈເສຍສະລະ ບູຊາຢ່າງນີ້
ຍ່ອມເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນ ເປັນສຸກ

**ສັປປຸຣິສະທານະສູດທີ ໗ ຈົບ**

# ໘. ສັປປຸຣິສະສູດ

## ວ່າດ້ວຍຄຸນປະໂຫຍດຂອງສັດຕະບຸຣຸດ

[໓໘] ພິກຂຸທັງຫຼາຍ ສັດຕະບຸຣຸດເມື່ອເກີດໃນຕະກູນ ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຄົນທັງຫຼາຍ ຄື

໑. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ມານດາບິດາ
໒. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ບຸດພັນລະຍາ
໓. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ທາດກຳມະກອນແລະຄົນໃຊ້
໔. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ມິດແລະອຳມາດ໑
໕. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຍາດຜູ້ລ່ວງລັບໄປແລ້ວ
໖. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ພຣະຣາຊາ
໗. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເຫຼົ່າເທວະດາ
໘. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ສະມະນະພາມ

ພິກຂຸທັງຫຼາຍ ກ້ອນເມກຝົນທ່າໃຫຍ່ ເມື່ອຕົກລົງມາກໍເຮັດໃຫ້ເຂົ້າກ້າທັງປວງຈະເລີນງອກງາມ ຍ່ອມຕົກເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຄົນທັງຫຼາຍ ສັນໃດ

ພິກຂຸທັງຫຼາຍ ສັດຕະບຸຣຸດເມື່ອເກີດໃນຕະກູນ ກໍສັນນັ້ນຄືກັນ ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຄົນທັງຫຼາຍ ຄື

໑. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ມານດາບິດາ
໒. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ບຸດພັນລະຍາ
໓. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ທາດກຳມະກອນແລະຄົນໃຊ້
໔. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ມິດແລະອຳມາດ
໕. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ຍາດຜູ້ລ່ວງລັບໄປແລ້ວ
໖. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ພຣະຣາຊາ

໗. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເຫຼົ່າເທວະດາ
໘. ຍ່ອມເກີດເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ສະມະນະພາມ

ສັດຕະບຸຣຸດຜູ້ມີປັນຍາຢູ່ຄອງເຮືອນ
ເປັນຜູ້ບໍ່ຂີ້ຄ້ານທັງກາງຄືນແລະກາງເວັນ
ຍ່ອມເກີດເພື່ອປະໂຫຍດແກ່ຄົນທັງຫຼາຍ
ເມື່ອຣະນຶກເຖິງອຸປະກາຣະຄຸນທີ່ມານດາບິດາເຮັດໄວ້ກ່ອນ
ຍ່ອມບູຊາມານດາບິດາໂດຍຊອບທຳ
ສັດຕະບຸຣຸດຜູ້ມີສັດທາຕັ້ງໝັ້ນແລ້ວ
ແລະມີສິນເປັນທີ່ຮັກ ຮູ້ທຳແລ້ວ
ຍ່ອມບູຊາບັນພະຊິດຜູ້ບໍ່ຄອງເຮືອນ
ຜູ້ບໍ່ມີບາບ ຜູ້ປະພຶດພົມມະຈັນ
ສັດຕະບຸຣຸດຜູ້ເກື້ອກູນແກ່ພຣະຣາຊາ ເກື້ອກູນແກ່ເທວະດາ
ເກື້ອກູນແກ່ຍາດແລະສະຫາຍທັງຫຼາຍ
ຕັ້ງໝັ້ນດີແລ້ວໃນສັດທຳ ເປັນຜູ້ເກື້ອກູນແກ່ຄົນທັງປວງ
ສັດຕະບຸຣຸດນັ້ນກຳຈັດມົນທິນຄືຄວາມຂີ້ຖີ່ໄດ້ແລ້ວ
ຍ່ອມເຖິງໂລກອັນກະເສມ

**ສັບປຸຣິສະສູດທີ ໗ ຈົບ**

# ໘. ອະພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ

[໓໙] ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໘ ປະການນີ້ ນຳສຸກມາໃຫ້ເປັນໄປເພື່ອ ໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ຫ້ວງບຸນກຸສົນ ໘ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ເຖິງພຣະພຸດທະເຈົ້າເປັນສະຣະນະ ນີ້ເປັນຫ້ວງບຸນກຸສົນປະການທີ ໑ ນຳສຸກມາໃຫ້ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນ

ຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

໘. ອະຣິຍະສາວົກເປັນຜູ້ເຖິງພຣະທຳເປັນສະຣະນະ ນີ້ເປັນຫ້ວງບຸນກຸສົນປະການທີ ໘ ຯລຯ

໙. ອະຣິຍະສາວົກເປັນຜູ້ເຖິງພຣະສົງເປັນສະຣະນະ ນີ້ ເປັນຫ້ວງບຸນກຸສົນປະການທີ ໙ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ພິກຂຸທັງຫຼາຍ ທານ ໕ ປະການນີ້ ເປັນມະຫາທານທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າໃນອະດີດ ບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງໃນປັດຈຸບັນ ບໍ່ຖືກລຶບລ້າງ ໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ

ທານ ໕ ປະການ ອັນໃດແດ່ ຄື

໑. ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ອະຣິຍະສາວົກ ຜູ້ເວັ້ນຂາດຈາກການຂ້າສັດແລ້ວ ຊື່ວ່າໃຫ້ຄວາມບໍ່ມີໄພ ໃຫ້ຄວາມບໍ່ມີເວນ ໃຫ້ຄວາມບໍ່ບຽດບຽນແກ່ສັດທັງຫຼາຍ ບໍ່ມີປະມານ ຍ່ອມເປັນຜູ້ມີສ່ວນແຫ່ງຄວາມບໍ່ມີໄພ ຄວາມບໍ່ມີເວນ ຄວາມບໍ່ບຽດບຽນ ອັນບໍ່ມີປະມານ ນີ້ເປັນທານປະການທີ ໑ ເປັນມະຫາທານທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ໃນອະດີດບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງໃນປັດຈຸບັນບໍ່ຖືກລຶບລ້າງ ໃນອະນາຄົດກໍຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມຜູ້ຮູ້ຄັດຄ້ານ ນີ້ເປັນຫ້ວງບຸນກຸສົນປະການທີ ໔ ນຳສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

໒. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການລັກຊັບ ຯລຯ
໓. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຯລຯ
໔. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຯລຯ

໕. ອະຣິຍະສາວົກເປັນຜູ້ລະເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດ ອະຣິຍະສາວົກຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລ້ວ ຊື່ວ່າໃຫ້ຄວາມບໍ່ມີໄພ ໃຫ້ຄວາມບໍ່ມີເວນ ໃຫ້ຄວາມບໍ່ບຽດບຽນແກ່ສັດທັງຫຼາຍ ບໍ່ມີປະມານ ຍ່ອມເປັນຜູ້ມີສ່ວນແຫ່ງຄວາມບໍ່ມີໄພ ຄວາມບໍ່ມີເວນ ຄວາມບໍ່ບຽດບຽນອັນບໍ່ມີປະມານ ນີ້ເປັນທານປະການທີ ໕ ເປັນມະຫາທານທີ່ຮູ້ກັນວ່າລ້ຳເລີດ ຮູ້ກັນມາ

ດົນ ຮູ້ກັນວ່າເປັນອະຣິຍະວົງ ເປັນຂອງເກົ່າ ໃນອະດີດບໍ່ຖືກລຶບລ້າງແລ້ວ ບໍ່ເຄີຍຖືກລຶບລ້າງ ໃນປັດຈຸບັນ ບໍ່ຖືກລຶບລ້າງ ໃນອະນາຄົດກໍາຈັກບໍ່ຖືກລຶບລ້າງ ບໍ່ຖືກສະມະນະພາມ ຜູ້ຮູ້ຄັດຄ້ານນີ້ ເປັນຫ້ວງບຸນກຸສົນປະການທີ ໘ ນໍາສຸກມາໃຫ້ເປັນໄປ ເພື່ອໃຫ້ໄດ້ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໘ ປະການນີ້ ນໍາສຸກມາໃຫ້ ເປັນໄປເພື່ອໃຫ້ໄດ້ ອາລົມດີ ມີສຸກເປັນຜົນ ໃຫ້ເກີດໃນສະຫວັນ ເປັນໄປເພື່ອເກື້ອກູນ ເພື່ອສຸກທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ

**ອະພິສັນທະສູດທີ ໙ ຈົບ**

# ໑໐. ທຸດຈະຣິຕະວິປາກະສູດ

## ວ່າດ້ວຍວິບາກແຫ່ງທຸດຈະຣິດ

[໔໐] ພິກຂຸທັງຫຼາຍ ປານາຕິບາດ (ການຂ້າສັດ) ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຣັດສານ ອໍານວຍຜົນໃຫ້ໄປເກີດໃນເຜດວິໄສ ວິບາກແຫ່ງປານາຕິບາດຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ເປັນຜູ້ມີອາຍຸ ໜ້ອຍແກ່ຜູ້ເກີດເປັນມະນຸດ

ອະທິນນາທານ (ການລັກຊັບ) ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຣັດສານ ອໍານວຍຜົນໃຫ້ໄປເກີດໃນ ເຜດວິໄສ ວິບາກແຫ່ງອະທິນນາທານຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ເປັນຜູ້ເສື່ອມໂພຄະຊັບແກ່ຜູ້ເກີດເປັນມະນຸດ

ກາເມສຸມິດສາຈານ (ການປະພຶດຜິດໃນກາມ) ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຣັດສານ ອໍານວຍຜົນ ໃຫ້ໄປເກີດໃນເຜດວິໄສ ວິບາກແຫ່ງກາເມສຸມິດສາຈານຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ເປັນຜູ້ມີສັດຕູແລະເປັນຜູ້ມີເວນແກ່ຜູ້ເກີດເປັນມະນຸດ

ມຸສາວາທະ (ການເວົ້າຕົວະ) ທີ່ບຸກຄົນເສບ ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຣັດສານ ອໍານວຍຜົນໃຫ້ໄປເກີດໃນເຜດ ວິໄສ ວິບາກແຫ່ງມຸສາວາທະຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ຖືກກ່າວຕູ່ດ້ວຍຄໍາບໍ່ຈິງ ແກ່ຜູ້ເກີດເປັນມະນຸດ

ປິສຸນາວາຈາ (ການເວົ້າສໍ່ສຽດ) ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຮັດສານ ອໍານວຍຜົນໃຫ້ໄປເກີດໃນ ເຜດວິໄສ ວິບາກແຫ່ງປິສຸນາວາຈາຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ແຕກຈາກມິດແກ່ຜູ້ເກີດເປັນມະນຸດ

ຜະຣຸສະວາຈາ (ການເວົ້າຫຍາບຄາຍ) ທີ່ບຸກຄົນເສບ ຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຮັດສານ ອໍານວຍຜົນໃຫ້ໄປເກີດໃນເຜດວິໄສ ວິບາກແຫ່ງຜະຣຸສະວາຈາຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ໄດ້ຟັງເລື້ອງທີ່ບໍ່ໜ້າ ພໍໃຈແກ່ຜູ້ເກີດເປັນມະນຸດ

ສໍາຜັບປະລາປະ (ການເວົ້າເພີ້ເຈີ້) ທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍ ຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຮັດສານ ອໍານວຍຜົນໃຫ້ໄປເກີດໃນເຜດວິໄສ ວິບາກແຫ່ງສໍາຜັບປະລາປະຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ມີວາຈາທີ່ບໍ່ໜ້າເຊື່ອຖືແກ່ຜູ້ເກີດເປັນມະນຸດ

ພິກຂຸທັງຫຼາຍ ການດື່ມສຸຣາແລະເມໄຣທີ່ບຸກຄົນເສບ ຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມອໍານວຍຜົນໃຫ້ໄປເກີດໃນນະຮົກ ອໍານວຍຜົນໃຫ້ໄປເກີດໃນກໍາເນີດສັດເດຍຮັດສານ ອໍານວຍຜົນໃຫ້ໄປເກີດໃນເຜດວິໄສ ວິບາກແຫ່ງການດື່ມສຸຣາແລະເມໄຣຢ່າງເບົາທີ່ສຸດ ຍ່ອມອໍານວຍຜົນໃຫ້ເປັນຜູ້ວິກົນຈະຣິດແກ່ຜູ້ເກີດເປັນມະນຸດ

**ທຸດຈະຣິຕະວິປາກະສູດທີ ໑໐ ຈົບ**

**ທານະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໕. ອຸໂປສະຖະວັກ

## ໝວດວ່າດ້ວຍອຸໂປສົດ

# ໑. ສັງຂິດຕຸໂປສະຖະສູດ

## ວ່າດ້ວຍອຸໂປສົດໂດຍຫຍໍ້

[໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກດັ່ງນີ້ວ່າ

໑. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການຂ້າສັດ ຄື ວາງທັນທາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການຂ້າສັດ ຄື ວາງ ທັນທາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໑ ນີ້

໒. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການລັກຊັບ ຄື ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂະໂມຍ ເປັນຄົນສະອາດຢູ່ ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການລັກຊັບ ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂະໂມຍ ເປັນຄົນສະອາດຢູ່ຕະຫຼອດວັນໜຶ່ງແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໒ ນີ້

໓. ພຣະອະຣະຫັນທັງຫຼາຍ ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ຄື ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ຄື ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານຢູ່ຕະຫຼອດວັນໜຶ່ງແລະຄືນໜຶ່ງນີ້ໃນວັນນີ້ ເພາະອັງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໓ ນີ້

໔. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳຣົງຄວາມສັດ ມີຖ້ອຍຄຳເປັນຫຼັກ ເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳຣົງຄວາມສັດ ມີຖ້ອຍຄຳເປັນຫຼັກເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໔ ນີ້

໕. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດຢູ່ຕະຫຼອດວັນແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໕ ນີ້

໖. ພຣະອະຣະຫັນທັງຫຼາຍ ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການຢູ່ຕະຫຼອດຊີວິດ ແມ່ນເຮົາກໍບໍຣິໂພກຄາບດຽວ ບໍ່ບໍຣິໂພກ ຕອນກາງຄືນ ເວັ້ນຂາດຈາກການບໍຣິໂພກໃນເວລາວິການຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມ ພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໖ ນີ້

໗. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການຟ້ອນຣຳ ຂັບຮ້ອງ ປະໂຄມດົນຕີ ເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນ ການທັດຊົງ ປະດັບ ຕົກແຕ່ງ ຮ່າງກາຍດ້ວຍພວງດອກໄມ້ຂອງຫອມ ແລະເຄື່ອງປະທິນຜິວອັນເປັນລັກສະນະ ແຫ່ງການແຕ່ງຕົວຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການຟ້ອນຣຳ ຂັບຮ້ອງ ປະໂຄມດົນຕີ ເບິ່ງການລະຫຼິ້ນທີ່ເປັນຂ້າເສິກແກ່ກຸສົນ ການທັດຊົງປະດັບ ຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ຂອງຫອມ ແລະເຄື່ອງປະທິນຜິວອັນເປັນລັກສະນະແຫ່ງການແຕ່ງຕົວຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໗ ນີ້

໘. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກທີ່ນອນສູງ ແລະທີ່ນອນໃຫຍ່ ນອນເທິງທີ່

ນອນຕ່ຳ ຄື ເຕີຽງຕຽງຫຼືເຕີຽງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກທີ່ນອນສູງແລະທີ່ນອນໃຫຍ່ ນອນເຕີຽງທີ່ນອນຕ່ຳ ຄື ເຕີຽງຕຽງຫຼືເຕີຽງທີ່ນອນ ທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດວັນໜຶ່ງແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນ ທັງຫຼາຍແລະຢູ່ຈຳ ອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໘ ນີ້

ພິກຂຸທັງຫຼາຍ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວນີ້ແລ

**ສັງຂິດຕຸໂປສະຖະສູດທີ ໑ ຈົບ**

# ໘. ວິດຖະຕຸໂປສະຖະສູດ

## ວ່າດ້ວຍອຸໂປສົດໂດຍພິດສະດານ

[໔໘] ພິກຂຸທັງຫຼາຍ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກດັ່ງນີ້ວ່າ

໑. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການຂ້າສັດ ຄື ວາງທັນທາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການຂ້າສັດ ຄື ວາງ ທັນທາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດ ເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າ ເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໑ ນີ້

໗໑໗

໘. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກທີ່ນອນສູງ ແລະທີ່ນອນໃຫຍ່ ນອນເຕີຽງທີ່ນອນຕ່ຳ ຄື ເຕີຽງຕຽງຫຼືເຕີຽງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກທີ່ນອນສູງແລະທີ່ນອນໃຫຍ່ ນອນເຕີຽງທີ່ນອນຕ່ຳ ຄື ເຕີຽງຕຽງຫຼືເຕີຽງທີ່ນອນທີ່ປູລາດດ້ວຍ

ຫຍ້າຢູ່ຕະຫຼອດວັນໜຶ່ງແລະ ຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໘ ນີ້

ພິກຂຸທັງຫຼາຍ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວນີ້ແລ

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ພຽງໃດ

ຄື ປຽບເໝືອນພຣະຣາຊາພຣະອົງໃດເພິ່ງຄອງຣາດ ເປັນອິດສະຣາທິບໍດີ (ເປັນຜູ້ຍິ່ງໃຫຍ່ ເໜືອຜູ້ອື່ນ) ແຫ່ງຊົນນະບົດໃຫຍ່ ໑໖ ແຄວັນທີ່ສົມບູນດ້ວຍແກ້ວ ໗ ປະການນີ້ ຄື ອັງຄະ ມະຄະທະ ກາສີ ໂກສະລະ ວັດຊີ ມັນລະ ເຈຕີ ວັງສະ ກຸຣຸ ປັນຈາລະ ມັດສະ ສຸຣະເສນະ ອັດສະກະ ອະວັນຕີ ຄັນທາຣະ ກຳໂພຊະ ການຄອງຣາດຂອງພຣະຣາຊາພຣະອົງນັ້ນ ຍັງມີຄ່າບໍ່ເຖິງສ່ວນທີ ໑໖ ແຫ່ງອຸໂປສົດທີ່ປະກອບດ້ວຍອົງ ໘ ຂໍ້ນັ້ນເພາະເຫດໃດ ເພາະຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໕໐ ປີຂອງມະນຸດເທົ່າກັບວັນ ແລະຄືນໜຶ່ງຂອງເທວະດາຊັ້ນຈາຕຸມະຫາຣາດ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໕໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນຈາຕຸມະຫາຣາດ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີ ຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນຈາຕຸມະຫາຣາດ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໑໐໐ ປີຂອງມະນຸດເທົ່າກັບວັນ ແລະຄືນໜຶ່ງຂອງເທວະດາຊັ້ນຕາວະຕິງສາ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນ ໂດຍເດືອນນັ້ນ ເປັນ ໑ ປີ ໑,໐໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນຕາວະຕິງສາ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີ ຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນຕາວະຕິງສາ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໒໐໐ ປີຂອງມະນຸດເທົ່າກັບວັນແລະຄືນໜຶ່ງຂອງເທວະດາຊັ້ນຍາມາ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໒,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນຍາມາ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດ ຮ່ວມກັບເທວະດາ

ຊັ້ນຍາມາ ຂໍ້ນີ້ເຮົາກ່າວ ໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໔໐໐ ປີຂອງມະນຸດເທົ່າກັບວັນ ແລະຄືນໜຶ່ງຂອງເທວະດາຊັ້ນດຸສິດ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໔,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນດຸສິດ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນດຸສິດ ຂໍ້ນີ້ເຮົາກ່າວ ໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໘໐໐ ປີຂອງມະນຸດເທົ່າກັບວັນແລະຄືນໜຶ່ງຂອງເທວະດາຊັ້ນນິມມານະຣະດີ ໓໐ ຣາຕີໂດຍຣາຕີນັ້ນເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໘,໐໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນນິມມານະຣະດີ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນນິມມານະຣະດີ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໑,໖໐໐ ປີຂອງມະນຸດເທົ່າກັບວັນແລະຄືນໜຶ່ງຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໑໖,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນປະຣະນິມມິຕະວະສະວັດດີ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

ບຸກຄົນບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ
ບໍ່ເພິ່ງເວົ້າຕົວະ ບໍ່ເພິ່ງດື່ມນ້ຳເມົາ
ເພິ່ງງົດເວັ້ນຈາກເມຖຸນທີ່ເປັນຄວາມປະພຶດບໍ່ປະເສີດ
ບໍ່ເພິ່ງບໍຣິໂພກອາຫານໃນເວລາວິການ ໃນເວລາກາງຄືນ
ບໍ່ເພິ່ງທັດຊົງດອກໄມ້ ບໍ່ເພິ່ງລູບໄລ້ຂອງຫອມ
ແລະເພິ່ງນອນເທິງຕຽງ ເທິງພື້ນ ຫຼືເທິງທີ່ ທີ່ປູລາດໄວ້
ບັນດິດທັງຫຼາຍກ່າວວ່າ
ອຸໂປສົດທີ່ປະກອບດ້ວຍອົງ ໘ ນີ້ແລ
ທີ່ພຣະພຸດທະເຈົ້າຜູ້ເຖິງທີ່ສຸດທຸກຂົງປະກາດໄວ້

ດວງຈັນແລະດວງອາທິດທັງສອງ
ງົດງາມສ່ອງສະຫວ່າງ ໂຄຈອນໄປທົ່ວສະຖານທີ່ປະມານເທົ່າໃດ
ກໍດວງຈັນແລະດວງອາທິດນັ້ນ
ກໍາຈັດຄວາມມືດໄປໃນອາກາດ
ເຮັດໃຫ້ທິດສະຫວ່າງສະໄຫວ ສ່ອງແສງຢູ່ໃນອາກາດ
ທົ່ວສະຖານທີ່ປະມານເທົ່າໃດ
ຊັບ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ
ຄໍາສິງຄີແລະຄໍາຕະຫຼອດເຖິງຄໍາຊື່ວ່າຫະຣະກະ
ເທົ່າທີ່ມີຢູ່ໃນສະຖານທີ່ປະມານເທົ່ານັ້ນ
ແລະແສງດວງຈັນ ໝູ່ດາວທັງໝົດ
ຍັງບໍ່ເຖິງສ່ວນທີ ໑໖ ແຫ່ງອຸໂປສົດທີ່ປະກອບດ້ວຍອົງ ໘
ເພາະສະນັ້ນແລ ສະຕີຫຼືບຸຣຸດຜູ້ມີສີນ
ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘
ທໍາບຸນທີ່ມີສຸກເປັນກໍາໄລ ບໍ່ຖືກນິນທາ ຍ່ອມເຂົ້າເຖິງສະຫວັນ

**ວິດຖະຕຸໂປສະຖະສູດທີ ໘ ຈົບ**

# ໙. ວິສາຂາສູດ

## ວ່າດ້ວຍຊົງສະແດງອຸໂປສົດແກ່ນາງວິສາຂາ

[໔໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຜາສາດຂອງນາງວິສາຂາມິຄາຣະມາຕາໃນບຸບພາຣາມ ເຂດເມືອງສາວັດຖີ ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນພຣະຜູ້ມີພຣະພາກເຈົ້າໄດ້ຕັດດັ່ງນີ້ ວ່າ

"ວິສາຂາ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈໍາແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈໍາແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວໃດ?

ຄື ອະຣິຍະສາວົກໃນທໍາວິໄນນີ້ເຫັນປະຈັກດັ່ງນີ້ວ່າ

໑. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການຂ້າສັດ ຄື ວາງທັນທາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການຂ້າສັດ ຄື ວາງ ທັນທາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດ ເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດວັນໜຶ່ງແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໑ ນີ້

ຯລຯ

໘. ພຣະອະຣະຫັນທັງຫຼາຍ ລະເວັ້ນຂາດຈາກທີ່ນອນສູງ ແລະທີ່ນອນໃຫຍ່ ນອນເທິງທີ່ນອນຕ່ຳ ຄື ເທິງຕຽງ ຫຼື ເທິງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກທີ່ນອນສູງແລະທີ່ນອນໃຫຍ່ ນອນເທິງທີ່ນອນຕ່ຳ ຄື ເທິງຕຽງ ຫຼື ເທິງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນ ທັງຫຼາຍແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໘ ນີ້

ວິສາຂາ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນເຂົ້າຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວນີ້ແລ

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ພຽງໃດ

ຄື ປຽບເໝືອນພຣະຣາຊາພຣະອົງໃດເພິ່ງຄອງຣາດ ເປັນອິດສະຣາທິບໍດີ (ເປັນຜູ້ຍິ່ງໃຫຍ່ ເໜືອຜູ້ອື່ນ) ແຫ່ງຊົນນະບົດໃຫຍ່ ໑໖ ແຄວັນທີ່ສົມບູນດ້ວຍແກ້ວ ໗ ປະການນີ້ ຄື ອັງຄະ ມະຄະທະ ກາສີ ໂກສະລະ ວັດຊີ ມັນລະ ເຈຕີ ວັງສະ ກຸຣຸ ປັນຈາລະ ມັດສະ ສຸຣະເສນະ ອັດສະກະ ອະວັນຕີ ຄັນທາຣະ ກຳໂພຊະ ການຄອງຣາດຂອງພຣະຣາຊາພຣະອົງນັ້ນ ຍັງມີຄ່າບໍ່ເຖິງສ່ຽວທີ ໑໖ ແຫ່ງອຸໂປສົດທີ່ປະກອບດ້ວຍອົງ ໘ ຂໍ້ນັ້ນເພາະເຫດໃດ ເພາະຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໕໐ ປີຂອງມະນຸດເທົ່າກັບວັນແລະຄືນໜຶ່ງຂອງເທວະດາຊັ້ນຈາຕຸມະຫາຣາດ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໘ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໕໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນຈາຕຸມະຫາຣາດ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນຈາຕຸມະຫາຣາດ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໑໐໐ ປີຂອງມະນຸດເທົ່າກັບວັນແລະຄືນໜຶ່ງຂອງເທວະດາຊັ້ນຕາວະຕິງສາ ໓໐ ຣາຕີ ໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໘ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໑,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນຕາວະຕິງສາ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດ ບາງຄົນໃນໂລກນີ້ ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບ ເທວະດາຊັ້ນຕາວະຕິງສາ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດ ເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໔໐໐ ປີຂອງມະນຸດ ຯລຯ[1]

໕໐໐ ປີຂອງມະນຸດ ຯລຯ

໘໐໐ ປີຂອງມະນຸດ ຯລຯ

໑,໖໐໐ ປີຂອງມະນຸດເທົ່າກັບວັນແລະຄືນໜຶ່ງຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໘ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໑໖,໐໐໐ ປີທິບໂດຍ ປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປ ໄດ້ ຄື ສະຕີຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍ ແລ້ວ ເພິ່ງໄປເກີດຮ່ວມກັບເທວະດາຊັ້ນປະຣະນິມມິຕະວະສະວັດດີ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ແລວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ"

ບຸກຄົນບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ
ບໍ່ເພິ່ງເວົ້າຕົວະ ບໍ່ເພິ່ງດື່ມນ້ຳເມົາ
ເພິ່ງງົດເວັ້ນຈາກເມຖຸນທີ່ເປັນຄວາມປະພຶດບໍ່ປະເສີດ
ບໍ່ເພິ່ງບໍຣິໂພກອາຫານໃນເວລາວິການ ໃນເວລາກາງຄືນ
ບໍ່ເພິ່ງທັດຊົງດອກໄມ້ ບໍ່ເພິ່ງລູບໄລ້ຂອງຫອມ
ແລະເພິ່ງນອນເທິງຕຽງ ເທິງພື້ນ ຫຼືເທິງທີ່ ທີ່ປູລາດໄວ້
ບັນດິດທັງຫຼາຍກ່າວວ່າ
ອຸໂປສົດທີ່ປະກອບດ້ວຍອົງ ໘ ນີ້ແລ
ທີ່ພຣະພຸດທະເຈົ້າຜູ້ເຖິງທີ່ສຸດທຸກຊົງປະກາດໄວ້
ດວງຈັນແລະດວງອາທິດທັງສອງ
ງົດງາມສ່ອງສະຫວ່າງ ໂຄຈອນໄປທົ່ວສະຖານທີ່ປະມານເທົ່າໃດ
ກໍດວງຈັນແລະດວງອາທິດນັ້ນ
ກຳຈັດຄວາມມືດໄປໃນອາກາດ
ເຮັດໃຫ້ທິດສະຫວ່າງສະໄຫວ ສ່ອງແສງຢູ່ໃນອາກາດ
ທົ່ວສະຖານທີ່ປະມານເທົ່າໃດ

ຊັບ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ
ຄຳສິງຄີແລະຄຳຕະຫຼອດເຖິງຄຳຊື່ວ່າຫະຣະກະ
ເທົ່າທີ່ມີຢູ່ໃນສະຖານທີ່ປະມານເທົ່ານັ້ນ
ແລະແສງດວງຈັນ ໝູ່ດາວທັງໝົດ
ຍັງບໍ່ເຖິງສ່ວນທີ ໑໖ ແຫ່ງອຸໂປສົດທີ່ປະກອບດ້ວຍອົງ ໘
ເພາະສະນັ້ນແລ ສະຕີຫຼືບຸຣຸດຜູ້ມີສິນ
ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘
ທຳບຸນທີ່ມີສຸກເປັນກຳໄລ ບໍ່ຖືກນິນທາ ຍ່ອມເຂົ້າເຖິງສະຫວັນ

**ວິສາຂາສູດທີ ໓ ຈົບ**

# ໔. ວາເສດຖະສູດ

## ວ່າດ້ວຍອຸປາສິກາຊື່ວ່າວາເສດຖະ

[໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ ຄັ້ງນັ້ນ ອຸປາສິກາຊື່ວ່າ ວາເສດຖະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

"ວາເສດຖະ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ຯລຯ ບໍ່ຖືກນິນທາ ຍ່ອມເຂົ້າເຖິງສະຫວັນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ວາເສດຖະອຸປາສິກາໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຍາດແລະສາຍໂລຫິດຜູ້ເປັນທີ່ຮັກຂອງຂ້າພຣະອົງ ເພິ່ງຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການ ການຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການນັ້ນ ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດການລະນານແກ່ຍາດ ແລະສາໂລຫິດຜູ້ເປັນທີ່ຮັກຂອງຂ້າພຣະອົງ

ແມ່ນຫາກກະສັດທັງປວງເພິ່ງຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການ ການຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການນັ້ນ ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດການລະນານແກ່ກະສັດທັງປວງ

ແມ່ນຫາກພາມທັງປວງ ຯລຯ

ແມ່ນຫາກແພດທັງປວງ ຯລຯ

ແມ່ນຫາກສູດທັງປວງເພິ່ງຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການ ການຢູ່ຈຳອຸໂປສົດ ປະກອບດ້ວຍອົງ ໘ ປະການນັ້ນ ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດການລະນານແກ່ ສູດທັງປວງ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວາເສດຖະ ຂໍ້ນີ້ເປັນຢ່າງນັ້ນ ວາເສດຖະ ຂໍ້ນີ້ເປັນ ຢ່າງນັ້ນ ແມ່ນຫາກກະສັດທັງປວງເພິ່ງຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການ ການຢູ່ຈຳອຸ ໂປສົດປະກອບດ້ວຍອົງ ໘ ປະການນັ້ນ ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດການລະ ນານແກ່ກະສັດທັງປວງ

ແມ່ນຫາກພາມທັງປວງ ຯລຯ

ແມ່ນຫາກແພດທັງປວງ ຯລຯ

ແມ່ນຫາກສູດທັງປວງເພິ່ງຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການ ການຢູ່ຈຳອຸໂປສົດ ປະກອບດ້ວຍອົງ ໘ ປະການນັ້ນ ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດການລະນານ ແກ່ ສູດທັງປວງ

ແມ່ນຫາກຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະ ມະນະ ພາມ ເທວະດາ ແລະມະນຸດ ເພິ່ງຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການ ການຢູ່ຈຳ ອຸໂປສົດປະກອບດ້ວຍອົງ ໘ ປະການນັ້ນ ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດການນານ ແກ່ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະ ດາແລະມະນຸດ

ແມ່ນຫາກຕົ້ນສາລະໃຫຍ່ ໆ ເຫຼົ່ານັ້ນ ເພິ່ງຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການ ການຢູ່ຈຳອຸໂປສົດປະກອບດ້ວຍອົງ ໘ ປະການນັ້ນ ເພິ່ງເປັນໄປເພື່ອເກື້ອກູນ ເພື່ອສຸກຕະຫຼອດ ການລະນານແກ່ຕົ້ນສາລະໃຫຍ່ ໆ ເຫຼົ່ານັ້ນ ບໍ່ຈຳເປັນຕ້ອງເວົ້າຮອດມະນຸດເລີຍ"

**ວາເສດຖະສູດທີ ໔ ຈົບ**

# ໕. ໂພດຊາສູດ

## ວ່າດ້ວຍອຸປາສິກາຊື່ວ່າໂພດຊາ

[໔໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພຣະເຊຕະວັນ ອາຮາມຂອງອະ ນາຖະບິນທິກະເສດຖີ ຄັ້ງນັ້ນແລ ໂພດຊາອຸປາສິກາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະ ທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

“ໂພດຊາ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກດັ່ງນີ້ ວ່າ

໑. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກການຂ້າສັດ ຄື ວາງທັນທາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນ ຕໍ່ສັບພະສັດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການຂ້າສັດ ຄື ວາງທັນທາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໑ ນີ້

ຯລຯ

໘. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກທີ່ນອນສູງ ແລະທີ່ນອນໃຫຍ່ ນອນເທິງທີ່ນອນຕ່ຳ ຄື ເທິງຕຽງ ຫຼື ເທິງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກທີ່ນອນສູງ ແລະທີ່ນອນໃຫຍ່ ນອນເທິງທີ່ນອນຕ່ຳ ຄື ເທິງຕຽງ ຫຼື ເທິງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍແລະ ຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໘ ນີ້

ໂພດຊາ ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນຢ່າງນີ້

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍພຽງໃດ

ຄື ປຽບເໝືອນພຣະຣາຊາພຣະອົງໃດເພິ່ງຄອງຣາດ ເປັນອິດສະຣາທິບໍດີ (ເປັນຜູ້ຍິ່ງໃຫຍ່ເໜືອຜູ້ອື່ນ) ແຫ່ງຊົນນະບົດໃຫຍ່ ໑໖ ແຄວ້ນທີ່ສົມບູນດ້ວຍແກ້ວ ໗ ປະການເຫຼົ່ານີ້ ຄື ອັງຄະ ມະຄະທະ ກາສີ ໂກສະລະ ວັດຊີ ມັນລະ ເຈຕີ ວັງສະ ກຸຣຸ ປັນຈາລະ ມັດສະ ສຸຣະເສນະ ອັດສະກະ ອະວັນຕີ ຄັນທາຣະ ກຳໂພຊະ ການຄອງຣາດຂອງພຣະຣາຊາພຣະອົງນັ້ນ ຍັງມີຄ່າບໍ່ເຖິງສ່ວນທີ ໑໖ ແຫ່ງອຸໂປສົດທີ່ປະກອບດ້ວຍອົງ ໘ ຂໍ້ນັ້ນເພາະເຫດໃດ ເພາະຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໕໐ ປີຂອງມະນຸດເທົ່າກັບວັນ ແລະຄືນໜຶ່ງຂອງເທວະດາຊັ້ນຈາຕຸມະຫາຣາດ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໕໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນຈາຕຸມະຫາຣາດ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີຫຼືບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນຈາຕຸມະຫາຣາດ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

໑໐໐ ປີຂອງມະນຸດ ໗ລ໗

໔໐໐ ປີຂອງມະນຸດ ໗ລ໗

໕໐໐ ປີຂອງມະນຸດ ໗ລ໗

໘໐໐ ປີຂອງມະນຸດ ໗ລ໗

໑,໖໐໐ ປີຂອງມະນຸດເທົ່າກັບວັນ ແລະຄືນໜຶ່ງຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໑໖,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນປະຣະນິມມິຕະວະສະວັດດີ ກໍເລື້ອງນີ້ເປັນສິ່ງທີ່ເປັນໄປໄດ້ ຄື ສະຕີ ຫຼື ບຸຣຸດບາງຄົນໃນໂລກນີ້ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ຫຼັງຈາກຕາຍແລ້ວເພິ່ງໄປເກີດຮ່ວມກັບເທວະດາຊັ້ນປະຣະນິມມິຕະວະສະວັດດີ ຂໍ້ນີ້ເຮົາກ່າວໝາຍເຖິງເລື້ອງນີ້ວ່າ ຣາດຊະສົມບັດຂອງມະນຸດເມື່ອນຳໄປປຽບກັບສຸກທີ່ເປັນທິບ ຖືວ່າເປັນຂອງເລັກໜ້ອຍ

ບຸກຄົນບໍ່ເພິ່ງຂ້າສັດ ບໍ່ເພິ່ງລັກຊັບ
ບໍ່ເພິ່ງເວົ້າຕົວະ ບໍ່ເພິ່ງດື່ມນ້ຳເມົາ
ເພິ່ງງົດເວັ້ນຈາກເມຖຸນທີ່ເປັນຄວາມປະພຶດບໍ່ປະເສີດ
ບໍ່ເພິ່ງບໍຣິໂພກອາຫານໃນເວລາວິການໃນເວລາກາງຄືນ
ບໍ່ເພິ່ງທັດຊົງດອກໄມ້ ບໍ່ເພິ່ງລູບໄລ້ຂອງຫອມ
ແລະເພິ່ງນອນເທິງຕຽງ ເທິງພື້ນ ຫຼືເທິງທີ່ ທີ່ປູລາດໄວ້
ບັນດິດທັງຫຼາຍກ່າວວ່າ
ອຸໂປສົດທີ່ປະກອບດ້ວຍອົງ ໘ ນີ້ແລ
ທີ່ພຣະພຸດທະເຈົ້າຜູ້ເຖິງທີ່ສຸດທຸກຊົງປະກາດໄວ້
ດວງຈັນແລະດວງອາທິດທັງສອງ
ງົດງາມສ່ອງສະຫວ່າງ ໂຄຈອນໄປທົ່ວສະຖານທີ່ປະມານເທົ່າໃດ
ກໍດວງຈັນແລະດວງອາທິດນັ້ນ
ກຳຈັດຄວາມມືດໄປໃນອາກາດ
ເຮັດໃຫ້ທິດສະຫວ່າງສະໄຫວ ສ່ອງແສງຢູ່ໃນອາກາດ

ທົ່ວສະຖານທີ່ປະມານເທົ່າໃດ
ຊັບ ຄື ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ
ຄຳສິງຄີ ແລະຄຳຕະຫຼອດເຖິງຄຳຊື່ວ່າຫະຣະກະ
ເທົ່າທີ່ມີຢູ່ໃນສະຖານທີ່ປະມານເທົ່ານັ້ນ
ແລະແສງດວງຈັນ ໝູ່ດາວທັງໝົດ
ຍັງບໍ່ເຖິງສ່ວນທີ ໑໖ ແຫ່ງອຸໂປສົດທີ່ປະກອບດ້ວຍອົງ ໘
ເພາະສະນັ້ນ ສະຕີຫຼືບຸຣຸດຜູ້ມີສິນ
ຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘
ທຳບຸນທີ່ມີສຸກເປັນກຳໄລ ບໍ່ຖືກນິນທາ ຍ່ອມເຂົ້າເຖິງສະຫວັນ

**ໂພດຊາສູດທີ ໕ ຈົບ**

# ໖. ອະນຸຣຸດທະສູດ

## ວ່າດ້ວຍພຣະອະນຸຣຸດທະ

[໔໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນໂຄສິຕາຣາມ ເຂດເມືອງໂກສຳພີ ສະໄໝນັ້ນ ທ່ານພຣະອະນຸຣຸດທະພັກຜ່ອນກາງເວັນ ຫຼີບຫຼີກຢູ່ ຄັ້ງນັ້ນ ເທວະດາເຫຼົ່າມະນາປະກາຍິກາຈຳນວນຫຼາຍ ໄດ້ເຂົ້າໄປຫາທ່ານພຣະອະນຸຣຸດທະເຖິງທີ່ຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະອະນຸຣຸດທະດັ່ງນີ້ ວ່າ

"ທ່ານພຣະອະນຸຣຸດທະຜູ້ຈະເລີນ ພວກຂ້າພະເຈົ້າເປັນເທວະດາເຫຼົ່າມະນາປະກາຍິກາຄອງຄວາມເປັນໃຫຍ່ ແລະແຜ່ອຳນາດໄປໃນຖານະ ໓ ປະການ ຄື

໑. ພວກຂ້າພະເຈົ້າຫວັງວັນນະເຊັ່ນໃດ ກໍໄດ້ວັນນະເຊັ່ນນັ້ນໂດຍທັນທີ
໒. ພວກຂ້າພະເຈົ້າຫວັງສຽງເຊັ່ນໃດ ກໍໄດ້ສຽງເຊັ່ນນັ້ນໂດຍທັນທີ
໓. ພວກຂ້າພະເຈົ້າຫວັງສຸກເຊັ່ນໃດ ກໍໄດ້ສຸກເຊັ່ນນັ້ນໂດຍທັນທີ

ທ່ານພຣະອະນຸຣຸດທະຜູ້ຈະເລີນ ພວກຂ້າພະເຈົ້າເປັນເທວະດາເຫຼົ່າມະນາປະກາຍິກາຄອງຄວາມເປັນໃຫຍ່ແລະແຜ່ອຳນາດໄປໃນຖານະ ໓ ປະການນີ້ແລ"

ຄັ້ງນັ້ນແລ ທ່ານພຣະອະນຸຣຸດທະໄດ້ມີຄວາມດຳຣິວ່າ "ເຫດໃດໜໍ ເທວະດາເຫຼົ່ານີ້ທັງໝົດເພິ່ງມີກາຍຂຽວ ມີຜິວພັນຂຽວ ມີຜ້າຂຽວ ມີເຄື່ອງປະດັບຂຽວ"

ລຳດັບນັ້ນ ເທວະດາເຫຼົ່ານັ້ນໄດ້ຮູ້ຄວາມດຳຣິຂອງທ່ານພຣະອະນຸຣຸດທະແລ້ວ ທັງໝົດຈຶ່ງແປງກາຍຂຽວ ມີຜິວພັນຂຽວ ມີຜ້າຂຽວ ມີເຄື່ອງປະດັບຂຽວ

ຄັ້ງນັ້ນ ທ່ານພຣະອະນຸຣຸດທະໄດ້ມີຄວາມດຳຣິວ່າ "ເຫດໃດນໍ ເທວະດາເຫຼົ່ານີ້ທັງໝົດເພິ່ງມີກາຍເຫຼືອງ ໆລໆ ມີກາຍແດງ ໆລໆ ມີກາຍຂາວ ມີຜິວພັນຂາວ ມີຜ້າຂາວ ມີເຄື່ອງປະດັບຂາວ"

ລຳດັບນັ້ນ ເທວະດາເຫຼົ່ານັ້ນໄດ້ຮູ້ຄວາມດຳຣິຂອງທ່ານພຣະອະນຸຣຸດທະແລ້ວ ທັງໝົດຈຶ່ງແປງກາຍຂາວ ມີຜິວພັນຂາວ ມີຜ້າຂາວ ມີເຄື່ອງປະດັບຂາວ

ບັນດາເທວະດາເຫຼົ່ານັ້ນ ເທວະດາບາງອົງຂັບຮ້ອງ ບາງອົງຟ້ອນລຳ ບາງອົງຕົບມືເຄື່ອງປະດັບຂອງເທວະດາເຫຼົ່ານັ້ນມີສຽງໄພເລາະ ຈັບໃຈ ຊຸກຍູ້ໃຈ ຊວນໃຫ້ເຄີບເຄີ້ມ ແລະຫຼົງໃຫຼ ປຽບເໝືອນດົນຕີມີອົງ ໕ ທີ່ນັກດົນຕີຜູ້ຊ່ຽວຊານປັບດີແລ້ວ ປະໂຄມດີແລ້ວ ບັນເລງດີແລ້ວມີສຽງໄພເລາະ ຈັບໃຈ ຊຸກຍູ້ໃຈ ຊວນໃຫ້ເຄີບເຄີ້ມ ແລະຫຼົງໃຫຼ

ລຳດັບນັ້ນ ທ່ານພຣະອະນຸຣຸດທະໄດ້ທອດອິນຊີລົງ

ເທວະດາເຫຼົ່ານັ້ນຮູ້ວ່າ "ພຣະຄຸນເຈົ້າອະນຸຣຸດທະບໍ່ຍິນດີເລີຍ" ຈຶ່ງຫາຍໄປ ໃນທີ່ນັ້ນເອງ

ເມື່ອເວລາເຢັນທ່ານພຣະອະນຸຣຸດທະໄດ້ອອກຈາກທີ່ຫຼີກຫຼີກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້າພຣະອົງພັກຜ່ອນກາງເວັນ ຫຼີກຫຼີກຢູ່ຄັ້ງນັ້ນ ເທວະດາເຫຼົ່າມະນາປະກາຍິກາຈຳນວນຫຼາຍໄດ້ເຂົ້າມາຫາຂ້າພຣະອົງ ເຖິງທີ່ຢູ່ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ

"ທ່ານພຣະອະນຸຣຸດທະຜູ້ຈະເລີນ ພວກຂ້າພະເຈົ້າເປັນເທວະດາເຫຼົ່າມະນາປະກາຍິກາຄອງຄວາມ ເປັນໃຫຍ່ ແລະແຜ່ອຳນາດໄປໃນຖານະ ໓ ປະການ ຄື

໑. ພວກຂ້າພະເຈົ້າຫວັງວັນນະເຊັ່ນໃດ ກໍໄດ້ວັນນະເຊັ່ນນັ້ນໂດຍທັນທີ
໒. ພວກຂ້າພະເຈົ້າຫວັງສຽງເຊັ່ນໃດ ກໍໄດ້ສຽງເຊັ່ນນັ້ນໂດຍທັນທີ
໓. ພວກຂ້າພະເຈົ້າຫວັງສຸກເຊັ່ນໃດ ກໍໄດ້ສຸກເຊັ່ນນັ້ນໂດຍທັນທີ

ທ່ານພຣະອະນຸຣຸດທະຜູ້ຈະເລີນ ພວກຂ້າພະເຈົ້າເປັນເທວະດາເຫຼົ່າມະນາປະກາຍິກາຄອງຄວາມ ເປັນໃຫຍ່ ແລະແຜ່ອຳນາດໄປໃນຖານະ ໓ ປະການນີ້ແລ"

ຂ້າພຣະອົງນັ້ນໄດ້ມີຄວາມດຳຣິວ່າ "ເຫດໃດນໍ ເທວະດາເຫຼົ່ານີ້ທັງໝົດເພິ່ງມີຮ່າງຂຽວ ມີຜິວພັນຂຽວ ມີຜ້າຂຽວ ມີເຄື່ອງປະດັບຂຽວ" ລຳດັບນັ້ນ ເທວະດາເຫຼົ່ານັ້ນໄດ້ຮູ້ ຄວາມດຳຣິຂອງຂ້າພຣະອົງແລ້ວ ທັງໝົດຈຶ່ງແປງກາຍຂຽວ ມີຜິວພັນຂຽວ ມີຜ້າຂຽວ ມີເຄື່ອງປະດັບຂຽວ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງນັ້ນໄດ້ມີຄວາມດຳຣິວ່າ "ເຫດໃດນໍ ເທວະດາເຫຼົ່ານີ້ ທັງໝົດເພິ່ງມີຮ່າງເຫຼືອງ ຯລຯ ມີກາຍແດງ ຯລຯ ມີກາຍຂາວ ມີຜິວພັນຂາວ ມີຜ້າຂາວ ມີເຄື່ອງປະດັບຂາວ" ລຳດັບນັ້ນ ເທວະດາເຫຼົ່ານັ້ນໄດ້ຮູ້ຄວາມດຳຣິຂອງຂ້າພຣະອົງແລ້ວ ທັງໝົດຈຶ່ງແປງກາຍຂາວ ມີຜິວພັນຂາວ ມີຜ້າຂາວ ແລະມີເຄື່ອງປະດັບຂາວ

ຂ້າແດ່ພຣະອົງຜູ້ຈະເລີນ ບັນດາເທວະດາເຫຼົ່ານັ້ນ ເທວະດາບາງອົງຂັບຮ້ອງ ບາງອົງຟ້ອນລຳ ບາງອົງຕົບມື ເຄື່ອງປະດັບຂອງເທວະດາເຫຼົ່ານັ້ນມີສຽງໄພເລາະ ຈັບໃຈ ຊຸກຍູ້ໃຈ ຊວນໃຫ້ເຄີບເຄີ້ມ ແລະຫຼົງໃຫຼ ປຽບເໝືອນດົນຕີມີອົງ ໕ ທີ່ນັກດົນຕີ ຜູ້ຊ່ຽວຊານປັບດີ ປະໂຄມດີແລ້ວ ບັນເລງດີແລ້ວ ມີສຽງໄພເລາະ ຈັບໃຈ ຊຸກຍູ້ໃຈ ຊວນໃຫ້ເຄີບເຄີ້ມ ແລະຫຼົງໃຫຼ ຂ້າພຣະອົງໄດ້ຫອດອິນຊີລົງ

ເທວະດາເຫຼົ່ານັ້ນຮູ້ວ່າ "ພຣະຄຸນເຈົ້າອະນຸຣຸດທະບໍ່ຍິນດີເລີຍ" ຈຶ່ງຫາຍໄປ ໃນທີ່ນັ້ນເອງ ຂ້າແດ່ພຣະອົງຜູ້ຈະເລີນ ມາຕຸຄາມປະກອບດ້ວຍທຳເທົ່າໃດນໍ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໘ ປະການນີ້ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ ທຳ ໘ ປະການ ອັນໃດແດ່ ຄື

໑. ມານດາບິດາຜູ້ປາຖະໜາປະໂຫຍດ ຫວັງເກື້ອກູນອະນຸເຄາະດ້ວຍຄວາມເອັນດູຍົກນາງໃຫ້ສາມີໃດ ນາງຕ້ອງຕື່ນກ່ອນນອນພາຍຫຼັງສາມີນັ້ນ ຄອຍຖ້າຮັບໃຊ້ ປະຕິບັດໃຫ້ເປັນທີ່ພໍໃຈເຂົາ ເວົ້າຄຳໄພເລາະຕໍ່ເຂົາ

໒. ຊົນເຫຼົ່າໃດເປັນທີ່ເຄົາລົບຂອງສາມີ ຄື ມານດາ ບິດາ ຫຼື ສະມະນະພາມ ນາງສັກກາຣະເຄົາລົບ ນັບຖື ບູຊາຊົນເຫຼົ່ານັ້ນ ແລະຕ້ອນຮັບທ່ານເຫຼົ່ານັ້ນ ຜູ້ມາເຖິງແລ້ວດ້ວຍນ້ຳ ແລະເສນາສະນະ

໓. ວຽກງານເຫຼົ່າໃດເປັນວຽກງານໃນເຮືອນສາມີ ຄື ການຕ່ຳແຜ່ນຂົນສັດ ຫຼື ຜ້າຝ້າຍ ນາງເປັນຄົນຂະຫຍັນບໍ່ຂີ້ຄ້ານໃນວຽກງານເຫຼົ່ານັ້ນ ປະກອບ ດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນວຽກງານເຫຼົ່ານັ້ນ ສາມາດເຮັດ ສາມາດຈັດໄດ້

໔. ຮູ້ຈັກວຽກງານທີ່ຄົນໃນເຮືອນສາມີ ຄື ທາດ ຄົນໃຊ້ ຫຼືກຳມະກອນ ວ່າເຮັດແລ້ວ ຫຼື ຍັງບໍ່ໄດ້ເຮັດ ຮູ້ອາການຂອງຄົນເຫຼົ່ານັ້ນທີ່ເປັນໄຂ້ວ່າດີຂຶ້ນ ຫຼື ຊຸດລົງ ແລະແບ່ງປັນຂອງກິນ ຂອງໃຊ້ໃຫ້ຕາມສ່ວນທີ່ຄວນ

໕. ນາງຮັກສາຄຸ້ມຄອງສິ່ງທີ່ ສາມີຫາມາໄດ້ ເປັນຊັບ ເຂົ້າ ເງິນ ຫຼື ຄຳກໍຕາມ ບໍ່ເປັນນັກເລງການພະນັນ ບໍ່ເປັນຂະໂມຍ ບໍ່ເປັນນັກເລງສຸຣາ ບໍ່ລ້າງຜານຊັບສົມບັດ

໖. ນາງເປັນອຸປາສິກາ ເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະ ເຖິງພຣະສົງເປັນສະຣະນະ

໗. ນາງເປັນຜູ້ມີສິນ ຄື ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

໘. ນາງເປັນຜູ້ມີຈາຄະ ຄື ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະ ອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໘ ປະການນີ້ແລ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ"

ສະຕີຜູ້ເປັນບັນດິດ ຍ່ອມບໍ່ດູໝິ່ນສາມີ
ຜູ້ມີຄວາມພຽນ ຂົນຂວາຍເປັນນິດ
ລ້ຽງຕົນເອງທຸກເມື່ອ ຜູ້ໃຫ້ສິ່ງທີ່ຕ້ອງການໄດ້ທຸກຢ່າງ
ບໍ່ເຮັດໃຫ້ສາມີຂຸ່ນເຄືອງດ້ວຍການສະແດງຄວາມຫຶງຫວງ
ຍົກຍ້ອງທຸກຄົນທີ່ສາມີເຄົາລົບ ເປັນຄົນຂະຫຍັນ ບໍ່ຂີ້ຄ້ານ
ສົງເຄາະຄົນຂ້າງຄຽງຂອງສາມີ
ປະຕິບັດຖືກໃຈສາມີ ຮັກສາຊັບທີ່ສາມີຫາມາໄດ້
ສະຕີຜູ້ຍັງປະພຶດຕາມໃຈສາມີຢູ່ຢ່າງນີ້
ຈະເຂົ້າເຖິງຄວາມເປັນເທວະດາເຫຼົ່າມະນາປະກາຍິກາ

**ອະນຸຣຸດທະສູດທີ ໖ ຈົບ**

# ໗. ທຸຕິຍະວິສາຂາສູດ

## ວ່າດ້ວຍນາງວິສາຂາ ສູດທີ ໘

[໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຜາສາດຂອງນາງວິສາຂາມິຄາຣະມາຕາໃນບຸບພາຣາມ ເຂດເມືອງສາວັດຖີ ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

"ວິສາຂາ ມາຕຸຄາມປະກອບດ້ວຍທຳ ໘ ປະການນີ້ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ

ທຳ ໘ ປະການ ອັນໃດແດ່ ຄື

໑. ມານດາບິດາຜູ້ປາຖະໜາປະໂຫຍດ ຫວັງເກື້ອກູນອະນຸເຄາະດ້ວຍຄວາມເອັນດູ ຍົກທ່ານໃຫ້ສາມີໃດ ທ່ານຕ້ອງຕື່ນກ່ອນນອນພາຍຫຼັງສາມີນັ້ນ ຄອຍຖ້າຮັບໃຊ້ ປະຕິບັດໃຫ້ເປັນທີ່ພໍໃຈເຂົາ ເວົ້າຄຳໄພເລາະຕໍ່ເຂົາ

ຯລຯ

໘. ທ່ານເປັນຜູ້ມີຈາຄະ ຄື ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ

ວິສາຂາ ມາຕຸຄາມປະກອບດ້ວຍທຳ ໘ ປະການນີ້ແລ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ"

ສະຕີຜູ້ເປັນບັນດິດ ຍ່ອມບໍ່ດູໝິ່ນສາມີ
ຜູ້ມີຄວາມພຽນ ຂົນຂວາຍເປັນນິດ
ລ້ຽງຕົນເອງທຸກເມື່ອ ຜູ້ໃຫ້ສິ່ງທີ່ຕ້ອງການໄດ້ທຸກຢ່າງ
ບໍ່ເຮັດໃຫ້ສາມີຂຸ່ນເຄືອງດ້ວຍການສະແດງຄວາມຫຶງຫວງ
ຍົກຍ້ອງທຸກຄົນທີ່ສາມີເຄົາລົບ ເປັນຄົນຂະຫຍັນ ບໍ່ຂີ້ຄ້ານ
ສົງເຄາະຄົນຂ້າງຄຽງຂອງສາມີ
ປະຕິບັດຖືກໃຈສາມີ ຮັກສາຊັບທີ່ສາມີຫາມາໄດ້
ສະຕີຜູ້ຍັງປະພຶດຕາມໃຈສາມີຢູ່ຢ່າງນີ້

ຈະເຂົ້າເຖິງຄວາມເປັນເທວະດາເຫຼົ່າມະນາປະກາຍິກາ

**ທຸຕິຍະວິສາຂາສູດທີ ໗ ຈົບ**

# ໘. ນະກຸລະມາຕາສູດ

## ວ່າດ້ວຍນະກຸລະມາຕາຄະຫະປະຕານີ

[໔໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ເພສະກະລາມິຄະທາຍະວັນ ເຂດເມືອງສຸງສຸມາຣະຄິຣະ ແຄວ້ນພັກຄະ ຄັ້ງນັ້ນ ນະກຸລະມາຕາຄະຫະປະຕານີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບແລ້ວ ຯລຯ ນັ່ງແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

"ນະກຸລະມາຕາ ມາຕຸຄາມປະກອບດ້ວຍທຳ ໘ ປະການນີ້ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ

ທຳ ໘ ປະການ ອັນໃດແດ່ ຄື

໑. ມານດາບິດາຜູ້ປາຖະໜາປະໂຫຍດ ຫວັງເກື້ອກູນອະນຸເຄາະດ້ວຍ ຄວາມເອັນດູຍົກທ່ານໃຫ້ສາມີໃດ ທ່ານຕ້ອງຕື່ນກ່ອນນອນພາຍຫຼັງສາມີນັ້ນ ຄອຍຖ້າຮັບໃຊ້ປະຕິບັດໃຫ້ເປັນທີ່ພໍໃຈເຂົາ ເວົ້າຄຳໄພເລາະຕໍ່ເຂົາ

ຯລຯ

໘. ທ່ານເປັນຜູ້ມີຈາຄະ ຄື ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ

ນະກຸລະມາຕາ ມາຕຸຄາມປະກອບດ້ວຍທຳ ໘ ປະການນີ້ແລ ຫຼັງຈາກຕາຍແລ້ວຍ່ອມໄປເກີດຮ່ວມກັບເທວະດາເຫຼົ່າມະນາປະກາຍິກາ"

ສະຕີຜູ້ເປັນບັນດິດ ຍ່ອມບໍ່ດູໝິ່ນສາມີ
ຜູ້ມີຄວາມພຽນ ຂົນຂວາຍເປັນນິດ
ລ້ຽງຕົນເອງທຸກເມື່ອ ຜູ້ໃຫ້ສິ່ງທີ່ຕ້ອງການໄດ້ທຸກຢ່າງ
ບໍ່ເຮັດໃຫ້ສາມີຊຸ່ນເຄືອງດ້ວຍການສະແດງຄວາມຫຶງຫວງ
ຍົກຍ້ອງທຸກຄົນທີ່ສາມີເຄົາລົບ ເປັນຄົນຂະຫຍັນ ບໍ່ຂີ້ຄ້ານ

ສົງເຄາະຄົນຂ້າງຄຽງຂອງສາມີ
ປະຕິບັດຖືກໃຈສາມີ ຮັກສາຊັບທີ່ສາມີຫາມາໄດ້
ສະຕີຜູ້ຍັງປະພຶດຕາມໃຈສາມີຢູ່ຢ່າງນີ້
ຈະເຂົ້າເຖິງຄວາມເປັນເທວະດາເຫຼົ່າມະນາປະກາຍິກາ

**ນະກຸລະມາຕາສູດທີ ໙ ຈົບ**

# ໑. ປະຖະມະອິທະໂລກິກະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອໄຊຊະນະໃນໂລກນີ້ ສູດທີ ໑

[໔໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ ຜາສາດຂອງນາງວິສາຂາ ມີຄາຣະມາຕາໃນບຸບພາຣາມ ເຂດເມືອງສາວັດຖີ ຄັ້ງນັ້ນ ນາງວິສາຂາມີຄາຣະມາຕາເຂົ້າໄປ ເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຯລຯ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

"ວິສາຂາ ມາຕຸຄາມປະກອບດ້ວຍທຳ ໔ ປະການ ຊື່ວ່າ ເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກນີ້ ຜາຈົບໂລກນີ້ ທຳ ໔ ປະການ ອັນໃດແດ່ ຄື

ມາຕຸຄາມໃນໂລກນີ້

໑. ຈັດການງານດີ
໒. ສົງເຄາະຄົນຂ້າງຄຽງ
໓. ປະຕິບັດຖືກໃຈສາມີ
໔. ຮັກສາຊັບທີ່ສາມີຫາມາໄດ້

ມາຕຸຄາມຜູ້ຈັດການງານດີ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ເປັນຄົນຂະຫຍັນ ບໍ່ຂີ້ຄ້ານໃນວຽກງານພາຍໃນເຮືອນສາມີ ຄື ການຕ່ຳແຜ່ນຂົນສັດ ຫຼື ຜ້າຝ້າຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍ ໃນວຽກງານເຫຼົ່ານັ້ນ ສາມາດເຮັດ ສາມາດຈັດໄດ້ ມາຕຸຄາມຜູ້ຈັດການງານດີ ເປັນແນວນີ້ແລ

ມາຕຸຄາມຜູ້ສົງເຄາະຄົນຂ້າງຄຽງ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ຮູ້ຈັກວຽກງານທີ່ຄົນໃນເຮືອນສາມີ ຄື ທາດ ຄົນໃຊ້ ຫຼື ກຳມະກອນວ່າເຮັດແລ້ວ ຫຼື ຍັງບໍ່ໄດ້ເຮັດ ຮູ້ອາການຂອງຄົນເຫຼົ່ານັ້ນທີ່ເປັນໄຂ້ວ່າດີຂຶ້ນຫຼືຊຸດລົງ ແລະແບ່ງປັນຂອງກິນຂອງໃຊ້ໃຫ້ຕາມສ່ວນທີ່ຄວນ ມາຕຸຄາມຜູ້ສົງເຄາະຄົນຂ້າງຄຽງ ເປັນແນວນີ້ແລ

ມາຕຸຄາມປະຕິບັດຖືກໃຈສາມີ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ບໍ່ລ່ວງລະເມີດສິ່ງທີ່ ບໍ່ເປັນທີ່ພໍໃຈຂອງສາມີ ແມ່ນເພາະເຫດແຫ່ງຊີວິດ ມາຕຸຄາມປະຕິບັດຖືກໃຈສາມີ ເປັນແນວນີ້ແລ

ມາຕຸຄາມຮັກສາຊັບທີ່ສາມີຫາມາໄດ້ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ຮັກສາຄຸ້ມຄອງສິ່ງທີ່ ສາມີຫາມາໄດ້ ເປັນຊັບ ເຂົ້າ ເງິນ ຫຼື ຄຳກໍຕາມ ບໍ່ເປັນນັກເລງການພະນັນ ບໍ່ເປັນຂະໂມຍ ບໍ່ເປັນນັກເລງສຸຣາ ບໍ່ຜານຊັບສົມບັດ ມາຕຸຄາມຮັກສາຊັບທີ່ສາມີຫາມາໄດ້ ເປັນແນວນີ້ແລ

ວິສາຂາ ມາຕຸຄາມປະກອບດ້ວຍທຳ ໔ ປະການນີ້ແລ ຊື່ວ່າ ເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກນີ້ ຜາຣົບໂລກນີ້

ວິສາຂາ ມາຕຸຄາມປະກອບດ້ວຍທຳ ໔ ປະການ ຊື່ວ່າເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກໜ້າ ຜາຣົບໂລກໜ້າ ທຳ ໔ ປະການ ອັນໃດແດ່ ຄື

ມາຕຸຄາມໃນໂລກນີ້

໑. ເຖິງພ້ອມດ້ວຍສັດທາ
໒. ເຖິງພ້ອມດ້ວຍສີນ
໓. ເຖິງພ້ອມດ້ວຍຈາຄະ
໔. ເຖິງພ້ອມດ້ວຍປັນຍາ

ມາຕຸຄາມຜູ້ເຖິງພ້ອມດ້ວຍສັດທາ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ເປັນຜູ້ມີສັດທາ ເຊື່ອປັນຍາຕັດສະຣູ້ຂອງຕະຖາຄົດວ່າ “ແມ່ນເພາະ ເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ”

ມາຕຸຄາມຜູ້ເຖິງພ້ອມດ້ວຍສັດທາ ເປັນແນວນີ້ແລ

ມາຕຸຄາມຜູ້ເຖິງພ້ອມດ້ວຍສີນ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ມາຕຸຄາມຜູ້ເຖິງພ້ອມດ້ວຍສີນ ເປັນແນວນີ້ແລ

ມາຕຸຄາມຜູ້ເຖິງພ້ອມດ້ວຍຈາຄະ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານ ຢູ່ຄອງເຮືອນ ມາຕຸຄາມຜູ້ເຖິງພ້ອມດ້ວຍຈາຄະ ເປັນແນວນີ້ແລ

ມາຕຸຄາມຜູ້ເຖິງພ້ອມດ້ວຍປັນຍາ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ມາຕຸຄາມຜູ້ເຖິງພ້ອມດ້ວຍປັນຍາ ເປັນແນວນີ້ແລ

ວິສາຂາ ມາຕຸຄາມປະກອບດ້ວຍທຳ ໔ ປະການນີ້ ຊື່ວ່າເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກໜ້າ ຜາຮິບໂລກໜ້າ”

ພັນລະຍາເປັນຜູ້ຈັດການງານດີ
ສົງເຄາະຄົນຂ້າງຄຽງ ປະຕິບັດຖືກໃຈສາມີ
ຮັກສາຊັບທີ່ສາມີຫາມາໄດ້
ເປັນຜູ້ມີສັດທາ ເຖິງພ້ອມດ້ວຍສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຊຳຣະທາງແຫ່ງປະໂຫຍດທີ່ມີຢູ່ໃນຊາດໜ້າຢູ່ເປັນນິດ
ທຳ ໘ ປະການດັ່ງກ່າວມານີ້ ມີຢູ່ແກ່ສະຕີໃດ
ສະຕີນັ້ນ ນັກປາດທັງຫຼາຍຮຽກວ່າ
“ຜູ້ມີສີນ ຕັ້ງຢູ່ໃນທຳ ກ່າວຄຳສັດ”
ອຸປາສິກາເຊັ່ນນັ້ນຜູ້ເຖິງພ້ອມດ້ວຍອາການ ໑໖ ຢ່າງ
ປະກອບດ້ວຍອົງ ໘ ປະການ ເປັນຜູ້ມີສີນ
ຍ່ອມເກີດໃນເທວະໂລກຊື່ວ່າມະນາປະກາຍິກະ

**ປະຖະມະອິທະໂລກິກະສູດທີ ໗ ຈົບ**

# ໑໐. ທຸຕິຍະອິທະໂລກິກະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອໄຊຊະນະໃນໂລກນີ້ ສູດທີ ໘

[໕໐] ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໔ ປະການ ຊື່ວ່າເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກນີ້ ຜາຣິບໂລກນີ້ ທຳ ໔ ປະການ ອັນໃດແດ່ ຄື

ມາຕຸຄາມໃນໂລກນີ້

໑. ຈັດການງານດີ
໒. ສົງເຄາະຄົນຂ້າງຄຽງ
໓. ປະຕິບັດຖືກໃຈສາມີ
໔. ຮັກສາຊັບທີ່ສາມີຫາມາໄດ້

ມາຕຸຄາມຜູ້ຈັດການງານດີ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ເປັນຄົນຂະຫຍັນ ບໍ່ຂີ້ຄ້ານໃນວຽກງານພາຍໃນເຮືອນສາມີ ຯລຯ ມາຕຸຄາມຜູ້ຈັດການງານດີ ເປັນແນວນີ້ແລ

ມາຕຸຄາມຜູ້ສົງເຄາະຄົນຂ້າງຄຽງ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ຮູ້ຈັກວຽກງານທີ່ຄົນໃນເຮືອນສາມີ ຯລຯ ມາຕຸຄາມຜູ້ສົງເຄາະຄົນຂ້າງຄຽງ ເປັນແນວນີ້ແລ

ມາຕຸຄາມປະຕິບັດຖືກໃຈສາມີ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ບໍ່ລ່ວງລະເມີດສິ່ງທີ່ ບໍ່ເປັນທີ່ພໍໃຈຂອງສາມີ ແມ່ນເພາະເຫດແຫ່ງຊີວິດ ມາຕຸຄາມປະຕິບັດຖືກໃຈສາມີ ເປັນແນວນີ້ແລ

ມາຕຸຄາມຮັກສາຊັບທີ່ສາມີຫາມາໄດ້ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ຮັກສາຄຸ້ມຄອງສິ່ງທີ່ສາມີຫາມາໄດ້ ຯລຯ ມາຕຸຄາມຮັກສາຊັບທີ່ສາມີຫາມາໄດ້ ເປັນແນວນີ້ແລ

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໔ ປະການນີ້ ຊື່ວ່າເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກນີ້ ຜາຣິບໂລກນີ້

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໔ ປະການ ຊື່ວ່າເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກໜ້າ ຜາຣິບໂລກໜ້າ ທຳ ໔ ປະການ ອັນໃດແດ່ ຄື

ມາຕຸຄາມໃນໂລກນີ້

໑. ເຖິງພ້ອມດ້ວຍສັດທາ

໒. ເຖິງພ້ອມດ້ວຍສີນ

໓. ເຖິງພ້ອມດ້ວຍຈາຄະ

໔. ເຖິງພ້ອມດ້ວຍປັນຍາ

ມາຕຸຄາມຜູ້ເຖິງພ້ອມດ້ວຍສັດທາ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ ເປັນຜູ້ມີສັດທາ ຯລຯ ມາຕຸຄາມຜູ້ເຖິງພ້ອມດ້ວຍສັດທາ ເປັນແນວນີ້ແລ

ມາຕຸຄາມຜູ້ເຖິງພ້ອມດ້ວຍສີນ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ມາຕຸຄາມຜູ້ເຖິງພ້ອມດ້ວຍສີນ ເປັນແນວນີ້ແລ

ມາຕຸຄາມຜູ້ເຖິງພ້ອມດ້ວຍຈາຄະ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ຯລຯ ມາຕຸຄາມຜູ້ເຖິງພ້ອມດ້ວຍຈາຄະ ເປັນແນວນີ້ແລ

ມາຕຸຄາມຜູ້ເຖິງພ້ອມດ້ວຍປັນຍາ ເປັນແນວໃດ?

ຄື ມາຕຸຄາມໃນໂລກນີ້ເປັນຜູ້ມີປັນຍາ ຯລຯ ມາຕຸຄາມຜູ້ເຖິງພ້ອມດ້ວຍປັນຍາ ເປັນແນວນີ້ແລ

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໔ ປະການນີ້ແລ ຊື່ວ່າ ເປັນຜູ້ປະຕິບັດເພື່ອໄຊຊະນະໃນໂລກໜ້າ ຜາຣົບໂລກໜ້າ

ພັນລະຍາເປັນຜູ້ຈັດການງານດີ
ສົງເຄາະຄົນຂ້າງຄຽງ ປະຕິບັດຖືກໃຈສາມີ
ຮັກສາຊັບທີ່ສາມີຫາມາໄດ້
ເປັນຜູ້ມີສັດທາ ເຖິງພ້ອມດ້ວຍສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຊຳຣະທາງແຫ່ງປະໂຫຍດທີ່ມີຢູ່ໃນຊາດໜ້າຢູ່ເປັນນິດ
ທຳ ໘ ປະການດັ່ງກ່າວມານີ້ ມີຢູ່ແກ່ສະຕີໃດ

ສະຕິນັ້ນ ນັກປາດທັງຫຼາຍຮຽກວ່າ
"ຜູ້ມີສີນ ຕັ້ງຢູ່ໃນທໍາ ກ່າວຄໍາສັດ"
ອຸປາສິກາເຊັ່ນນັ້ນຜູ້ເຖິງພ້ອມດ້ວຍອາການ ໑໖ ຢ່າງ
ປະກອບດ້ວຍອົງ ໘ ປະການ ເປັນຜູ້ມີສີນ
ຍ່ອມເກີດໃນເທວະໂລກຊື່ວ່າມະນາປະກາຍິກະ

**ທຸຕິຍະອິທະໂລກິກະສູດທີ ໑໐ ຈົບ**

**ອຸໂປສະຖະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ປະຖະມະປັນນາດ ຈົບ**

# ໔. ທຸຕິຍະປັນນາດ

## ໑. ໂຄຕະມີວັກ

### ໝວດວ່າດ້ວຍພຣະນາງປະຊາບໍດີໂຄຕະມີ

## ໑. ໂຄຕະມີສູດ

### ວ່າດ້ວຍພຣະນາງປະຊາບໍດີໂຄຕະມີທູນຂໍອຸປະສົມບົດ

[໕໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວັ້ນສັກກະ ຄັ້ງນັ້ນແລ ພຣະນາງມະຫາປະຊາບໍດີໂຄຕະມີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ ປະທັບ ຖວາຍອະພິວາດແລ້ວ ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂໍປະທານອະໂຣກາດ ມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ໂຄຕະມີ ທ່ານຢ່າພໍໃຈການທີ່ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດ ໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ແມ່ນຄັ້ງທີ ໒ ພຣະນາງມະຫາປະຊາບໍດີໂຄຕະມີກໍຂາບທູນວ່າ ຂໍປະທານອະໂຣກາດ ມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນ ທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ໂຄຕະມີ ທ່ານຢ່າພໍໃຈການທີ່ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ແມ່ນຄັ້ງທີ ໓ ພຣະນາງມະຫາປະຊາບໍດີໂຄຕະມີກໍຂາບທູນວ່າ "ຂໍປະທານອະໂຣກາດ ມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນ ທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ໂຄຕະມີ ທ່ານຢ່າພໍໃຈການທີ່ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ລຳດັບນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີຊົງດຳຣິວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດ ໃຫ້ມາຕຸຄາມໄດ້ອອກຈາກເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້" ຊົງເປັນທຸກ ເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ກັນແສງຢູ່ ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ຊົງທຳປະທັກຂິນແລ້ວສະເດັດຈາກໄປ

ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ເຂດເມືອງກະບິນລະພັດຕາມພະປະສົງແລ້ວ ສະເດັດຈາຣິກໄປທາງເມືອງເວສາລີ ສະເດັດຈາຣິກໄປໂດຍລຳດັບຈົນເຖິງເມືອງເວສາລີ ໃນທີ່ນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ

ເວລານັ້ນ ພຣະນາງມະຫາປະຊາບໍດີໂຄຕະມີຊົງປົງພຣະເກສາ ຊົງນຸ່ງຜ້າກາສາຍະ ສະເດັດໄປທາງເມືອງເວສາລີພ້ອມດ້ວຍນາງສາກິຍານີຈຳນວນຫຼາຍ ສະເດັດເຂົ້າໄປສູ່ກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີໂດຍລຳດັບ ເວລານັ້ນ ພຣະນາງມະຫາປະຊາບໍດີໂຄຕະມີມີພຣະ ບາດຣະບົມ ພຣະວໍຣະກາຍເປິເປື້ອນຝຸ່ນທຸລີ ເປັນທຸກ ເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບຢືນກັນແສງຢູ່ພາຍນອກຊຸ້ມປະຕູ

ທ່ານພຣະອານົນໄດ້ເຫັນພຣະນາງມະຫາປະຊາບໍດີໂຄຕະມີ ມີພຣະບາດຣະບົມ ພຣະວໍຣະກາຍ ເປິເປື້ອນຝຸ່ນທຸລີ ເປັນທຸກ ເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບຢືນກັນແສງຢູ່ທີ່ພາຍນອກຊຸ້ມປະຕູ ຈຶ່ງຖາມພຣະນາງມະຫາປະຊາບໍດີໂຄຕະມີວ່າ "ພຣະນາງໂຄຕະມີ ເພາະເຫດໃດ ພຣະອົງຈຶ່ງມີພຣະບາດຣະບົມ ພຣະວໍຣະກາຍເປິເປື້ອນຝຸ່ນທຸລີ ເປັນທຸກ ເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບຢືນກັນແສງຢູ່ທີ່ພາຍນອກຊຸ້ມປະຕູ"

ພຣະນາງມະຫາປະຊາບໍດີໂຄຕະມີຕັດຕອບວ່າ "ທ່ານອານົນຜູ້ຈະເລີນ ທີ່ເປັນເຊັ່ນນັ້ນ ເພາະພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດ ໃຫ້ມາຕຸຄາມໄດ້ອອກຈາກເຮືອນບວດເປັນບັນພະຊິດໃນ ພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້"

ທ່ານພຣະອານົນກ່າວວ່າ "ພຣະນາງໂຄຕະມີ ຖ້າເຊັ່ນນັ້ນຂໍພຣະອົງຈົ່ງຖ້າຢູ່ກ່ອນຈົນກວ່າ ອາຕະມາຈະທູນຂໍພຣະຜູ້ມີພຣະພາກເຈົ້າ ໃຫ້ມາຕຸຄາມໄດ້ອອກຈາກເຮືອນບວດເປັນບັນພະຊິດໃນ ພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້"

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະນາງມະຫາປະຊາບໍດີໂຄຕະມີນີ້ ມີພຣະບາດຣະບົມ ພຣະວໍຣະກາຍ ເປິເປື້ອນຝຸ່ນທຸລີ ເປັນທຸກ ເສຍພຣະທະໄທ ນ້ຳພຣະເນດນອງພຣະພັກ ປະທັບ

ຢືນ ກັນແສງຢູ່ທີ່ພາຍນອກຊຸ້ມປະຕູ ເພາະພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດ ໃຫ້ມາຕຸຄາມໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນ ທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ຂໍປະທານອະໂຣກາດ ຂໍມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນ ທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ອານົນ ທ່ານຢ່າພໍໃຈການທີ່ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ແມ່ນຄັ້ງທີ ໒ ຯລຯ

ແມ່ນຄັ້ງທີ ໓ ທ່ານພຣະອານົນກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍປະທານອະໂຣກາດ ຂໍມາຕຸຄາມເພິ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດ ຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ອານົນ ທ່ານຢ່າພໍໃຈການທີ່ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ເລີຍ"

ລຳດັບນັ້ນ ທ່ານພຣະອານົນໄດ້ມີຄວາມດຳຣິວ່າ "ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ທາງທີ່ດີເຮົາຄວນທູນຂໍພຣະຜູ້ມີພຣະພາກເຈົ້າ ໃຫ້ມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໄດ້ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ດ້ວຍອຸບາຍບາງຢ່າງດີກວ່າ"

ຄັ້ງນັ້ນ ທ່ານພຣະອານົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງ ຜູ້ຈະເລີນ ເມື່ອມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ຈະສາມາດເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນໄດ້ຫຼືບໍ່?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ມາຕຸຄາມອອກຈາກເຮືອນບວດເປັນ ບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ ສາມາດເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາ ມິຜົນ ຫຼື ອະຣະຫັດຕະຜົນໄດ້"

ທ່ານພຣະອານົນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຖ້າມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນ ທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ ສາມາດເຮັດໃຫ້ແຈ້ງໂສດາປັດຕິຜົນ ຯລຯ ຫຼື ອະຣະຫັດຕະຜົນໄດ້ ພຣະນາງມະຫາປະຊາບໍດີໂຄຕະມີເປັນພຣະມາ

ຕຸດສາຂອງພຣະຜູ້ມີພຣະພາກເຈົ້າ ຊົງມີອຸປະກາຣະຫຼາຍ ເຄີຍປະຄັບປະຄອງເບິ່ງແຍງຖວາຍເຂົ້າປ້ອນນ້ຳນົມເມື່ອພຣະຊົນນະນີສະຫວັນນະຄົດ ຂໍປະທານວະໂຣກາດ ຂໍມາຕຸຄາມເພື່ອໄດ້ອອກຈາກເຮືອນບວດເປັນບັນພະຊິດໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດໄວ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ຖ້າມະຫາປະຊາບໍດີໂຄຕະມີຮັບຄະຣຸທຳ ໘ ປະການນີ້ໄດ້ ການຮັບຄະຣຸທຳນັ້ນ ເປັນການອຸປະສົມບົດຂອງນາງ ຄື

໑. ພິກຂຸນີເຖິງຈະບວດໄດ້ ໑໐໐ ພັນສາ ກໍຕ້ອງທຳການຂາບໄຫວ້ ການຕ້ອນຮັບ ການກະທຳອັນຊະລີກຳ ການເຮັດສາມີຈິກຳ ແກ່ພິກຂຸຜູ້ບວດແມ່ນໃນວັນນັ້ນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໒. ພິກຂຸນີບໍ່ເພິ່ງຢູ່ຈຳພັນສາໃນອາວາດທີ່ບໍ່ມີພິກຂຸ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໓. ພິກຂຸນີເພິ່ງຫວັງທຳ ໒ ຢ່າງ ຄື ຖາມອຸໂປສົດ ແລະໄປຮັບໂອວາດຈາກພິກຂຸສົງທຸກເຄິ່ງເດືອນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໔. ພິກຂຸນີຈຳພັນສາແລ້ວເພິ່ງປະວາຣະນາໃນສົງ ໒ ຝ່າຍ ໂດຍສະຖານ ໓ ຄື ໄດ້ເຫັນ ໄດ້ຟັງ ຫຼື ໄດ້ນຶກສົງໄສ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໕. ພິກຂຸນີຕ້ອງຄະຣຸທຳແລ້ວເພິ່ງປະພຶດປັກຂະມານັດໃນສົງ ໒ ຝ່າຍ ທຳ ຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໖. ພິກຂຸນີເພິ່ງສະແຫວງຫາການອຸປະສົມບົດໃນສົງ ໒ ຝ່າຍໃຫ້ແກ່ນາງສິກຂະມານາ ທີ່ສຶກສາທຳ ໖ ຂໍ້ ຕະຫຼອດ ໒ ປີແລ້ວ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໗. ພິກຂຸນີບໍ່ເພິ່ງດ່າ ບໍ່ເພິ່ງບໍຣິພາດພິກຂຸ ບໍ່ວ່າກໍຣະນີໃດ ໆ ທຳຂໍ້ນີ້ພິກຂຸນີ ເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໘. ຕັ້ງແຕ່ວັນນີ້ເປັນຕົ້ນໄປ ຫ້າມພິກຂຸນີສັ່ງສອນພິກຂຸ ແຕ່ບໍ່ຫ້າມພິກຂຸສັ່ງສອນພິກຂຸນີ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

ອານົນ ຖ້າມະຫາປະຊາບໍດີໂຄຕະມີຮັບຄະຣຸທຳ ໘ ປະການນີ້ໄດ້ ການຮັບຄະຣຸທຳນັ້ນເປັນການອຸປະສົມບົດຂອງທ່ານ"

ລຳດັບນັ້ນ ທ່ານພຣະອານົນຮຽນຄະຣຸທຳ ໘ ປະການນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ເຂົ້າໄປຫາພຣະນາງມະຫາປະຊາບໍດີໂຄຕະມີເຖິງທີ່ປະທັບ ແລ້ວກ່າວກັບພຣະນາງມະຫາປະຊາບໍດີໂຄຕະມີດັ່ງນີ້ວ່າ

"ພຣະນາງໂຄຕະມີ ຖ້າພຣະອົງຮັບຄະຣຸທຳ ໘ ປະການໄດ້ ການຮັບຄະຣຸທຳນັ້ນຈັກເປັນການອຸປະສົມບົດຂອງພຣະອົງ ຄື

໑. ພິກຂຸນີເຖິງຈະບວດໄດ້ ໑໐໐ ພັນສາ ກໍຕ້ອງທຳການຂາບໄຫວ້ ການຕ້ອນຮັບ ການກະທຳອັນຊະລີກຳ ການເຮັດສາມີຈິກຳແກ່ພິກຂຸຜູ້ບວດແມ່ນໃນວັນນັ້ນ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

໗ລ໗

໘. ຕັ້ງແຕ່ວັນນີ້ເປັນຕົ້ນໄປ ຫ້າມພິກຂຸນີສັ່ງສອນພິກຂຸ ແຕ່ບໍ່ຫ້າມພິກຂຸສັ່ງສອນພິກຂຸນີ ທຳຂໍ້ນີ້ພິກຂຸນີເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາ ບໍ່ເພິ່ງລ່ວງລະເມີດຈົນຕະຫຼອດຊີວິດ

ພຣະນາງໂຄຕະມີ ຖ້າພຣະອົງຮັບຄະຣຸທຳ ໘ ປະການໄດ້ ການຮັບຄະຣຸທຳນັ້ນແລ ຈັກເປັນການອຸປະສົມບົດຂອງພຣະອົງ"

ພຣະນາງມະຫາປະຊາບໍດີໂຄຕະມີຕັດຕອບວ່າ "ທ່ານອານົນຜູ້ຈະເລີນ ຂ້ານ້ອຍ ຂໍນ້ອມຮັບ ຄະຣຸທຳ ໘ ປະການນີ້ ບໍ່ລ່ວງລະເມີດຈົນຕະຫຼອດຊີວິດ ປຽບເໝືອນຍິງສາວ ຫຼື ຊາຍໜຸ່ມຜູ້ມັກແຕ່ງກາຍເມື່ອອາບນ້ຳດຳຫົວແລ້ວ ໄດ້ພວງດອກອຸບົນ ພວງດອກມະລິ ຫຼື ພວງດອກລຳດວນແລ້ວ ກໍໃຊ້ມືທັງສອງປະຄອງຮັບໄວ້ເໜືອຫົວ"

ຕໍ່ມາ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ພຣະນາງມະຫາປະຊາບໍດີໂຄຕະມີຊົງຮັບຄະຣຸທຳ ໘ ປະການແລ້ວ ຈະບໍ່ລ່ວງລະເມີດຈົນຕະຫຼອດຊີວິດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າມາຕຸຄາມຈະບໍ່ອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ ພົມມະຈັນກໍຈະດຳຣົງຢູ່ໄດ້ນານ ສັດທຳຈະດຳຣົງຢູ່ໄດ້ ໑,໐໐໐ ປີ ແຕ່ເພາະມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນທີ່ຕະຖາຄົດປະກາດໄວ້ ບັດນີ້ ພົມມະຈັນຈະດຳຣົງຢູ່ໄດ້ບໍ່ດົນ ທັງສັດທຳ ຈະດຳຣົງຢູ່ໄດ້ພຽງ ໕໐໐ ປີ"

ທຳວິໄນທີ່ມີມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດ ຈະດຳຣົງຢູ່ໄດ້ບໍ່ດົນປຽບເໝືອນຕະກູນໜຶ່ງທີ່ມີສະຕີຫຼາຍ ມີບຸຣຸດໜ້ອຍ ຈະຖືກໂຈນປຸ້ນຊັບທຳຮ້າຍໄດ້ງ່າຍ

ທຳວິໄນທີ່ມີມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດ ຈະດຳຣົງຢູ່ໄດ້ບໍ່ດົນປຽບເໝືອນ ໜອນຂະຍອກທີ່ລົງໃນນາເຂົ້າສາລີເຊິ່ງອຸດົມສົມບູນ ກໍເຮັດໃຫ້ນາເຂົ້ານັ້ນ ຄົງຢູ່ໄດ້ບໍ່ດົນ

ທຳວິໄນທີ່ມີມາຕຸຄາມອອກຈາກເຮືອນບວດເປັນບັນພະຊິດ ຈະດຳຣົງຢູ່ໄດ້ບໍ່ດົນ ປຽບເໝືອນເພັຍທີ່ລົງໃນໄຮ່ອ້ອຍເຊິ່ງອຸດົມສົມບູນ ກໍເຮັດໃຫ້ໄຮ່ອ້ອຍນັ້ນຄົງຢູ່ໄດ້ບໍ່ດົນ

ອານົນ ເຮົາບັນຍັດຄະຣຸທຳ ໘ ປະການໄວ້ ເພື່ອບໍ່ໃຫ້ພິກຂຸນີລ່ວງລະເມີດຈົນຕະຫຼອດຊີວິດ ປຽບເໝືອນຄົນກັ້ນທຳນົບທີ່ສະໃຫຍ່ໄວ້ ເພື່ອປ້ອງກັນບໍ່ໃຫ້ນ້ຳໄຫຼອອກ ສະນັ້ນ

**ໂຄຕະມີສູດທີ ໑ ຈົບ**

# ໘. ໂອວາທະສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ຈະສອນພິກຂຸນີ

[໕໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸປະກອບດ້ວຍທຳເທົ່າໃດນໍ ສົງຈຶ່ງຄວນສົມມຸດໃຫ້ເປັນຜູ້ສັ່ງສອນພິກຂຸນີ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ພິກຂຸປະກອບດ້ວຍທຳ ໘ ປະການ ສົງຈຶ່ງຄວນສົມມຸດໃຫ້ເປັນຜູ້ສອນພິກຂຸນີ ທຳ ໘ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ
໓. ເປັນຜູ້ຊົງຈຳປາຕິໂມກທັງສອງໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ພິຈາລະນາໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ
໔. ເປັນຜູ້ມີວາຈາງາມ ເຈຣະຈາຖ້ອຍຄຳໄພເລາະ ປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ມີໂທດ ໃຫ້ຮູ້ຄວາມໝາຍໄດ້
໕. ເປັນຜູ້ສາມາດທີ່ຈະຊີ້ແຈ່ງໃຫ້ພິກຂຸນີສົງເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຮ່າເຣີງດ້ວຍທຳມີກະຖາ
໖. ເປັນທີ່ຮັກ ເປັນທີ່ພໍໃຈຂອງພິກຂຸນີໂດຍສ່ວນຫຼາຍ
໗. ເປັນຜູ້ບໍ່ເຄີຍປະພຶດລ່ວງຄະຣຸທຳ ໃນສະຕີຜູ້ນຸ່ງຫົ່ມຜ້າກາສາຍະບວດອຸທິດພຣະຜູ້ມີພຣະພາກເຈົ້າພຣະອົງນີ້
໘. ມີພັນສາ ໒໐ ຫຼື ເກີນ ໒໐

ອານົນ ພິກຂຸປະກອບດ້ວຍທຳ ໘ ປະການນີ້ ສົງຈຶ່ງຄວນສົມມຸດໃຫ້ເປັນຜູ້ສັ່ງສອນພິກຂຸນີ"

**ໂອວາທະສູດທີ່ ໒ ຈົບ**

# ໓. ສັງຂິດຕະສູດ

## ວ່າດ້ວຍລັກສະນະທຳວິໄນໂດຍຫຍໍ້

[໕໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ ຄັ້ງນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ໄດ້ຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າຊົງສະແດງທຳໂດຍຫຍໍ້ທີ່ເມື່ອຂ້ານ້ອຍຟັງແລ້ວ ຈະເພິ່ງເປັນຜູ້ຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂຄຕະມີ ທ່ານຮູ້ທຳເຫຼົ່າໃດວ່າ

໑. ທຳເຫຼົ່ານີ້ເປັນໄປເພື່ອຄວາມກຳໜັດ ບໍ່ເປັນໄປເພື່ອຄາຍຄວາມກຳໜັດ
໒. ທຳເຫຼົ່ານີ້ເປັນໄປເພື່ອຄວາມປະກອບໄວ້ ບໍ່ເປັນໄປເພື່ອຄວາມພາກ
໓. ທຳເຫຼົ່ານີ້ເປັນໄປເພື່ອການສະສົມ ບໍ່ເປັນໄປເພື່ອການບໍ່ສະສົມ
໔. ທຳເຫຼົ່ານີ້ເປັນໄປເພື່ອຄວາມມັກຫຼາຍ ບໍ່ເປັນໄປເພື່ອຄວາມມັກໜ້ອຍ
໕. ທຳເຫຼົ່ານີ້ເປັນໄປເພື່ອຄວາມບໍ່ສັນໂດດ ບໍ່ເປັນໄປເພື່ອຄວາມສັນໂດດ
໖. ທຳເຫຼົ່ານີ້ເປັນໄປເພື່ອຄວາມຄຸກຄີໝູ່ຄະນະ ບໍ່ເປັນໄປເພື່ອຄວາມສະຫງັດ
໗. ທຳເຫຼົ່ານີ້ເປັນໄປເພື່ອຄວາມຂີ້ຄ້ານ ບໍ່ເປັນໄປເພື່ອຜາຣົບຄວາມພຽນ
໘. ທຳເຫຼົ່ານີ້ເປັນໄປເພື່ອຄວາມເປັນຄົນລ້ຽງຍາກ ບໍ່ເປັນໄປເພື່ອຄວາມເປັນຄົນລ້ຽງງ່າຍ

ໂຄຕະມີ ທ່ານເພິ່ງຊົງຈຳທຳເຫຼົ່ານີ້ໄວ້ໂດຍສ່ວນດຽວວ່າ “ນັ້ນບໍ່ແມ່ນທຳ ນັ້ນບໍ່ແມ່ນວິໄນ ນັ້ນບໍ່ແມ່ນສັດຖຸສາດ”

ໂຄຕະມີ ທ່ານຮູ້ທຳເຫຼົ່າໃດ ວ່າ

໑. ທຳເຫຼົ່ານີ້ເປັນໄປເພື່ອຄາຍຄວາມກຳໜັດ ບໍ່ເປັນໄປເພື່ອຄວາມກຳໜັດ
໒. ທຳເຫຼົ່ານີ້ເປັນໄປເພື່ອຄວາມພາກ ບໍ່ເປັນໄປເພື່ອຄວາມປະກອບໄວ້
໓. ທຳເຫຼົ່ານີ້ເປັນໄປເພື່ອການບໍ່ສະສົມ ບໍ່ເປັນໄປເພື່ອການສະສົມ
໔. ທຳເຫຼົ່ານີ້ເປັນໄປເພື່ອຄວາມມັກໜ້ອຍ ບໍ່ເປັນໄປເພື່ອຄວາມມັກຫຼາຍ
໕. ທຳເຫຼົ່ານີ້ເປັນໄປເພື່ອຄວາມສັນໂດດ ບໍ່ເປັນໄປເພື່ອຄວາມບໍ່ສັນໂດດ
໖. ທຳເຫຼົ່ານີ້ເປັນໄປເພື່ອຄວາມສະຫງັດ ບໍ່ເປັນໄປເພື່ອຄວາມຄຸກຄີໝູ່ຄະນະ
໗. ທຳເຫຼົ່ານີ້ເປັນໄປເພື່ອຜາຣົບຄວາມພຽນ ບໍ່ເປັນໄປເພື່ອຄວາມຂີ້ຄ້ານ
໘. ທຳເຫຼົ່ານີ້ເປັນໄປເພື່ອຄວາມເປັນຄົນລ້ຽງງ່າຍ ບໍ່ເປັນໄປເພື່ອຄວາມເປັນຄົນລ້ຽງຍາກ

ໂຄຕະມີ ທ່ານເພິ່ງຊົງຈຳທຳເຫຼົ່ານີ້ໄວ້ໂດຍສ່ວນດຽວວ່າ “ນັ້ນເປັນທຳ ນັ້ນເປັນວິໄນ ນັ້ນເປັນສັດຖຸສາດ”

**ສັງຂິດຕະສູດທີ ໓ ຈົບ**

# ໔. ທີຄະຊານຸສູດ

## ວ່າດ້ວຍໂກລິຍະບຸດຊື່ວ່າທີຄະຊານຸ

[໕໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ນິຄົມຂອງຊາວໂກລິຍະຊື່ວ່າ ກັກກະຣະ ປັດຕະ ເຂດເມືອງໂກລິຍະ ຄັ້ງນັ້ນ ໂກລິຍະບຸດຊື່ວ່າ ທີຄະຊານຸໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພຣະອົງເປັນຄະລືຫັດ ເປັນການມໂພຄີ ຢູ່ຄອງເຮືອນ ນອນບຽດບຸດ ໃຊ້ຈັນຂອງຊາວກາສີ ທັດຊົງດອກໄມ້ ຂອງຫອມ ແລະເຄື່ອງລູບໄລ້ ຍິນດີຄຳ ແລະເງິນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳທີ່ຈະເພິ່ງເປັນໄປເພື່ອເກື້ອກູນໃນພົບນີ້ ເພື່ອສຸກໃນພົບນີ້ແລະເພື່ອເກື້ອກູນໃນພົບໜ້າເພື່ອສຸກໃນພົບໜ້າແກ່ຂ້າພຣະອົງທັງຫຼາຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພະຍັກຄະປັດຊະ ທຳ ໔ ປະການນີ້ ຍ່ອມເປັນໄປເພື່ອເກື້ອກູນໃນພົບນີ້ ເພື່ອສຸກໃນພົບນີ້ແກ່ກຸນລະບຸດ

ທຳ ໔ ປະການ ອັນໃດແດ່ ຄື

໑. ອຸດຖານະສຳປະທາ (ຄວາມເຖິງພ້ອມດ້ວຍຄວາມໝັ່ນ)
໔. ອາຣັກຂະສຳປະທາ (ຄວາມເຖິງພ້ອມດ້ວຍການຮັກສາ)
໓. ກັນລະຍານະມິດຕະຕາ (ຄວາມເປັນຜູ້ມີມິດດີ)
໔. ສະມະຊີວິຕາ (ຄວາມເປັນຢູ່ເໝາະສົມ)

ອຸດຖານະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ລ້ຽງຊີບດ້ວຍວຽກງານໃດ ຈະເປັນກະສິກຳ ພານິດຊະກຳ ໂຄຣັກຂະກຳ ເປັນຊ່າງສອນ ຮັບຣາດຊະການ ຫຼື ສິລະປະຢ່າງໃດຢ່າງໜຶ່ງກໍຕາມ ເປັນຜູ້ຂະຫຍັນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາ ອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ນີ້ຮຽກວ່າ ອຸດຖານະສຳປະທາ

ອາຣັກຂະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ມີໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບລວບລວມ ດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ເຂົາຮັກສາ ຄຸ້ມ

ຄອງໂພຄະຊັບນັ້ນດ້ວຍຄິດວ່າ “ເຮັດແນວໃດ ໂພຄະຊັບເຫຼົ່ານີ້ຂອງເຮົາ ຈຶ່ງຈະບໍ່ຖືກພຣະຣາຊາຍຶດ ໂຈນບໍ່ລັກ ໄຟບໍ່ໄໝ້ ນໍ້າບໍ່ພັດໄປ ທາຍາດຜູ້ບໍ່ເປັນທີ່ຮັກບໍ່ລັກໄປ” ນີ້ຮຽກວ່າ ອາຣັກຂະສໍາປະທາ

ກັນລະຍານະມິດຕະຕາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ວາງຕົວເໝາະສົມ ເຈຣະຈາ ສົນທະນາກັບຄົນໃນໝູ່ບ້ານຫຼືໃນນິຄົມທີ່ ຕົນອາໄສຢູ່ ຈະເປັນຄະຫະບໍດີ ບຸດຄະຫະບໍດີ ຄົນໜຸ່ມຜູ້ເຄັ່ງສິນ ຫຼືຄົນແກ່ຜູ້ເຄັ່ງສິນກໍຕາມ ຜູ້ເຖິງພ້ອມດ້ວຍສັດທາ ເຖິງພ້ອມດ້ວຍສິນ ເຖິງພ້ອມດ້ວຍຈາຄະ ແລະເຖິງພ້ອມດ້ວຍປັນຍາ ຄອຍຖ້າສຶກສາສັດທາສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍສັດທາຕາມສົມຄວນ ຄອຍຖ້າສຶກສາສິນສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍສິນຕາມສົມຄວນ ຄອຍຖ້າສຶກສາຈາຄະສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍຈາຄະຕາມສົມຄວນ ແລະຄອຍຖ້າສຶກສາປັນຍາສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍປັນຍາຕາມສົມຄວນ ນີ້ຮຽກວ່າ ກັນລະຍານະມິດຕະຕາ

ສະມະຊີວິຕາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ຮູ້ທາງຈະເລີນແຫ່ງໂພຄະຊັບ ແລະທາງເສື່ອມແຫ່ງໂພຄະຊັບແລ້ວ ລ້ຽງຊີບແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ “ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ” ປຽບເໝືອນຄົນຊັ່ງຂອງ ຫຼື ລູກມືຂອງຄົນຊັ່ງຂອງຍົກຊິງຊັ່ງຂຶ້ນເບິ່ງກໍຮູ້ໄດ້ວ່າ “ຕ້ອງລຸດລົງເທົ່ານີ້ ຫຼືເພີ່ມຂຶ້ນເທົ່ານີ້” ສັນໃດ ກຸນລະບຸດກໍສັນນັ້ນຄືກັນ ຮູ້ທາງຈະເລີນແຫ່ງໂພຄະຊັບ ແລະທາງເສື່ອມແຫ່ງໂພຄະຊັບແລ້ວລ້ຽງຊີບແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ “ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ” ຖ້າກຸນລະບຸດນີ້ມີຣາຍຮັບໜ້ອຍ ແຕ່ລ້ຽງຊີບຢ່າງຟຸ່ມເຟືອຍ ກໍຈະມີຜູ້ກ່າວຫາເຂົາໄດ້ວ່າ “ກຸນລະບຸດຜູ້ນີ້ໃຊ້ຈ່າຍໂພຄະຊັບ ເໝືອນຄົນກິນໝາກເດື່ອ” ຖ້າກຸນລະບຸດນີ້ມີຣາຍຮັບຫຼາຍ ແຕ່ລ້ຽງຊີບຢ່າງຝືດເຄືອງ ກໍຈະມີຜູ້ກ່າວຫາ ເຂົາໄດ້ວ່າ “ກຸນລະບຸດຜູ້ນີ້ຈັກຕາຍຢ່າງບໍ່ສົມຖານະ” ແຕ່ເພາະກຸນລະບຸດນີ້ຮູ້ທາງຈະເລີນແຫ່ງໂພຄະຊັບແລະທາງເສື່ອມແຫ່ງໂພຄະຊັບແລ້ວລ້ຽງຊີບແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ “ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ” ນີ້ຮຽກວ່າ ສະມະຊີວິຕາ

ພະຍັກຄະປັດຊະ ໂພຄະຊັບທີ່ເກີດຂຶ້ນໂດຍຊອບຢ່າງນີ້ ມີທາງເສື່ອມ ໔ ປະການ ຄື

໑. ເປັນນັກເລງແມ່ຍິງ
໒. ເປັນນັກເລງການພະນັນ
໓. ເປັນນັກເລງສຸຣາ
໔. ເປັນຜູ້ມີມິດຊົ່ວມີສະຫາຍຊົ່ວມີເພື່ອນຊົ່ວ

ປຽບເໝືອນສະນໍ້າໃຫຍ່ມີທາງໄຫຼເຂົ້າ ໔ ທາງ ມີທາງໄຫຼອອກ ໔ ທາງ ບຸຣຸດເພິ່ງປິດທາງໄຫຼເຂົ້າ ເປີດທາງໄຫຼອອກຂອງສະນໍ້ານັ້ນ ແລະຝົນກໍບໍ່ໄດ້ຕົກຕ້ອງຕາມລະດູການ ເມື່ອເປັນເຊັ່ນນີ້ ສະນໍ້າໃຫຍ່ນັ້ນກໍເຫືອດແຫ້ງໄປ ບໍ່ເພີ່ມປະລິມານຂຶ້ນເລີຍ ສັນໃດ ໂພຄະຊັບທີ່ເກີດຂຶ້ນໂດຍຊອບຢ່າງນີ້ ກໍສັນນັ້ນຄືກັນ ມີທາງເສື່ອມ ໔ ປະການ ຄື

໑. ເປັນນັກເລງແມ່ຍິງ ໓. ເປັນນັກເລງສຸຣາ
໒. ເປັນນັກເລງການພະນັນ ໔. ເປັນຜູ້ມີມິດຊົ່ວມີສະຫາຍຊົ່ວມີເພື່ອນຊົ່ວ

ພະຍັກຄະປັດຊະ ໂພຄະຊັບທີ່ເກີດຂຶ້ນໂດຍຊອບຢ່າງນີ້ ມີທາງຈະເລີນ ໔ ປະການ ຄື

໑. ບໍ່ເປັນນັກເລງແມ່ຍິງ ໓. ບໍ່ເປັນນັກເລງສຸຣາ
໒. ບໍ່ເປັນນັກເລງການພະນັນ ໔. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ

ປຽບເໝືອນສະນໍ້າໃຫຍ່ມີທາງໄຫຼເຂົ້າ ໔ ທາງ ມີທາງໄຫຼອອກ ໔ ທາງ ບຸຣຸດເພິ່ງເປີດທາງໄຫຼເຂົ້າ ປິດທາງໄຫຼອອກຂອງສະນໍ້ານັ້ນ ແລະຝົນກໍຕົກຕ້ອງຕາມລະດູການ ເມື່ອເປັນເຊັ່ນນີ້ ສະນໍ້າໃຫຍ່ນັ້ນກໍເພີ່ມປະລິມານຂຶ້ນ ບໍ່ເຫືອດແຫ້ງໄປເລີຍສັນໃດ ໂພຄະຊັບທີ່ເກີດຂຶ້ນໂດຍຊອບຢ່າງນີ້ ກໍສັນນັ້ນ ຄືກັນ ມີທາງຈະເລີນ ໔ ປະການ ຄື

໑. ບໍ່ເປັນນັກເລງແມ່ຍິງ ໓. ບໍ່ເປັນນັກເລງສຸຣາ
໒. ບໍ່ເປັນນັກເລງການພະນັນ ໔. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ

ພະຍັກຄະປັດຊະ ທຳ ໔ ປະການນີ້ແລ ຍ່ອມເປັນໄປເພື່ອເກື້ອກູນໃນພົບນີ້ ເພື່ອສຸກໃນພົບນີ້ແກ່ກຸນລະບຸດ

ພະຍັກຄະປັດຊະ ທຳ ໔ ປະການນີ້ ຍ່ອມເປັນໄປເພື່ອເກື້ອກູນໃນພົບໜ້າ ເພື່ອສຸກໃນພົບໜ້າແກ່ກຸນລະບຸດ ທຳ ໔ ປະການ ອັນໃດແດ່ ຄື

໑. ສັດທາສຳປະທາ ໓. ສີລະສຳປະທາ
໒. ຈາຄະສຳປະທາ ໔. ປັນຍາສຳປະທາ

ສັດທາສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ມີສັດທາ ເຊື່ອປັນຍາເຄື່ອງຕັດສະຣູ້ຂອງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ນີ້ຮຽກວ່າ ສັດທາສຳປະທາ

ສີລະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ສີລະສຳປະທາ

ຈາຄະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍຍິນດີໃນການແຈກທານຢູ່ຄອງເຮືອນ ນີ້ຮຽກວ່າ ຈາຄະສຳປະທາ

ປັນຍາສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ນີ້ຮຽກວ່າ ປັນຍາສຳປະທາ

ພະຍັກຄະປັດຊະ ທຳ ໔ ປະການນີ້ແລ ຍ່ອມເປັນໄປເພື່ອເກື້ອກູນໃນພົບໜ້າ ເພື່ອສຸກໃນພົບໜ້າແກ່ກຸນລະບຸດ

ຄົນຂະຫຍັນໝັ່ນພຽນໃນວຽກງານ
ບໍ່ຜະໝາດ ຮູ້ວິທີການລ້ຽງຊີບແຕ່ພໍເໝາະ
ຮັກສາຊັບທີ່ຫາມາໄດ້ ເປັນຜູ້ມີສັດທາ ເຖິງພ້ອມດ້ວຍສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຊຳຣະທາງແຫ່ງປະໂຫຍດທີ່ມີໃນພົບໜ້າຢູ່ເປັນນິດ
ທີ່ພຣະພຸດທະເຈົ້າຜູ້ມີພຣະນາມວ່າສັດຈະ ຕັດທຳ ໘ ປະການດັ່ງກ່າວມານີ້
ເພື່ອຜູ້ຄອງເຮືອນ ຜູ້ມີສັດທາ
ອັນເປັນເຫດນຳສຸກມາໃຫ້ໃນໂລກທັງ ໒ ຄື
ປະໂຫຍດເກື້ອກູນໃນພົບນີ້ ແລະສຸກໃນພົບໜ້າ
ຈາຄະ ບຸນນີ້ຍ່ອມຈະເລີນຍິ່ງຂຶ້ນ ແກ່ຄະລຶຫັດທັງຫຼາຍ ດ້ວຍປະການດັ່ງນີ້

**ທີຄະຊານຸສູດທີ ໔ ຈົບ**

# ໕. ອຸດຊະຍະສູດ

## ວ່າດ້ວຍອຸດຊະຍະພາມ

[໕໕] ຄັ້ງໜຶ່ງ ອຸດຊະຍະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບໄດ້ສົນທະນາ ປາໄສກັບພຣະຜູ້ມີພຣະພາກເຈົ້າ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ພວກຂ້າພຣະອົງຄິດຈະໄປຢູ່ຕ່າງຖິ່ນ ຂໍທ່ານພຣະໂຄດົມໂຜດສະແດງທຳທີ່ຈະອຳນວຍຜົນເພື່ອເກື້ອກູນໃນພົບນີ້ ເພື່ອສຸກໃນພົບນີ້ ເພື່ອເກື້ອກູນໃນພົບໜ້າເພື່ອສຸກໃນພົບໜ້າແກ່ພວກຂ້າພຣະອົງເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ທຳ ໔ ປະການນີ້ ຍ່ອມເປັນໄປເພື່ອເກື້ອກູນ ໃນພົບນີ້ ເພື່ອສຸກໃນພົບນີ້ແກ່ກຸນລະບຸດ

ທຳ ໔ ປະການ ອັນໃດແດ່ ຄື

໑. ອຸດຖານະສຳປະທາ
໒. ອາຣັກຂະສຳປະທາ
໓. ກັນລະຍານະມິດຕະຕາ
໔. ສະມະຊີວິຕາ

ອຸດຖານະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ລ້ຽງຊີບດ້ວຍວຽກງານໃດ ຈະເປັນກະສິກຳ ພານິດຊະກຳ ໂຄຣັກຂະກຳ ເປັນຊ່າງສອນ ຮັບຣາດຊະການ ຫຼື ສິລະປະຢ່າງໃດຢ່າງໜຶ່ງກໍຕາມ ເປັນຜູ້ຂະຫຍັນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາ ອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ນີ້ຮຽກວ່າ ອຸດຖານະສຳປະທາ

ອາຣັກຂະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ມີໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບລວບລວມ ດ້ວຍເຫື່ອແຮງ ອາບເຫື່ອຕາງນໍ້າ ປະກອບດ້ວຍທຳ ໄດ້ມາໂດຍທຳ ເຂົາຮັກສາຄຸ້ມຄອງໂພຄະຊັບນັ້ນດ້ວຍຄິດວ່າ "ເຮັດແນວໃດ ໂພຄະຊັບເຫຼົ່ານີ້ຂອງເຮົາ ຈຶ່ງຈະບໍ່ຖືກພຣະຣາຊາຢຶດ ໂຈນບໍ່ລັກ ໄຟບໍ່ ໄໝ້ ນໍ້າບໍ່ພັດໄປ ທາຍາດຜູ້ບໍ່ເປັນທີ່ຮັກບໍ່ລັກໄປ" ນີ້ຮຽກວ່າ ອາຣັກຂະສຳປະທາ

ກັນລະຍານະມິດຕະຕາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ອາງຕົວເໝາະສົມ ເຈຣະຈາ ສົນທະນາກັບຄົນໃນບ້ານ ຫຼື ໃນນິຄົມ ທີ່ຕົນອາໄສຢູ່ ຈະເປັນຄະຫະບໍດີ ບຸດຄະຫະບໍດີ ຄົນໜຸ່ມຜູ້ເຄົ່ງສິນ ຫຼື ຄົນແກ່ຜູ້ເຄົ່ງສິນກໍຕາມ ຜູ້ເຖິງພ້ອມດ້ວຍສັດທາ ເຖິງພ້ອມດ້ວຍສິນ ເຖິງພ້ອມດ້ວຍຈາຄະ ແລະເຖິງພ້ອມດ້ວຍປັນຍາ ຄອຍຖ້າສຶກສາສັດທາສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍສັດທາຕາມສົມຄວນ ຄອຍຖ້າສຶກສາສີລະສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍສິນຕາມສົມຄວນ ຄອຍຖ້າສຶກສາຈາຄະສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍຈາຄະຕາມສົມຄວນ ແລະຄອຍຖ້າສຶກສາປັນຍາສໍາປະທາຂອງທ່ານຜູ້ເຖິງພ້ອມດ້ວຍປັນຍາຕາມສົມຄວນ ນີ້ຮຽກວ່າ ກັນລະຍານະມິດຕະຕາ

ສະມະຊີວິຕາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ຮູ້ທາງຈະເລີນແຫ່ງໂພຄະຊັບແລະທາງເສື່ອມແຫ່ງໂພຄະຊັບແລ້ວ ລ້ຽງຊີວິດແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ "ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ" ປຽບເໝືອນຄົນຊັ່ງຂອງ ຫຼື ລູກມືຂອງຄົນຊັ່ງຂອງ ຍົກຊິງຊັ່ງຂຶ້ນເບິ່ງກໍຮູ້ໄດ້ວ່າ "ຕ້ອງລຸດລົງເທົ່ານີ້ ຫຼື ເພີ່ມຂຶ້ນເທົ່ານີ້" ສັນໃດ ກຸນລະບຸດ ກໍສັນນັ້ນຄືກັນ ຮູ້ທາງຈະເລີນແຫ່ງໂພຄະຊັບ ແລະທາງເສື່ອມແຫ່ງໂພຄະຊັບແລ້ວລ້ຽງຊີວິດແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ "ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ" ຖ້າກຸນລະບຸດນີ້ມີຣາຍຮັບໜ້ອຍ ແຕ່ລ້ຽງຊີວິດຢ່າງຟຸ່ມເຟືອຍ ກໍຈະມີຜູ້ກ່າວຫາເຂົາໄດ້ວ່າ "ກຸນລະບຸດຜູ້ນີ້ໃຊ້ຈ່າຍໂພຄະຊັບ ເໝືອນຄົນກິນໝາກເດື່ອ" ຖ້າກຸນລະບຸດນີ້ມີຣາຍຮັບຫຼາຍ ແຕ່ລ້ຽງຊີວິດຢ່າງຝືດເຄືອງ ກໍຈະມີຜູ້ກ່າວຫາເຂົາໄດ້ວ່າ "ກຸນລະບຸດນີ້ຈັກຕາຍຢ່າງບໍ່ສົມຖານະ" ແຕ່ເພາະກຸນລະບຸດນີ້ຮູ້ທາງຈະເລີນແຫ່ງໂພຄະຊັບ ແລະທາງເສື່ອມແຫ່ງໂພຄະຊັບແລ້ວລ້ຽງຊີວິດແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍ ດ້ວຍຄິດວ່າ "ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ" ນີ້ຮຽກວ່າ ສະມະຊີວິຕາ

ພາມ ໂພຄະຊັບທີ່ເກີດຂຶ້ນໂດຍຊອບຢ່າງນີ້ ມີທາງເສື່ອມ ໔ ປະການ ຄື

໑. ເປັນນັກເລງແມ່ຍິງ

໒. ເປັນນັກເລງການພະນັນ

໓. ເປັນນັກເລງສຸຣາ

໔. ເປັນຜູ້ມີມິດຊົ່ວມີສະຫາຍຊົ່ວມີເພື່ອນຊົ່ວ

ປຽບເໝືອນສະນ້ຳໃຫຍ່ມີທາງໄຫຼເຂົ້າ ໔ ທາງ ມີທາງໄຫຼອອກ ໔ ທາງ ບຸຣຸດເພິ່ງປິດທາງໄຫຼເຂົ້າ ເປີດທາງໄຫຼອອກຂອງສະນ້ຳນັ້ນ ແລະຝົນກໍບໍ່ໄດ້ຕົກຕ້ອງຕາມລະດູການ ເມື່ອເປັນ

ເຊັ່ນນີ້ ສະນ້ຳໃຫຍ່ນັ້ນກໍເຫືອດແຫ້ງໄປ ບໍ່ເພີ່ມປະລິມານຂຶ້ນເລີຍ ສັນໃດ ໂພຄະຊັບທີ່ເກີດຂຶ້ນໂດຍຊອບຢ່າງນີ້ກໍສັນນັ້ນຄືກັນ ມີທາງເສື່ອມ ໔ ປະການ ຄື

໑. ເປັນນັກເລງແມ່ຍິງ ໒. ເປັນນັກເລງສຸຣາ
໓. ເປັນນັກເລງການພະນັນ ໔. ເປັນຜູ້ມີມິດຊົ່ວມີສະຫາຍຊົ່ວມີເພື່ອນຊົ່ວ

ພາມ ໂພຄະຊັບທີ່ເກີດຂຶ້ນໂດຍຊອບຢ່າງນີ້ ມີທາງຈະເລີນ ໔ ປະການ ຄື

໑. ບໍ່ເປັນນັກເລງແມ່ຍິງ ໒. ບໍ່ເປັນນັກເລງສຸຣາ
໓. ບໍ່ເປັນນັກເລງການພະນັນ ໔. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ

ປຽບເໝືອນສະນ້ຳໃຫຍ່ມີທາງໄຫຼເຂົ້າ ໔ ທາງ ມີທາງໄຫຼອອກ ໔ ທາງ ບຸຣຸດເພິ່ງເປີດທາງໄຫຼເຂົ້າ ປິດທາງໄຫຼອອກຂອງສະນ້ຳນັ້ນ ແລະຝົນກໍຕົກຕ້ອງຕາມລະດູການ ເມື່ອເປັນເຊັ່ນນີ້ ສະນ້ຳໃຫຍ່ນັ້ນກໍເພີ່ມປະລິມານຂຶ້ນ ບໍ່ເຫືອດແຫ້ງໄປເລີຍ ສັນໃດໂພຄະຊັບ ທີ່ເກີດຂຶ້ນໂດຍຊອບຢ່າງນີ້ ກໍສັນນັ້ນຄືກັນ ມີທາງຈະເລີນ ໔ ປະການ ຄື

໑. ບໍ່ເປັນນັກເລງແມ່ຍິງ ໒. ບໍ່ເປັນນັກເລງສຸຣາ
໓. ບໍ່ເປັນນັກເລງການພະນັນ ໔. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ

ພາມ ທຳ ໔ ປະການນີ້ ຍ່ອມເປັນໄປເພື່ອເກື້ອກູນໃນພົບນີ້ ເພື່ອສຸກໃນພົບນີ້ແກ່ກຸນລະບຸດ

ພາມ ທຳ ໔ ປະການນີ້ ຍ່ອມເປັນໄປເພື່ອເກື້ອກູນໃນພົບໜ້າ ເພື່ອສຸກໃນພົບໜ້າແກ່ກຸນລະບຸດນັ້ນ ທຳ ໔ ປະການ ອັນໃດແດ່ ຄື

໑. ສັດທາສຳປະທາ ໒. ສີລະສຳປະທາ
໓. ຈາຄະສຳປະທາ ໔. ປັນຍາສຳປະທາ

ສັດທາສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ມີສັດທາ ເຊື່ອປັນຍາເຄື່ອງຕັດສະຮູ້ຂອງຕະຖາຄົດວ່າ “ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ” ນີ້ຮຽກວ່າ ສັດທາສຳປະທາ

ສີລະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ສີລະສຳປະທາ

ຈາຄະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝ່າມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານຢູ່ຄອງເຮືອນ ນີ້ຮຽກວ່າ ຈາຄະສຳປະທາ

ປັນຍາສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ມີປັນຍາ ຯລຯ ໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ນີ້ຮຽກວ່າ ປັນຍາສຳປະທາ

ພານ ທຳ ໔ ປະການນີ້ແລ ຍ່ອມເປັນໄປເພື່ອເກື້ອກູນໃນພົບໜ້າ ເພື່ອສຸກໃນພົບໜ້າແກ່ກຸນລະບຸດ

ຄົນຂະຫຍັນໝັ່ນພຽນໃນວຽກງານ
ບໍ່ຜະໝາດ ຮູ້ວິທີການລ້ຽງຊີວິດແຕ່ພໍເໝາະ
ຮັກສາຊັບທີ່ຫາມາໄດ້ ເປັນຜູ້ມີສັດທາ ເຖິງພ້ອມດ້ວຍສິນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຊຳຮະທາງແຫ່ງປະໂຫຍດທີ່ມີໃນພົບໜ້າຢູ່ເປັນນິດ
ທີ່ພຣະພຸດທະເຈົ້າຜູ້ມີພຣະນາມວ່າສັດຈະ ຕັດທຳ ໘ ປະການດັ່ງກ່າວມານີ້
ເພື່ອຜູ້ຄອງເຮືອນ ຜູ້ມີສັດທາ
ອັນເປັນເຫດນຳສຸກມາໃຫ້ໃນໂລກທັງ ໒ ຄື
ປະໂຫຍດເກື້ອກູນໃນພົບນີ້ ແລະສຸກໃນພົບໜ້າ
ຈາຄະ ບຸນຍ່ອມຈະເລີນຍິ່ງຂຶ້ນແກ່ຄະລືຫັດທັງຫຼາຍ ດ້ວຍປະການດັ່ງນີ້

**ອຸດຊະຍະສູດທີ ໕ ຈົບ**

# ໖. ພະຍະສູດ

## ວ່າດ້ວຍໄພເປັນຊື່ຂອງກາມ

[໕໖] ພິກຂຸທັງຫຼາຍ

໑. ຄຳວ່າ "ໄພ" ເປັນຊື່ຂອງກາມ
໒. ຄຳວ່າ "ທຸກ" ເປັນຊື່ຂອງກາມ
໓. ຄຳວ່າ "ໂຣກ" ເປັນຊື່ຂອງກາມ
໔. ຄຳວ່າ "ຝີ" ເປັນຊື່ຂອງກາມ

໕. ຄຳວ່າ "ລູກສອນ" ເປັນຊື່ຂອງກາມ
໖. ຄຳວ່າ "ເຄື່ອງຂ້ອງ" ເປັນຊື່ຂອງກາມ
໗. ຄຳວ່າ "ເປືອກຕົມ" ເປັນຊື່ຂອງກາມ
໘. ຄຳວ່າ "ການຢູ່ໃນທ້ອງ" ເປັນຊື່ຂອງກາມ

ຄຳວ່າ "ໄພ" ນີ້ເປັນຊື່ຂອງກາມ ເພາະເຫດໃດ?

ເພາະສັດໂລກຜູ້ຍິນດີດ້ວຍກາມຣາຄະ ຖືກສັນທະຣາຄະກ່ຽວພັນໄວ້ ຍ່ອມບໍ່ພົ້ນຈາກໄພທັງທີ່ ມີໃນພົບນີ້ ທັງທີ່ມີໃນພົບໜ້າ ສະນັ້ນ ຄຳວ່າ "ໄພ" ນີ້ ຈຶ່ງເປັນຊື່ຂອງກາມ

ຄຳວ່າ "ທຸກ" ຯລຯ ຄຳວ່າ "ໂຣກ" ຯລຯ ຄຳວ່າ "ຝີ" ຯລຯ ຄຳວ່າ "ລູກສອນ" ຯລຯ ຄຳວ່າ "ເຄື່ອງຂ້ອງ" ຯລຯ ຄຳວ່າ "ເປືອກຕົມ" ຯລຯ

ຄຳວ່າ "ການຢູ່ໃນທ້ອງ" ເປັນຊື່ຂອງກາມ ເພາະເຫດໃດ?

ເພາະສັດໂລກຜູ້ຍິນດີດ້ວຍກາມຣາຄະ ຖືກສັນທະຣາຄະກ່ຽວພັນໄວ້ ຍ່ອມບໍ່ພົ້ນຈາກການຢູ່ໃນທ້ອງທັງທີ່ ມີໃນພົບນີ້ ທັງທີ່ມີໃນພົບໜ້າ ສະນັ້ນ ຄຳວ່າ "ການຢູ່ໃນທ້ອງ" ນີ້ ຈຶ່ງເປັນຊື່ຂອງກາມ

ປຸຖຸຊົນຕົກຕ່ຳດ້ວຍຣາຄະອັນໜ້າຍິນດີ
ຍ່ອມເຂົ້າເຖິງຄວາມເປັນສັດເກີດໃນທ້ອງອີກເພາະກາມເຫຼົ່າໃດ
ກາມເຫຼົ່ານີ້ ຮຽກວ່າ ໄພ ທຸກ ໂຣກ ຝີ
ລູກສອນ ເຄື່ອງຂ້ອງ ເປືອກຕົມ ແລະການຢູ່ໃນທ້ອງ
ແຕ່ເມື່ອໃດ ພິກຂຸມີຄວາມພຽນເຜົາກິເລດ ບໍ່ລະສຳປະຊັນຍະ
ພິກຂຸຜູ້ເຊັ່ນນັ້ນກໍຂ້າມການເປັນເໝືອນທາງມື່ນ ທີ່ຂ້າມໄດ້ຍາກ
ເບິ່ງເຫັນໝູ່ສັດຜູ້ເຂົ້າເຖິງຊາດແລະຊະຣາ ດີ້ນຣົນຢູ່

**ພະຍະສູດທີ ໖ ຈົບ**

# ໗. ປະຖະມະອາຫຸເນີຍຍະສູດ

## ວ່າດ້ວຍອາຫຸໄນຍະບຸກຄົນ ສູດທີ ໑

[໕໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໙ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ
໓. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ
໔. ເປັນສຳມາທິດຖິ ປະກອບດ້ວຍຄວາມເຫັນຊອບ
໕. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໖. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດຢ່າງນີ້
໗. ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ຯລຯ
໘. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໙ ປະການນີ້ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ປະຖະມະອາຫຸເນີຍຍະສູດທີ ໗ ຈົບ**

# ໙. ທຸຕິຍະອາຫຸເນີຍຍະສູດ

## ວ່າດ້ວຍອາຫຸໄນຍະບຸກຄົນ ສູດທີ ໒

[໕໙] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໙ ປະການ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ທຳ ໙ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ
໓. ເປັນຜູ້ຜາຣົບຄວາມພຽນ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖິ້ມເປົາໃນກຸສົນທຳທັງຫຼາຍ

໔. ເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ອາໄສເສນາສະນະທີ່ ສະຫງັດ

໕. ເປັນຜູ້ອົດທົນຕໍ່ຄວາມຍິນຮ້າຍແລະຄວາມຍິນດີໄດ້ ຄອບງຳຄວາມຍິນຮ້າຍທີ່ເກີດຂຶ້ນໄດ້ຢູ່

໖. ເປັນຜູ້ອົດທົນຕໍ່ໄພທີ່ເປັນຕາຢ້ານໄດ້ ຄອບງຳຍ່ຳຍີໄພທີ່ເປັນຕາຢ້ານເຊິ່ງເກີດຂຶ້ນໄດ້ຢູ່

໗. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໘. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການນີ້ແລ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ທຸຕິຍະອາຫຸເນີຍຍະສູດທີ ໘ ຈົບ**

# ໙. ປະຖະມະປຸກຄະລະສູດ

## ວ່າດ້ວຍບຸກຄົນຜູ້ເປັນນາບຸນຂອງໂລກ ສູດທີ ໑

[໕໙] ພິກຂຸທັງຫຼາຍ ບຸກຄົນ ໘ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໘ ຈຳພວກໃດແດ່ ຄື

໑. ພຣະໂສດາບັນ

໒. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ

໓. ພຣະສະກະທາຄາມີ

໔. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ

໕. ພຣະອະນາຄາມີ

໖. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ

໗. ພຣະອະຣະຫັນ

໘. ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນ

ພິກຂຸທັງຫຼາຍ ບຸກຄົນ ໗ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນຜູ້ປະຕິບັດ ໔ ຈຳພວກ
ແລະບຸກຄົນຜູ້ຕັ້ງຢູ່ໃນຜົນ ໔ ຈຳພວກນີ້
ເປັນສົງຜູ້ປະຕິບັດກົງ ປະກອບດ້ວຍປັນຍາແລະສີນ
ບຸນຍ່ອມມີຜົນຍິ່ງແກ່ມະນຸດຜູ້ມຸ້ງບຸນບູຊາກະທຳຢູ່
ທານທີ່ບຸກຄົນໃຫ້ໃນສົງນີ້ຍ່ອມມີຜົນຫຼາຍ

**ປະຖະມະປຸກຄະລະສູດທີ ໗ ຈົບ**

# ໑໐. ທຸຕິຍະປຸກຄະລະສູດ

## ວ່າດ້ວຍບຸກຄົນຜູ້ເປັນນາບຸນຂອງໂລກ ສູດທີ ໘

[໖໐] ພິກຂຸທັງຫຼາຍ ບຸກຄົນ ໘ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໘ ຈຳພວກໃດແດ່ ຄື

໑. ພຣະໂສດາບັນ
໒. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ
໓. ພຣະສະກະທາຄາມີ
໔. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນ
໕. ພຣະອະນາຄາມີ
໖. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນ
໗. ພຣະອະຣະຫັນ
໘. ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນ

ພິກຂຸທັງຫຼາຍ ບຸກຄົນ ໘ ຈຳພວກນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໘ ຈຳພວກ ຄື ບຸກຄົນຜູ້ປະຕິບັດ ໔ ຈຳພວກ
ແລະບຸກຄົນຜູ້ຕັ້ງຢູ່ໃນຜົນ ໔ ຈຳພວກ

ເປັນສິງຜູ້ສູງສົ່ງກວ່າສັດທັງຫຼາຍ
ບຸນຍ່ອມມີຜົນຍິ່ງແກ່ມະນຸດຜູ້ມຸ້ງບຸນບູຊາກະທຳຢູ່
ທານທີ່ບຸກຄົນໃຫ້ໃນສົງນີ້ຍ່ອມມີຜົນຫຼາຍ

**ທຸຕິຍະປຸກຄະລະສູດທີ ໑໐ ຈົບ**

**ໂຄຕະມີວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ພູມິຈາລະວັກ

## ໝວດວ່າດ້ວຍເຫດທີ່ ເຮັດໃຫ້ແຜ່ນດິນໄຫວຄັ້ງໃຫຍ່

# ໑. ອິດສາສູດ

## ວ່າດ້ວຍຄວາມຢາກໄດ້ລາບ

[໖໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນ ໘ ຈຳພວກນີ້ ມີຜາກົດຢູ່ໃນໂລກ ບຸກຄົນ ໘ ຈຳພວກໃດແດ່ ຄື

໑. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ້ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານໝັ້ນ ພາກພຽນພະຍາຍາມເພື່ອໃຫ້ໄດ້ລາບ ແຕ່ລາບກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານຈຶ່ງເສົ້າໂສກ ລຳບາກໃຈ ຮ່ຳໄຮ ທຸບເອິກ ຄ່ຳຄວນ ເຖິງຄວາມເລີເລືອນ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ໝັ່

ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ບໍ່ໄດ້ລາບ ເສົ້າໂສກ ຮ່ຳໄຮ ແລະເຄື່ອນຈາກສັດທຳ

໔. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານໝັ່ນ ພາກພຽນພະຍາຍາມເພື່ອໃຫ້ໄດ້ລາບ ລາບ ກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານຈຶ່ງມົວເມົາ ຜະໝາດ ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ ໄດ້ລາບ ທ່ານຊື່ວ່າເປັນຜູ້ໄດ້ລາບ ມົວເມົາ ຜະໝາດ ແລະເຄື່ອນຈາກສັດທຳ

໓. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ແຕ່ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ລາບກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານຈຶ່ງເສົ້າໂສກ ລຳບາກໃຈ ຮ່ຳໄຮ ທຸບເອິກ ຄ່ຳຄວນ ເຖິງຄວາມເລີເລືອນ ພິກຂຸນີ້ເຮົາຮຽກວ່າ ຜູ້ຢາກໄດ້ລາບຢູ່ ແຕ່ບໍ່ໝັ່ນ  ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ບໍ່ໄດ້ລາບ ເສົ້າໂສກ ຮ່ຳໄຮ ແລະເຄື່ອນຈາກສັດທຳ

໔. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ແຕ່ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ແຕ່ລາບກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານຈຶ່ງມົວເມົາຜະໝາດ ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ແຕ່ບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ໄດ້ລາບ ມົວເມົາ ຜະໝາດ ແລະເຄື່ອນຈາກສັດທຳ

໕. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານໝັ່ນ ພາກພຽນພະຍາຍາມເພື່ອໃຫ້ໄດ້ລາບ ແຕ່ລາບກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານກໍບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ຮ່ຳໄຮ ບໍ່ທຸບເອິກຄ່ຳຄວນ ບໍ່ເຖິງຄວາມເລີເລືອນ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ ວ່າເປັນຜູ້ບໍ່ໄດ້ລາບ ບໍ່ເສົ້າໂສກ ບໍ່ຮ່ຳໄຮ ແລະບໍ່ເຄື່ອນຈາກສັດທຳ

໖. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານໝັ່ນ ພາກພຽນພະຍາຍາມເພື່ອໃຫ້ໄດ້ລາບ ລາບກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານກໍບໍ່ມົວເມົາ ບໍ່ຜະໝາດ ບໍ່ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ໝັ່ນ ພາກພຽນ ພະຍາຍາມເພື່ອ ໃຫ້ໄດ້ລາບທ່ານຊື່ວ່າເປັນຜູ້ໄດ້ລາບ  ບໍ່ມົວເມົາ ບໍ່ຜະໝາດ ແລະບໍ່ເຄື່ອນຈາກສັດທຳ

໗. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບ ຍ່ອມເກີດຂຶ້ນ ແຕ່ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ລາບກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານກໍບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ຮ່ຳໄຮ ບໍ່ທຸບເອິກຄ່ຳຄວນ ບໍ່ເຖິງຄວາມເລີເລືອນ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ແຕ່ບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ບໍ່ໄດ້ລາບ ບໍ່ເສົ້າໂສກ ບໍ່ຮ່ຳໄຮ ແລະບໍ່ເຄື່ອນຈາກສັດທຳ

໘. ເມື່ອພິກຂຸໃນທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບ ຍ່ອມເກີດຂຶ້ນ ແຕ່ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ແຕ່ລາບກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານບໍ່ມົວເມົາ ບໍ່ຜະໝາດ ບໍ່ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ແຕ່ບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ ໄດ້ລາບ ບໍ່ມົວເມົາ ບໍ່ຜະໝາດ ແລະບໍ່ເຄື່ອນຈາກສັດທຳ

ພິກຂຸທັງຫຼາຍ ບຸກຄົນ ໘ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ອິດສາສູດທີ ໑ ຈົບ**

# ໔. ອະລັງສູດ

## ວ່າດ້ວຍຜູ້ສາມາດເຮັດປະໂຫຍດຕົນແລະຜູ້ອື່ນ

[໖໔] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງແລະມີຄວາມສາມາດສຳລັບຜູ້ອື່ນ ທຳ ໖ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາໄດ້ໄວໃນກຸສົນທຳທັງຫຼາຍ
໔. ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໓. ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້
໔. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໕. ມີວາຈາງາມ ເຈຣະຈາຖ້ອຍຄຳໄພເລາະ ປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍບໍ່ຫຍາບຄາຍໃຫ້ຮູ້ຄວາມໝາຍໄດ້
໖. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຮ່າເຮີງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແລະມີຄວາມສາມາດສຳລັບຜູ້ອື່ນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແລະມີຄວາມສາມາດສຳລັບຜູ້ອື່ນ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ແຕ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໒. ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້
໓. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໔. ມີວາຈາງາມ ຯລຯ ໃຫ້ຮູ້ຄວາມໝາຍໄດ້
໕. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຮ່າເຣີງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແລະມີຄວາມສາມາດສຳລັບຜູ້ອື່ນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາໄດ້ໄວໃນກຸສົນທຳທັງຫຼາຍ
໒. ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໓. ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໔. ບໍ່ມີວາຈາງາມ ບໍ່ເຈຣະຈາຖ້ອຍຄຳໄພເລາະ ບໍ່ປະກອບດ້ວຍວາຈາ ຊາວເມືອງທີ ສະຫຼະສະຫຼວຍບໍ່ຫຍາບຄາຍໃຫ້ຮູ້ຄວາມໝາຍໄດ້ ທັງບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ບໍ່ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ບໍ່ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ບໍ່ປອບປະໂລມໃຈໃຫ້ສົດຊື່ນຮ່າເຣີງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາໄດ້ໄວໃນກຸສົນທຳທັງຫຼາຍ
໒. ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ແຕ່ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ທັງບໍ່ຮູ້ ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໓. ມີວາຈາງາມ ເຈຣະຈາຖ້ອຍຄຳໄພເລາະ ໆລໆ ໃຫ້ຮູ້ຄວາມໝາຍໄດ້
໔. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ໆລໆ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ແຕ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໒. ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້
໓. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແຕ່ບໍ່ມີວາຈາງາມ ບໍ່ເຈຣະຈາຖ້ອຍຄຳໄພເລາະ ບໍ່ປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍໃຫ້ຮູ້ຄວາມໝາຍໄດ້ ທັງບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ບໍ່ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ບໍ່ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ບໍ່ປອບປະໂລມໃຈໃຫ້ສົດຊື່ນຮ່າເຣີງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການນີ້ແລ ເປັນຜູ້ມີຄວາມສາມາດ ສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ແຕ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້

໔. ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ທັງບໍ່ຮູ້ອັດຖະຮູ້ທຳແລ້ວ ປະຕິບັດທຳສົມຄວນແກ່ທຳ ແຕ່ມີວາຈາງາມໆລໆ ໃຫ້ຮູ້ຄວາມໝາຍໄດ້

໕. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈ ໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ທັງບໍ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ແຕ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້

໔. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳແລ້ວ ແຕ່ບໍ່ມີວາຈາງາມ ໆລໆ ໃຫ້ຮູ້ຄວາມໝາຍໄດ້ ທັງບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ໆລໆ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ແລ ເປັນຜູ້ມີຄວາມສາມາດ ສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ທັງບໍ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ບໍ່ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແຕ່ມີວາຈາງາມ ເຈຣະຈາຖ້ອຍຄຳໄພເລາະ ປະກອບດ້ວຍວາຈາຊາວເມືອງທີ ສະຫຼະສະຫຼວຍບໍ່ຫຍາບຄາຍໃຫ້ຮູ້ຄວາມໝາຍໄດ້

໔. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ

**ອະລັງສູດທີ ໔ ຈົບ**

# ໑. ສັງຂິດຕະສູດ

## ວ່າດ້ວຍພິກຂຸທູນຂໍໃຫ້ຊົງສະແດງທຳໂດຍຫຍໍ້

[໖໑] ຄັ້ງນັ້ນ ພິກຂຸອົງໜຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຯລຯ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳໂດຍຫຍໍ້ແກ່ຂ້າພຣະອົງ ໂດຍທີ່ເມື່ອຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ໂມຄະບຸຣຸດບາງພວກໃນໂລກນີ້ ຍ່ອມເຊື້ອເຊີນເຮົາຢ່າງທີ່ເຂົາເຮັດກັນມາ ແລະເມື່ອເຮົາສະແດງທຳແລ້ວ ກໍຄອຍຖ້າຕິດຕາມເຮົາເລື້ອຍໄປ”

ພິກຂຸອົງໜຶ່ງຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳໂດຍຫຍໍ້ ຂໍພຣະສຸຄົດເຈົ້າໂຜດສະແດງທຳໂດຍຫຍໍ້ແກ່ຂ້າພຣະອົງ ເຮັດແນວໃດ ຂ້າພຣະອົງຈຶ່ງຈະຮູ້ທົ່ວເຖິງເນື້ອຄວາມແຫ່ງພາສິດຂອງພຣະຜູ້ມີພຣະພາກເຈົ້າ ເຮັດແນວໃດຂ້າພຣະອົງ ຈຶ່ງຈະເປັນທາຍາດແຫ່ງພາສິດຂອງພຣະຜູ້ມີພຣະພາກເຈົ້າ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພິກຂຸ ເພາະສະນັ້ນ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ “ຈິດຂອງເຮົາຈັກຕັ້ງໝັ້ນ ດຳຣົງໝັ້ນດ້ວຍດີໃນພາຍໃນ ແລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວຈັກຄອບງຳຈິດບໍ່ໄດ້ຢູ່” ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

ເມື່ອໃດແລ ຈິດຂອງທ່ານຕັ້ງໝັ້ນ ດຳຣົງໝັ້ນດ້ວຍດີໃນພາຍໃນ ແລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວຈັກຄອບງຳຈິດບໍ່ໄດ້ຢູ່ ເມື່ອນັ້ນ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ “ເມດຕາເຈໂຕວິມຸດຕິຈັກເປັນທຳອັນເຮົາຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ” ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

ເມື່ອໃດ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວຢ່າງນີ້ ເມື່ອນັ້ນ ທ່ານເພິ່ງຈະເລີນສະມາທິນີ້ທີ່ມີວິຕົກມີວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກມີພຽງວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກບໍ່ມີວິຈານແດ່ ຈະເລີນສະມາທິທີ່ມີປີຕິແດ່ ຈະເລີນສະມາທິທີ່ບໍ່ມີປີຕິແດ່ ຈະເລີນສະມາທິທີ່ມີຄວາມຍິນດີແດ່ ຈະເລີນສະມາທິທີ່ມີອຸເປກຂາແດ່

ເມື່ອໃດ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ຈະເລີນດີແລ້ວຢ່າງນີ້ ເມື່ອນັ້ນ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ ກະລຸນາເຈໂຕວິມຸດຕິ ฯລฯ ເມື່ອນັ້ນ ທ່ານເພິ່ງຕັ້ງໃຈຮູ້ ຢ່າງນີ້ວ່າ ມຸທິຕາເຈໂຕວິມຸດຕິ ฯລฯ ເມື່ອນັ້ນ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ "ອຸເປກຂາເຈໂຕວິມຸດຕິ ຈັກເປັນທຳອັນເຮົາຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ" ທ່ານເພິ່ງຕັ້ງໃຈຮູ້ ຢ່າງນີ້ແລ

ເມື່ອໃດ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວຢ່າງນີ້ ເມື່ອນັ້ນທ່ານເພິ່ງຈະເລີນສະມາທິນີ້ທີ່ມີວິຕົກມີວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກມີພຽງວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກບໍ່ມີວິຈານແດ່ ຈະເລີນສະມາທິທີ່ມີປີຕິແດ່ ຈະເລີນສະມາທິທີ່ບໍ່ມີປີຕິແດ່ ຈະເລີນສະມາທິທີ່ມີຄວາມຍິນດີແດ່ ຈະເລີນສະມາທິທີ່ມີອຸເປກຂາແດ່

ເມື່ອໃດ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ຈະເລີນດີແລ້ວຢ່າງນີ້ ເມື່ອນັ້ນ ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ "ເຮົາຈັກພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດ ອະພິດຊາ ແລະໂທມະນັດໃນໂລກໄດ້" ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

ເມື່ອໃດແລ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວຢ່າງນີ້ ເມື່ອນັ້ນທ່ານເພິ່ງຈະເລີນສະມາທິນີ້ທີ່ມີວິຕົກມີວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກມີພຽງວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກບໍ່ມີວິຈານແດ່ ຈະເລີນສະມາທິທີ່ມີປີຕິແດ່ ຈະເລີນສະມາທິທີ່ບໍ່ມີປີຕິແດ່ ຈະເລີນສະມາທິທີ່ມີຄວາມຍິນດີແດ່ ຈະເລີນສະມາທິທີ່ມີອຸເປກຂາແດ່

ເມື່ອໃດແລ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ຈະເລີນດີແລ້ວຢ່າງນີ້ ເມື່ອນັ້ນທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ ເຮົາຈັກພິຈາລະນາເຫັນເວທະນາໃນເວທະນາຢູ່ ฯລฯ ເມື່ອນັ້ນທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ ເຮົາຈັກພິຈາລະນາເຫັນຈິດໃນຈິດຢູ່ ฯລฯ ເມື່ອນັ້ນທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ "ເຮົາຈັກພິຈາລະນາເຫັນທຳໃນທຳຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້" ທ່ານເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

ເມື່ອໃດ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວຢ່າງນີ້ ເມື່ອນັ້ນທ່ານເພິ່ງຈະເລີນສະມາທິນີ້ທີ່ມີວິຕົກມີວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກມີພຽງວິຈານແດ່ ຈະເລີນສະມາທິທີ່ບໍ່ມີວິຕົກບໍ່ມີວິຈານແດ່ ຈະເລີນສະມາທິທີ່ມີປີຕິແດ່ ຈະເລີນສະມາທິທີ່ບໍ່ມີປີຕິແດ່ ຈະເລີນສະມາທິທີ່ມີຄວາມຍິນດີແດ່ ຈະເລີນສະມາທິທີ່ມີອຸເປກຂາແດ່

ເມື່ອໃດ ສະມາທິນີ້ເປັນທຳອັນທ່ານຈະເລີນແລ້ວ ຈະເລີນດີແລ້ວຢ່າງນີ້ ເມື່ອນັ້ນ ທ່ານຈະຍ່າງໄປທີ່ໃດ ໆ ກໍຍ່າງໄປໄດ້ຢ່າງຜາສຸກໃນທີ່ ນັ້ນ ໆ ຈະຢືນຢູ່ໃນທີ່ໃດ ໆ ກໍຢືນຢູ່ໄດ້ຢ່າງ

ຜາສຸກໃນທີ່ ນັ້ນ ໆ ຈະນັ່ງຢູ່ໃນທີ່ໃດ ໆ ກໍນັ່ງຢູ່ໄດ້ຢ່າງຜາສຸກໃນທີ່ນັ້ນ ໆ ຈະນອນຢູ່ໃນທີ່ໃດ ໆ ກໍນອນຢູ່ຢ່າງຜາສຸກໃນທີ່ນັ້ນ ໆ

ພິກຂຸນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຕັດສອນດ້ວຍພຣະໂອວາດນີ້ແລ້ວ ຈຶ່ງລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຈາກໄປ ທ່ານຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດ ກໍໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຊອບ ຕ້ອງການດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ “ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ”

ເປັນອັນວ່າ ພິກຂຸນັ້ນໄດ້ເປັນພຣະອະຣະຫັນ ອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ສັງຂິດຕະສູດທີ ໖ ຈົບ**

# ໘. ຄະຍາສີສະສູດ

## ວ່າດ້ວຍພຣະທຳມະເທດສະໜາທີ່ ຄະຍາສີສະ

[໖໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນເຂດຄະຍາສີສະ ເຂດເມືອງຄະຍາ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ๆລๆ

໑. ກ່ອນຈະຕັດສະຣູ້ ເຮົາເປັນໂພທິສັດຍັງບໍ່ໄດ້ຕັດຮູ້ ເຮົາຮູ້ໂອພາດ ແຕ່ບໍ່ເຫັນຮູບທັງຫຼາຍ

໒. ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ “ຖ້າເຮົາຮູ້ໂອພາດ ແລະເຫັນຮູບທັງຫຼາຍ ດ້ວຍອາການຢ່າງນີ້ ຍານທັດສະນະ ນີ້ຂອງເຮົາກໍຈະບໍລິສຸດຍິ່ງຂຶ້ນ”

ສະໄໝຕໍ່ມາ ເຮົານັ້ນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຮູ້ໂອພາດ ແລະເຫັນຮູບທັງຫຼາຍ ແຕ່ເຮົາບໍ່ໄດ້ຢືນເຈຣະຈາປາໄສ ກັບເທວະດາເຫຼົ່ານັ້ນ

໓. ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ “ຖ້າເຮົາຮູ້ໂອພາດ ເຫັນຮູບທັງຫຼາຍ ແລະຢືນເຈຣະຈາປາໄສກັບເທວະດາເຫຼົ່ານັ້ນ ດ້ວຍອາການຢ່າງນີ້ ຍານທັດສະນະນີ້ຂອງເຮົາກໍຈະບໍລິສຸດຍິ່ງຂຶ້ນ”

ສະໄໝຕໍ່ມາ ເຮົານັ້ນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ ຮູ້ໂອພາດ ເຫັນຮູບທັງຫຼາຍ ແລະຢືນເຈຣະຈາປາໄສກັບ ເທວະດາເຫຼົ່ານັ້ນ ແຕ່ບໍ່ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດານີ້ມາຈາກເທບນິກາຍນັ້ນ ໆ"

> ໔-ກ. ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ຖ້າເຮົາຮູ້ໂອພາດ ເຫັນຮູບທັງຫຼາຍ ຢືນເຈຣະຈາ ປາໄສກັບເທວະດາເຫຼົ່ານັ້ນ ແລະຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ ມາຈາກເທບນິກາຍນັ້ນ ໆ" ດ້ວຍອາການຢ່າງນີ້ ຍານທັດສະນະນີ້ຂອງເຮົາ ກໍຈະບໍລິສຸດຍິ່ງຂຶ້ນ"

ສະໄໝຕໍ່ມາ ເຮົານັ້ນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ ຮູ້ໂອພາດ ເຫັນຮູບທັງຫຼາຍ ຢືນເຈຣະຈາປາໄສກັບເທວະດາເຫຼົ່ານັ້ນ ແລະຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ມາຈາກເທບນິກາຍນັ້ນ ໆ" ແຕ່ບໍ່ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ດ້ວຍວິບາກແຫ່ງກຳນີ້ ເທວະດາເຫຼົ່ານີ້ຈຸຕິຈາກພົບນີ້ແລ້ວ ຈຶ່ງມາເກີດໃນພົບນັ້ນ" ຯລຯ ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ດ້ວຍວິບາກແຫ່ງກຳນີ້ ເທວະດາເຫຼົ່ານີ້ຈຸຕິຈາກພົບນີ້ແລ້ວ ຈຶ່ງມາເກີດໃນພົບນັ້ນ" ແຕ່ບໍ່ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ດ້ວຍວິບາກແຫ່ງກຳນີ້ ເທວະດາເຫຼົ່ານີ້ມີອາຫານຢ່າງນີ້ ສະເຫວີຍສຸກແລະທຸກຢ່າງນີ້" ຯລຯ ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ດ້ວຍວິບາກແຫ່ງກຳນີ້ ເທວະດາເຫຼົ່ານີ້ມີອາຫານຢ່າງນີ້ ສະເຫວີຍສຸກແລະທຸກຢ່າງນີ້" ແຕ່ບໍ່ຮູ້ຈັກ ເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ມີອາຍຸຍືນຢ່າງນີ້ ດຳຣົງຢູ່ໄດ້ນານຢ່າງນີ້" ຯລຯ ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ມີອາຍຸຍືນຢ່າງນີ້ ດຳຣົງຢູ່ໄດ້ນານຢ່າງນີ້" ແຕ່ບໍ່ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເຮົາເຄີຍຢູ່ຮ່ວມ ຫຼືບໍ່ເຄີຍຢູ່ຮ່ວມກັບເທວະດາເຫຼົ່ານີ້"

> ໗. ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ຖ້າເຮົາຮູ້ໂອພາດ ເຫັນຮູບທັງຫຼາຍ ຢືນເຈຣະຈາ ປາໄສກັບເທວະດາເຫຼົ່ານັ້ນ ແລະຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ ມາຈາກເທບນິກາຍນັ້ນ ໆ" ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ດ້ວຍວິບາກແຫ່ງກຳນີ້ ເທວະດາເຫຼົ່ານີ້ຈຸຕິຈາກພົບນີ້ແລ້ວ ຈຶ່ງມາເກີດໃນພົບນັ້ນ" ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ມີອາຫານຢ່າງນີ້ ສະເຫວີຍສຸກແລະທຸກຢ່າງນີ້" ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ມີອາຍຸຍືນຢ່າງນີ້ ດຳຣົງຢູ່ໄດ້ນານຢ່າງນີ້" ແລະຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເຮົາເຄີຍຢູ່ຮ່ວມຫຼືບໍ່ເຄີຍຢູ່ຮ່ວມກັບເທວະດາເຫຼົ່ານີ້" ຍານທັດສະນະນີ້ຂອງເຮົາກໍຈະບໍລິສຸດຍິ່ງຂຶ້ນ"

ສະໄໝຕໍ່ມາ ເຮົານັ້ນເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ ຮູ້ໂອພາດ ເຫັນຮູບທັງຫຼາຍ ຢືນເຈຣະຈາປາໄສກັບເທວະດາເຫຼົ່ານັ້ນ ແລະຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ ມາຈາກເທບນິກາຍນັ້ນ ໆ" ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ດ້ວຍວິບາກແຫ່ງກຳນີ້

ເທວະດາເຫຼົ່ານີ້ຈຸຕິຈາກພົບນີ້ແລ້ວ ຈຶ່ງມາເກີດໃນພົບນັ້ນ" ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ມີອາຫານຢ່າງນີ້ ສະເຫວີຍສຸກແລະທຸກຢ່າງນີ້" ຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເທວະດາເຫຼົ່ານີ້ມີອາຍຸຍືນຢ່າງນີ້ ດຳຣົງຢູ່ໄດ້ນານຢ່າງນີ້" ແລະຮູ້ຈັກເທວະດາເຫຼົ່ານັ້ນວ່າ "ເຮົາເຄີຍຢູ່ຮ່ວມຫຼືບໍ່ເຄີຍຢູ່ຮ່ວມກັບເທວະດາເຫຼົ່ານີ້"

ອະທິເທວະຍານທັດສະນະ (ຄວາມຮູ້ຄວາມເຫັນກ່ຽວກັບເທວະດາຜູ້ຍິ່ງ) ຂອງເຮົາ ໘ ຂັ້ນຢ່າງນີ້ ຍັງບໍ່ໝົດຈົດດີຕາບໃດ ເຮົາກໍຍັງບໍ່ຢືນຢັນວ່າ ເປັນຜູ້ຕັດສະຮູ້ສຳມາສຳໂພທິຍານອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມເທວະດາ ແລະມະນຸດຕາບນັ້ນ

ພິກຂຸທັງຫຼາຍ ເມື່ອໃດ ອະທິເທວະຍານທັດສະນະຂອງເຮົາ ໘ ຂັ້ນຢ່າງນີ້ໝົດຈົດດີແລ້ວ ເມື່ອນັ້ນ ເຮົາຈຶ່ງຢືນຢັນໄດ້ວ່າ ເປັນຜູ້ຕັດສະຮູ້ສຳມາສຳໂພທິຍານອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຍານທັດສະນະເກີດຂຶ້ນແກ່ເຮົາວ່າ "ເຈໂຕວິມຸດຕິຂອງເຮົາບໍ່ກຳເຣິບ ຊາດນີ້ເປັນຊາດສຸດທ້າຍບັດນີ້ພົບໃໝ່ບໍ່ ມີອີກ"

**ຄະຍາສີສະສູດທີ ໔ ຈົບ**

# ໕. ອະພິພາຍະຕະນະສູດ

## ວ່າດ້ວຍອະພິພາຍະຕະນະ

[໖໕] ພິກຂຸທັງຫຼາຍ ອະພິພາຍະຕະນະ ໘ ປະການນີ້
ອະພິພາຍະຕະນະ ໘ ປະການ ອັນໃດແດ່ ຄື

໑. ບຸກຄົນໜຶ່ງມີຮູບສັນຍາພາຍໃນ ເຫັນຮູບພາຍນອກຂະໜາດນ້ອຍ ມີສີສັນດີຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໑

໒. ບຸກຄົນໜຶ່ງມີຮູບສັນຍາພາຍໃນ ເຫັນຮູບພາຍນອກຂະໜາດໃຫຍ່ ມີສີສັນດີ ຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໒

໓. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກຂະໜາດນ້ອຍ ມີສີສັນດີ ຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໓

໔. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກຂະໜາດໃຫຍ່ ມີສີສັນດີ ຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໔

໕. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໕

໖. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາ ຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໖

໗. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາ ຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໗

໘. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໘

ພິກຂຸທັງຫຼາຍ ອະພິພາຍະຕະນະ ໘ ປະການນີ້ແລ

**ອະພິພາຍະຕະນະສູດທີ ໕ ຈົບ**

# ໖. ວິໂມກຂະສູດ

## ວ່າດ້ວຍວິໂມກ

[໖໖] ພິກຂຸທັງຫຼາຍ ວິໂມກ ໘ ປະການນີ້

ວິໂມກ ໘ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ມີຮູບ ເຫັນຮູບທັງຫຼາຍ ນີ້ເປັນວິໂມກທີ ໑

໒. ບຸກຄົນຜູ້ມີອະຮູບປະສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກ ນີ້ເປັນວິໂມກທີ ໒

໓. ບຸກຄົນເປັນຜູ້ນ້ອມໃຈໄປວ່າ "ງາມ" ເທົ່ານັ້ນ ນີ້ເປັນວິໂມກທີ ໓
໔. ບຸກຄົນບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດ ນານັດຕະສັນຍາ ໂດຍປະການທັງປວງ ນີ້ເປັນວິໂມກທີ ໔
໕. ບຸກຄົນລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸ ວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່ ນີ້ເປັນວິໂມກທີ ໕
໖. ບຸກຄົນລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ນີ້ເປັນ ວິໂມກທີ ໖
໗. ບຸກຄົນລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນວິໂມກທີ ໗
໘. ບຸກຄົນລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ນີ້ເປັນວິໂມກທີ ໘

ພິກຂຸທັງຫຼາຍ ວິໂມກ ໘ ປະການນີ້ແລ

**ວິໂມກຂະສູດທີ ໖ ຈົບ**

# ໗. ອະນະຣິຍະໂວຫາຣະສູດ

## ວ່າດ້ວຍອະນະຣິຍະໂວຫານ

[໖໗] ພິກຂຸທັງຫຼາຍ ອະນະຣິຍະໂວຫານ ໘ ປະການນີ້

ອະນະຣິຍະໂວຫານ ໘ ປະການ ອັນໃດແດ່ ຄື

໑. ການກ່າວສິ່ງທີ່ ບໍ່ໄດ້ເຫັນວ່າໄດ້ເຫັນ
໒. ການກ່າວສິ່ງທີ່ ບໍ່ໄດ້ຟັງວ່າໄດ້ຟັງ
໓. ການກ່າວສິ່ງທີ່ ບໍ່ໄດ້ຊາບວ່າໄດ້ຊາບ
໔. ການກ່າວສິ່ງທີ່ ບໍ່ໄດ້ຮູ້ວ່າໄດ້ຮູ້
໕. ການກ່າວສິ່ງທີ່ ໄດ້ເຫັນວ່າບໍ່ໄດ້ເຫັນ
໖. ການກ່າວສິ່ງທີ່ ໄດ້ຟັງວ່າບໍ່ໄດ້ຟັງ
໗. ການກ່າວສິ່ງທີ່ ໄດ້ຊາບວ່າບໍ່ໄດ້ຊາບ

໘. ການກ່າວສິ່ງທີ່ ໄດ້ຮູ້ວ່າບໍ່ໄດ້ຮູ້

ພິກຂຸທັງຫຼາຍ ອະນະຣິຍະໂວຫານ ໘ ປະການນີ້ແລ

**ອະນະຣິຍະໂວຫາຣະສູດທີ ໗ ຈົບ**

## ໘. ອະຣິຍະໂວຫາຣະສູດ

### ວ່າດ້ວຍອະຣິຍະໂວຫານ

[໖໘] ພິກຂຸທັງຫຼາຍ ອະຣິຍະໂວຫານ ໘ ປະການນີ້
ອະຣິຍະໂວຫານ ໘ ປະການ ອັນໃດແດ່ ຄື

໑. ການກ່າວສິ່ງທີ່ ບໍ່ໄດ້ເຫັນວ່າບໍ່ໄດ້ເຫັນ
໒. ການກ່າວສິ່ງທີ່ ບໍ່ໄດ້ຟັງວ່າບໍ່ໄດ້ຟັງ
໓. ການກ່າວສິ່ງທີ່ ບໍ່ໄດ້ຊາບວ່າບໍ່ໄດ້ຊາບ
໔. ການກ່າວສິ່ງທີ່ ບໍ່ໄດ້ຮູ້ວ່າບໍ່ໄດ້ຮູ້
໕. ການກ່າວສິ່ງທີ່ ໄດ້ເຫັນວ່າໄດ້ເຫັນ
໖. ການກ່າວສິ່ງທີ່ ໄດ້ຟັງວ່າໄດ້ຟັງ
໗. ການກ່າວສິ່ງທີ່ ໄດ້ຊາບວ່າໄດ້ຊາບ
໘. ການກ່າວສິ່ງທີ່ ໄດ້ຮູ້ວ່າໄດ້ຮູ້

ພິກຂຸທັງຫຼາຍ ອະຣິຍະໂວຫານ ໘ ປະການນີ້ແລ

**ອະຣິຍະໂວຫາຣະສູດທີ ໘ ຈົບ**

## ໙. ປະຣິສາສູດ

### ວ່າດ້ວຍບໍລິສັດ

[໖໙] ພິກຂຸທັງຫຼາຍ ບໍລິສັດ ໘ ຈຳພວກນີ້
ບໍລິສັດ ໘ ຈຳພວກໃດແດ່ ຄື

໑. ຂັດຕິຍະບໍລິສັດ (ຊຸມນຸມກະສັດ)
໒. ພາມມະນະບໍລິສັດ (ຊຸມນຸມພາມ)

໓. ຄະຫະບໍດີບໍລິສັດ (ຊຸມນຸມຄະຫະບໍດີ)
໔. ສະມະນະບໍລິສັດ (ຊຸມນຸມສະມະນະ)
໕. ຈາຕຸມະຫາຣາດບໍລິສັດ (ຊຸມນຸມເທບຊັ້ນຈາຕຸມະຫາຣາດ)
໖. ຕາວະຕິງສາບໍລິສັດ (ຊຸມນຸມເທບຊັ້ນຕາວະຕິງສາ)
໗. ມານບໍລິສັດ (ຊຸມນຸມມານ)
໘. ພົມບໍລິສັດ (ຊຸມນຸມພົມ)

ພິກຂຸທັງຫຼາຍ ເຮົາຈຳໄດ້ວ່າ "ເຄີຍເຂົ້າໄປຫາຂັດຕິຍະບໍລິສັດຫຼາຍຮ້ອຍຄັ້ງ ທັງເຄີຍ ນັ່ງໂອ້ລົມແລະສົນທະນາໃນຂັດຕິຍະບໍລິສັດນັ້ນ ກະສັດເຫຼົ່ານັ້ນມີວັນນະເຊັ່ນໃດ ເຮົາກໍມີວັນນະເຊັ່ນນັ້ນ ກະສັດເຫຼົ່ານັ້ນມີສຽງເຊັ່ນໃດ ເຮົາກໍມີສຽງເຊັ່ນນັ້ນ ເຮົາຊີ້ແຈ່ງໃຫ້ກະສັດ ເຫຼົ່ານັ້ນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣິງດ້ວຍທຳມີກະຖາ ແລະເມື່ອເຮົາກຳລັງເວົ້າຢູ່ ກໍບໍ່ມີໃຜຮູ້ວ່າ "ຜູ້ກຳລັງເວົ້າຢູ່ນີ້ເປັນໃຜ ເປັນເທວະດາຫຼືມະນຸດ" ເມື່ອຊີ້ແຈ່ງໃຫ້ກະສັດເຫຼົ່ານັ້ນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານ ແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນ ຣ່າເຣິງດ້ວຍທຳມີກະຖາແລ້ວກໍຫາຍໄປ ແລະເມື່ອເຮົາຫາຍໄປແລ້ວ ກໍບໍ່ມີໃຜຮູ້ວ່າ "ຜູ້ທີ່ຫາຍໄປແລ້ວນີ້ເປັນໃຜ ເປັນເທວະດາຫຼືມະນຸດ"

ພິກຂຸທັງຫຼາຍ ເຮົາຈຳໄດ້ວ່າ "ເຄີຍເຂົ້າໄປຫາພາມມະນະບໍລິສັດ ฯລฯ ຄະຫະບໍດີບໍລິສັດ ฯລฯ ສະມະນະບໍລິສັດ ฯລฯ ຈາຕຸມະຫາຣາດບໍລິສັດ ฯລฯ ຕາວະຕິງສາບໍລິສັດ ฯລฯ ມານບໍລິສັດ ฯລฯ"

ພິກຂຸທັງຫຼາຍ ເຮົາຈຳໄດ້ວ່າ "ເຄີຍເຂົ້າໄປຫາພົມບໍລິສັດຫຼາຍຮ້ອຍຄັ້ງ ທັງເຄີຍນັ່ງ ໂອ້ລົມແລະສົນທະນາໃນພົມບໍລິສັດນັ້ນ ພົມເຫຼົ່ານັ້ນມີວັນນະເຊັ່ນໃດ ເຮົາກໍມີວັນນະເຊັ່ນນັ້ນ ພົມເຫຼົ່ານັ້ນມີສຽງເຊັ່ນໃດ ເຮົາກໍມີສຽງເຊັ່ນນັ້ນ ເຮົາຊີ້ແຈ່ງໃຫ້ພົມເຫຼົ່ານັ້ນ ເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈ ໃຫ້ສົດຊື່ນຣ່າເຣິງດ້ວຍທຳມີກະຖາ ແລະເມື່ອເຮົາກຳລັງເວົ້າຢູ່ ກໍບໍ່ມີໃຜຮູ້ວ່າ "ຜູ້ກຳລັງເວົ້າຢູ່ນີ້ເປັນໃຜ ເປັນເທວະດາຫຼືມະນຸດ" ເມື່ອຊີ້ແຈ່ງໃຫ້ພົມເຫຼົ່ານັ້ນເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣິງ ດ້ວຍທຳມີກະຖາແລ້ວກໍຫາຍໄປ ແລະເມື່ອເຮົາຫາຍໄປແລ້ວ ກໍບໍ່ມີໃຜຮູ້ວ່າ "ຜູ້ທີ່ ຫາຍໄປແລ້ວ ນີ້ເປັນໃຜ ເປັນເທວະດາຫຼືມະນຸດ"

ພິກຂຸທັງຫຼາຍ ບໍລິສັດ ໘ ຈຳພວກນີ້ແລ

**ປະຣິສາສູດທີ ໗ ຈົບ**

# ໑໐. ພູມຈາລະສູດ
## ວ່າດ້ວຍເຫດທີ່ ເຮັດໃຫ້ແຜ່ນດິນໄຫວຄັ້ງໃຫຍ່

[໗໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກູຕາຄານສາລາ ປ່າມະຫາວັນ ເຂດເມືອງເວສາລີ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣາວາສົກ ຊົງຖືບາດ ແລະຈີວອນສະເດັດເຂົ້າໄປໃນເມືອງເວສາລີເພື່ອບິນທະບາດ ສະເດັດກັບຈາກບິນທະບາດ ຫຼັງຈາກສະເຫວີຍພຣະກະຍາຫານສຳເລັດແລ້ວ ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ທ່ານຈົ່ງຖືນິສີທະນະ ເຮົາຈະເຂົ້າໄປພັກກາງເວັນທີ່ ປາວາລະເຈດີ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ຖືນິສີທະນະຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປຂ້າງພຣະປັດສະດາງ (ຂ້າງຫຼັງ)

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ປາວາລະເຈດີ ປະທັບນັ່ງເທິງພຸດທະອາດທີ່ປູລາດ ໄວ້ແລ້ວໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ "ອານົນ ເມືອງເວສາລີໜ້າຣື່ນຣົມ ອຸເທນເຈດີ ໜ້າຣື່ນຣົມ ໂຄຕະມະກະເຈດີໜ້າຣື່ນຣົມ ພະຫຸປຸດຕະກະເຈດີໜ້າຣື່ນຣົມ ສັດຕຳພະເຈດີໜ້າຣື່ນຣົມ ສາຣັນທະເຈດີໜ້າຣື່ນຣົມ ປາວາລະເຈດີໜ້າຣື່ນຣົມ

ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງ ເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼືເກີນກວ່າ ໑ ກັບ

ອິດທິບາດ ໔ ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣິບດີແລ້ວ ຕະຖາຄົດເມື່ອມຸ້ງຫວັງ ເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼື ເກີນກວ່າ ໑ ກັບ"

ເມື່ອພຣະຜູ້ມີພຣະພາກເຈົ້າຊົງທຳນິມິດທີ່ແຈ່ມແຈ້ງ ຊົງເຮັດໂອກາດທີ່ຊັດເຈນແມ່ນຢ່າງນີ້ ທ່ານພຣະອານົນກໍບໍ່ອາດຈະຮູ້ທັນ ຈຶ່ງບໍ່ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດເຈົ້າໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ" ເພາະທ່ານຖືກມານດົນໃຈ

ແມ່ນຄັ້ງທີ ໔ ຯລຯ

ແມ່ນຄັ້ງທີ ໓ ພຣະຜູ້ມີພຣະພາກເຈົ້າກໍໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ "ອານົນ ເມືອງເວສາລີໜ້າຣື່ນຣົມ ອຸເທນເຈດີໜ້າຣື່ນຣົມ ໂຄຕະມະກະເຈດີໜ້າຣື່ນຣົມ ພະຫຸປຸດຕະກະເຈດີໜ້າຣື່ນຣົມ ສັດຕຳພະເຈດີໜ້າຣື່ນຣົມ ສາຣັນທະເຈດີໜ້າຣື່ນຣົມ ປາວາລະເຈດີໜ້າຣື່ນຣົມ

ອິດທິບາດ ໔ ຜູ້ໃດຜູ້ໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານແລ້ວ ເຮັດໃຫ້ເປັນທີ່ຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ຜູ້ນັ້ນເມື່ອມຸ້ງຫວັງ ເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼືເກີນກວ່າ ໑ ກັບ

ອິດທິບາດ ໔ ຕະຖາຄົດຈະເລີນ ໗ລ໗ ຕະຖາຄົດເມື່ອມຸ້ງຫວັງ ເພິ່ງດຳຣົງຢູ່ໄດ້ ໑ ກັບ ຫຼືເກີນກວ່າ ໑ ກັບ"

ເມື່ອພຣະຜູ້ມີພຣະພາກເຈົ້າຊົງທຳນິມິດທີ່ແຈ່ມແຈ້ງ ຊົງເຮັດໂອກາດທີ່ຊັດເຈນແມ່ນຢ່າງນີ້ ທ່ານພຣະອານົນກໍບໍ່ອາດຈະຮູ້ທັນ ຈຶ່ງບໍ່ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບ ຂໍພຣະສຸຄົດໂຜດດຳຣົງພຣະຊົນມະຊີບຢູ່ຕະຫຼອດກັບເພື່ອເກື້ອກູນແກ່ຄົນທັງຫຼາຍ ເພື່ອສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດ ເພື່ອເກື້ອກູນ ເພື່ອສຸກແກ່ເທວະດາແລະມະນຸດທັງຫຼາຍ" ເພາະທ່ານຖືກມານດົນໃຈ

ຫຼັງຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ "ອານົນ ໄປເທີ້ນ ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວນັ່ງທີ່ ເຫງົ້າໄມ້ຕົ້ນໜຶ່ງເຊິ່ງບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ເມື່ອທ່ານພຣະອານົນຈາກໄປບໍ່ດົນ ມານຜູ້ມີບາບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸຄົດໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ "ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ ເຫຼົ່າພິກຂຸຜູ້ສາວົກຂອງເຮົາຍັງບໍ່ສຽບແຫຼມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ບັນລຸທຳອັນເປັນແດນກະເສມຈາກໂຍຄະ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຊອບຍິ່ງ ບໍ່ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທຳບໍ່ໄດ້"

ຂ້າແດ່ພຣະອົງຜູ້ຈະເລີນ ເວລານີ້ ເຫຼົ່າພິກຂຸຜູ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ສຽບແຫຼມ ໄດ້ຮັບການແນະນຳ ແກ່ກ້າ ບັນລຸທຳອັນເປັນແດນກະເສມຈາກໂຍຄະ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຊອບຍິ່ງ ປະພຶດຕາມທຳ ຮຽນກັບອາຈານ

ຂອງຕົນແລ້ວບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກເຮັດໃຫ້ງ່າຍໄດ້ ສະແດງທໍາມີປາຕິຫານຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທໍາໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸຄົດໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ “ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານ ຕາບເທົ່າທີ່ ເຫຼົ່າພິກຂຸນີຜູ້ສາວິກາຂອງເຮົາ ຯລຯ ຕາບເທົ່າທີ່ ເຫຼົ່າອຸປາສົກຜູ້ສາວົກຂອງເຮົາ ຯລຯ ຕາບເທົ່າທີ່ ເຫຼົ່າອຸປາສິກາຜູ້ສາວິກາຂອງເຮົາຍັງບໍ່ສຽບແຫຼມ ບໍ່ໄດ້ຮັບການແນະນໍາ ບໍ່ແກ່ກ້າ ບໍ່ບັນລຸທໍາອັນເປັນແດນກະເສມຈາກໂຍຄະ ບໍ່ເປັນພະຫູສູດ ບໍ່ຊົງທໍາ ບໍ່ປະຕິບັດທໍາສົມຄວນແກ່ທໍາ ບໍ່ປະຕິບັດຊອບຍິ່ງ ບໍ່ປະພຶດຕາມທໍາ ຮຽນກັບອາຈານຂອງຕົນແລ້ວແຕ່ກໍຍັງບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທໍາມີປາຕິຫານຜາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຊອບທໍາບໍ່ໄດ້”

ຂ້າແດ່ ພຣະອົງຜູ້ຈະເລີນ ເວລານີ້ ເຫຼົ່າອຸປາສິກາຜູ້ສາວິກາຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ສຽບແຫຼມ ໄດ້ຮັບການແນະນໍາ ແກ່ກ້າ ບັນລຸທໍາອັນເປັນແດນກະເສມຈາກ ໂຍຄະ ເປັນພະຫູສູດ ຊົງທໍາ ປະຕິບັດທໍາສົມຄວນແກ່ທໍາ ປະຕິບັດຊອບຍິ່ງ ປະພຶດຕາມທໍາ ຮຽນກັບອາຈານຂອງຕົນແລ້ວບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍໄດ້ ສະແດງທໍາມີປາຕິຫານຜາບປະຣັບປະວາດທີ່ເກີດຂຶ້ນໃຫ້ຮຽບຮ້ອຍໂດຍຊອບທໍາໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸຄົດໂຜດປະຣິນິບພານເທີ້ນ ເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະວາຈານີ້ໄວ້ວ່າ “ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ ພົມມະຈັນນີ້ຂອງເຮົາຍັງບໍ່ຈະເລີນແຜ່ຫຼາຍ ກວ້າງຂວາງ ຮູ້ກັນໂດຍສ່ວນຫຼາຍ ເປັນປຶກແຜ່ນ ຈົນວ່າເທວະດາແລະມະນຸດທັງຫຼາຍປະກາດໄດ້ດີແລ້ວ”

ຂ້າແດ່ ພຣະອົງຜູ້ຈະເລີນ ເວລານີ້ ພົມມະຈັນຂອງພຣະຜູ້ມີພຣະພາກເຈົ້າຈະເລີນແຜ່ຫຼາຍ ກວ້າງຂວາງ ຮູ້ກັນໂດຍສ່ວນຫຼາຍ ເປັນປຶກແຜ່ນ ຈົນວ່າເທວະດາ ແລະມະນຸດທັງຫຼາຍປະກາດໄດ້ດີແລ້ວ

ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານເທີ້ນ ຂໍພຣະສຸຄົດໂຜດປະຣິນິບພານເທີ້ນເວລານີ້ ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າແລ້ວ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ມານຜູ້ມີບາບ ທ່ານຈົ່ງຂົນຂວາຍໜ້ອຍເທີ້ນ ອີກບໍ່ດົນປານໃດ ຕະຖາຄົດຈະປະຣິນິບພານ ຈາກນີ້ໄປອີກ ໓ ເດືອນ ຕະຖາຄົດຈະປະຣິນິບພານ”

ເວລານັ້ນ ພຣະຜູ້ມີພຣະພາກເຈົ້າຊົງມີສະຕິສຳປະຊັນຍະ ຊົງປົງພຣະຊົນມາຍຸສັງຂານແລ້ວ ທີ່ປາວາລະເຈດີ ເມື່ອພຣະອົງຊົງປົງພຣະຊົນມາຍຸສັງຂານແລ້ວ ໄດ້ເກີດແຜ່ນດິນໄຫວຄັ້ງໃຫຍ່ ໜ້າສະພຶງກົວ ຂົນພອງສະຍອງເກົ້າ ທັງກອງທິບກໍດັ່ງກຶກກ້ອງ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມນັ້ນແລ້ວ ຈຶ່ງຊົງເປ່ງພຣະອຸທານໃນເວລານັ້ນດັ່ງນີ້ວ່າ

ມຸນີລະກຳທັງທີ່ ຊັ່ງໄດ້ແລະຊັ່ງບໍ່ໄດ້
ອັນເປັນເຫດກໍ່ກຳເນີດເປັນເຄື່ອງປຸງແຕ່ງພົບໄດ້ແລ້ວ
ຍິນດີໃນພາຍໃນ ມີໃຈໝັ້ນຄົງ
ທຳລາຍກິເລດທີ່ເກີດໃນຕົນໄດ້
ເໝືອນນັກຮົບທຳລາຍເກາະໄດ້ ສະນັ້ນ

ລຳດັບນັ້ນ ທ່ານພຣະອານົນໄດ້ມີຄວາມຄິດດັ່ງນີ້ວ່າ "ແຜ່ນດິນໄຫວຄັ້ງນີ້ ຮຸນແຮງຈິງແຜ່ນດິນໄຫວຄັ້ງນີ້ຮຸນແຮງແທ້ ໆ ໜ້າສະພຶງກົວ ຂົນພອງສະຫຍອງເກົ້າ ທັງກອງທິບກໍດັງກຶກກ້ອງ ອັນໃດນໍ? ເປັນເຫດ ເປັນປັດໄຈໃຫ້ແຜ່ນດິນໄຫວຢ່າງຮຸນແຮງ"

ຕໍ່ມາ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນແຜ່ນດິນໄຫວຄັ້ງນີ້ຮຸນແຮງຈິງ ແຜ່ນດິນໄຫວຄັ້ງນີ້ຮຸນແຮງແທ້ ໆ ໜ້າສະພຶງກົວ ຂົນພອງສະຫຍອງເກົ້າ ທັງກອງທິບກໍດັງກຶກກ້ອງ ອັນໃດນໍ? ເປັນເຫດ ເປັນປັດໄຈໃຫ້ແຜ່ນດິນໄຫວ ຢ່າງຮຸນແຮງ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ເຫດປັດໄຈ ໘ ປະການນີ້ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ ເຫດປັດໄຈ ໘ ປະການ ອັນໃດແດ່ ຄື

໑. ມະຫາປະຖະພີນີ້ຕັ້ງຢູ່ເທິງນ້ຳ ນ້ຳຕັ້ງຢູ່ເທິງລົມ ລົມຕັ້ງຢູ່ເທິງອາກາດເວລາ ທີ່ລົມພາຍຸພັດແຮງຍ່ອມເຮັດໃຫ້ນ້ຳກະເພື່ອມ ນ້ຳທີ່ກະເພື່ອມຍ່ອມເຮັດໃຫ້ແຜ່ນດິນໄຫວຕາມ ນີ້ເປັນເຫດປັດໄຈປະການທີ ໑ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

໒. ສະມະນະຫຼືພາມຜູ້ມີລິດ ຊ່ຽວຊານທາງຈິດ ຫຼືເຫຼົ່າເທວະດາຜູ້ມີລິດຫຼາຍ ມີອານຸພາບຫຼາຍໄດ້ຈະເລີນປະຖະວີສັນຍາເລັກໜ້ອຍ ແຕ່ຈະເລີນ ອາໂປສັນຍາຈົນຫາປະມານບໍ່ໄດ້ ຈຶ່ງເຮັດໃຫ້ແຜ່ນດິນນີ້ໄຫວສັ່ນສະເທືອນເລື່ອນລັ່ນ ນີ້ເປັນເຫດປັດໄຈປະການທີ ໒ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

໓. ເວລາທີ່ພຣະໂພທິສັດມີສະຕິສໍາປະຊັນຍະຈຸຕິຈາກພົບດຸສິດ ສະເດັດສູ່ພຣະອຸທອນ ຂອງພຣະມານດາ ແຜ່ນດິນນີ້ກໍໄຫວສັ່ນສະເທືອນເລື່ອນລັ່ນ ນີ້ເປັນເຫດປັດໄຈ ປະການທີ ໓ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

໔. ເວລາທີ່ພຣະໂພທິສັດມີສະຕິສໍາປະຊັນຍະ ປະສູດຈາກພຣະອຸທອນຂອງ ພຣະມານດາແຜ່ນດິນນີ້ກໍໄຫວສັ່ນສະເທືອນເລື່ອນລັ່ນ ນີ້ເປັນເຫດປັດໄຈປະການທີ ໔ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

໕. ເວລາທີ່ຕະຖາຄົດຕັດສະຣູ້ອະນຸດຕະຣະສໍາມາສໍາໂພທິຍານ ແຜ່ນດິນນີ້ກໍໄຫວສັ່ນສະເທືອນເລື່ອນລັ່ນ ນີ້ເປັນເຫດປັດໄຈປະການທີ ໕ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

໖. ເວລາທີ່ຕະຖາຄົດປະກາດທໍາມະຈັກອັນປະເສີດໃຫ້ເປັນໄປ ແຜ່ນດິນນີ້ກໍໄຫວສັ່ນສະເທືອນເລື່ອນລັ່ນ ນີ້ເປັນເຫດປັດໄຈປະການທີ ໖ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

໗. ເວລາທີ່ຕະຖາຄົດມີສະຕິສໍາປະຊັນຍະປົງອາຍຸສັງຂານ ແຜ່ນດິນນີ້ກໍໄຫວສັ່ນສະເທືອນເລື່ອນລັ່ນ ນີ້ເປັນເຫດປັດໄຈປະການທີ ໗ ທີ່ເຮັດໃຫ້ແຜ່ນດິນໄຫວ ຢ່າງຮຸນແຮງ

໘. ເວລາທີ່ຕະຖາຄົດປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ແຜ່ນດິນນີ້ກໍໄຫວສັ່ນສະເທືອນເລື່ອນລັ່ນ ນີ້ເປັນເຫດປັດໄຈປະການທີ ໘ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

ອານົນ ເຫດປັດໄຈ ໘ ປະການນີ້ແລ ທີ່ເຮັດໃຫ້ແຜ່ນດິນໄຫວຢ່າງຮຸນແຮງ

**ພູມິຈາລະສູດທີ ໑໐ ຈົບ**

**ພູມິຈາລະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອິດສາສູດ

໒. ອະລັງສູດ

໓. ສັງຂິດຕະສູດ

໔. ຄະຍາສີສະສູດ

໕. ອະພິພາຍະຕະນະສູດ

໖. ວິໂມກຂະສູດ

໗. ອະນະຣິຍະໂວຫາຣະສູດ

໘. ອະຣິຍະໂວຫາຣະສູດ

໙. ປະຣິສາສູດ

໑໐. ພູມິຈາລະສູດ

# ໑. ຍະມະກະວັກ

## ໝວດວ່າດ້ວຍທຳຄູ່ກັນ

# ໑. ປະຖະມະສັດທາສູດ

## ວ່າດ້ວຍສັດທາ ສູດທີ ໑

[໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ມີສິນ ທ່ານ ຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນຢ່າງນີ້ ທ່ານເພິ່ງບຳເພັນອົງນັ້ນໃຫ້ບໍລິບູນດ້ວຍ ຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສິນ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສິນ ເມື່ອນັ້ນ ທ່ານ ຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸເປັນຜູ້ມີສັດທາແລະມີສິນ ແຕ່ບໍ່ເປັນພະຫູສູດ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ຢ່າງນີ້ ທ່ານເພິ່ງບຳເພັນອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສິນ ແລະເປັນພະຫູສູດ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສິນ ແລະເປັນພະຫູສູດ ເມື່ອນັ້ນ ທ່ານຈຶ່ງ ຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸເປັນຜູ້ມີສັດທາ ມີສິນ ແລະເປັນພະຫູສູດ ແຕ່ບໍ່ເປັນທຳມະກະຖຶກ ຯລຯ ເປັນທຳ ມະກະຖຶກ ແຕ່ບໍ່ເຂົ້າໄປສູ່ບໍລິສັດ ຯລຯ ເຂົ້າໄປສູ່ບໍລິສັດ ແຕ່ບໍ່ແກ່ກ້າສະແດງທຳແກ່ບໍລິສັດ ຯລຯ ແກ່ກ້າສະແດງທຳແກ່ບໍລິສັດ ແຕ່ບໍ່ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກ ໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍຍາກ ໄດ້ໂດຍລຳບາກ ຯລຯ ໄດ້ຊານ ໔ ອັນມີໃນຈິດ ຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແຕ່ບໍ່ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປດ້ວຍ ປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ທ່ານຊື່ວ່າເປັນ ຜູ້ບໍ່ບໍລິບູນດ້ວຍອົງນັ້ນຢ່າງນີ້ ທ່ານ ເພິ່ງພ່ຳເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສິນ ເປັນພະຫູ ສູດ ເປັນທຳມະກະຖຶກ ເຂົ້າໄປສູ່ບໍລິສັດ ແກ່ກ້າສະແດງທຳແກ່ບໍລິສັດ ເປັນຜູ້ໄດ້ຊານ ໔ ອັນມີ ໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ ລຳບາກ ແລະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນ ໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນ ປັດຈຸບັນ ເມື່ອໃດ ພິກຂຸ

| | |
|---|---|
| ໑. ມີສັດທາ | ໒. ມີສິນ |
| ໓. ເປັນພະຫູສູດ | ໔. ເປັນທຳມະກະຖຶກ |
| ໕. ເຂົ້າໄປສູ່ບໍລິສັດ | ໖. ແກ່ກ້າສະແດງທຳແກ່ບໍລິສັດ |

ກ. ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມ ປາຖະ ໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໗. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດ ສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໗ ປະການນີ້ແລ ຊື່ວ່າເປັນຜູ້ກໍ່ໃຫ້ເກີດ ຄວາມ ເຫຼື້ອມໃສໄດ້ຮອບດ້ານ ແລະເປັນຜູ້ບໍລິບູນດ້ວຍອາການທັງປວງ

**ປະຖະມະສັດທາສູດທີ ໑ ຈົບ**

# ໘. ທຸຕິຍະສັດທາສູດ

## ວ່າດ້ວຍສັດທາ ສູດທີ ໘

[ກ໘] ພິກຂຸທັງຫຼາຍ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ມີສິນ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງ ນັ້ນຢ່າງນີ້ ທ່ານເພິ່ງບຳເພັນອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີ ສິນ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສິນ ເມື່ອນັ້ນ ທ່ານຈຶ່ງຊື່ ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸເປັນຜູ້ມີສັດທາແລະມີສິນ ແຕ່ບໍ່ເປັນພະຫູສູດ ຯລຯ ເປັນພະຫູສູດ ແຕ່ບໍ່ເປັນ ທຳ ມະກະຖຶກ ຯລຯ ເປັນທຳມະກະຖຶກ ແຕ່ບໍ່ເຂົ້າໄປສູ່ບໍລິສັດ ຯລຯ ເຂົ້າໄປສູ່ບໍລິສັດ ແຕ່ບໍ່ແກ່ກ້າ ສະແດງທຳແກ່ບໍລິສັດ ຯລຯ ແກ່ກ້າສະແດງທຳແກ່ບໍລິສັດ ແຕ່ບໍ່ໄດ້ສຳຜັດສັນຕະວິໂມກ ບໍ່ມີ ຮູບເພາະລ່ວງຮູບທັງຫຼາຍໄດ້ດ້ວຍກາຍຢູ່ ຯລຯ ໄດ້ສຳຜັດ ສັນຕະວິໂມກເຊິ່ງບໍ່ມີຮູບເພາະລ່ວງ ຮູບທັງຫຼາຍໄດ້ດ້ວຍກາຍຢູ່ ແຕ່ບໍ່ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ທ່ານຈຶ່ງຊື່ວ່າເປັນຜູ້ບໍ່ ບໍລິບູນດ້ວຍອົງນັ້ນຢ່າງນີ້ ທ່ານເພິ່ງພໍ່າເພັງອົງນັ້ນ ໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນ ເປັນຜູ້ມີສັດທາ ມີສິນ ເປັນພະຫູສູດ ເປັນທຳມະກະຖຶກ ເຂົ້າໄປສູ່ບໍລິສັດ ແກ່ກ້າສະແດງທຳແກ່ ບໍລິສັດ ໄດ້ສຳຜັດສັນຕະວິໂມກເຊິ່ງບໍ່ມີຮູບ ເພາະລ່ວງຮູບທັງຫຼາຍໄດ້ດ້ວຍກາຍຢູ່ ແລະເຮັດໃຫ້ ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນ ຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ເມື່ອໃດ ພິກຂຸ

໑. ມີສັດທາ
໒. ເປັນພະຫູສູດ
໕. ເຂົ້າໄປສູ່ບໍລິສັດ
໗. ໄດ້ສຳຜັດສັນຕະວິໂມກເຊິ່ງບໍ່ມີຮູບ ເພາະລ່ວງຮູບທັງຫຼາຍໄດ້ດ້ວຍກາຍຢູ່
໘. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

໓. ມີສີນ
໔. ເປັນທຳມະກະຖຶກ
໖. ແກ່ກ້າສະແດງທຳແກ່ບໍລິສັດ

ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໘ ປະການນີ້ແລ ຊື່ວ່າເປັນຜູ້ກໍ່ໃຫ້ເກີດຄວາມເຫຼື້ອມໃສໄດ້ຮອບດ້ານ ແລະເປັນຜູ້ບໍລິບູນດ້ວຍອາການທັງປວງ

**ທຸຕິຍະສັດທາສູດທີ ໘ ຈົບ**

# ໒. ປະຖະມະມະຣະນັດສະຕິສູດ

## ວ່າດ້ວຍການຈະເລີນມະຣະນັດສະຕິ°ສູດທີ ໑

[໗໒] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ຄິນຊະກາວະສະຖາຣາມ ໃນນາທິກະຄາມ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

"ພິກຂຸທັງຫຼາຍ ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ ທ່ານທັງຫຼາຍ ຈະເລີນມະຣະນັດສະຕິຢູ່ຫຼືບໍ່?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມຢ່າງນີ້ແລ້ວ ພິກຂຸອົງໜຶ່ງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ຄືນໜຶ່ງແລະວັນໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີ ພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນມະຣະນັດສະຕິຢ່າງນີ້ແລ"

ພິກຂຸອີກອົງໜຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ?"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ວັນໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນມະຣະນັດສະຕິຢ່າງນີ້ແລ"

ພິກຂຸອີກອົງໜຶ່ງ ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງ ກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ເຄິ່ງວັນ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນມະຣະນັດສະຕິຢ່າງນີ້ແລ"

ພິກຂຸອີກອົງໜຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ?"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະສັນບິນທະບາດຄາບໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນ ມະຣະນັດສະຕິຢ່າງ ນີ້ແລ"

ພິກຂຸອີກອົງໜຶ່ງ ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ?"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະສັນບິນທະບາດເຄິ່ງໜຶ່ງ ເຮົາເພິ່ງມະນະສິການເຖິງ

ຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນ ມະຣະນັດສະຕິຢ່າງນີ້ແລ"

ພິກຂຸອີກອົງໜຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ?"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍ້ຳກິນຄຳເຂົ້າ ໔-໕ ຄຳ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນ ມະຣະນັດສະຕິຢ່າງນີ້ແລ"

ພິກຂຸອີກອົງໜຶ່ງ ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ"

ພິກຂຸຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍ້ຳກິນຄຳເຂົ້າ ໑ ຄຳ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນ ມະຣະນັດສະຕິຢ່າງນີ້ແລ"

ພິກຂຸອີກອົງໜຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍຍັງຈະເລີນມະຣະນັດສະຕິຢູ່"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ທ່ານຈະເລີນມະຣະນັດສະຕິຢ່າງໃດ?"

ພິກຂຸຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ຂ້າພຣະອົງມີຄວາມຄິດ ຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫາຍໃຈເຂົ້າຫາຍໃຈອອກ ຫຼື ຫາຍໃຈອອກຫາຍໃຈເຂົ້າ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ" ຂ້າພຣະອົງຈະເລີນມະຣະນັດສະຕິຢ່າງນີ້ແລ"

ເມື່ອພິກຂຸເຫຼົ່ານັ້ນ ຂາບທູນຢ່າງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດວ່າ "ພິກຂຸທັງຫຼາຍ ພິກຂຸອົງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອນໍ ເຮົາເພິ່ງເປັນຢູ່ໄດ້ຄືນໜຶ່ງ ແລະວັນໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍນໍ"

ພິກຂຸອີກຮູບໜຶ່ງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອໜໍ ເຮົາເພິ່ງເປັນຢູ່ໄດ້ວັນໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍໜໍ"

ພິກຂຸອີກຮູບໜຶ່ງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອໜໍ ເຮົາເພິ່ງເປັນຢູ່ໄດ້ເຄິ່ງວັນ ເຮົາເພິ່ງມະນະສິການເຖິງຄຳຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍໜໍ"

ພິກຂຸອີກຮູບໜຶ່ງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອໜໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະສັນບິນທະບາດຄາບໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍໜໍ"

ພິກຂຸອີກຮູບໜຶ່ງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອໜໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະສັນບິນທະບາດເຄິ່ງໜຶ່ງ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ ຫຼາຍໜໍ"

ພິກຂຸອີກຮູບໜຶ່ງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອໜໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍ້ຳກິນຄຳເຂົ້າ ໔-໕ ຄຳ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ ຫຼາຍໜໍ"

ພິກຂຸທັງຫຼາຍ ເຮົາກ່າວວ່າພິກຂຸທັງ ໖ ຮູບນີ້ ຍັງເປັນຜູ້ຜະໝາດຢູ່ ຈະເລີນມະຣະນັດສະຕິ ຢ່າງເພົາເພື່ອຄວາມສິ້ນອາສະວະທັງຫຼາຍ

ພິກຂຸທັງຫຼາຍ ສ່ວນພິກຂຸອີກຮູບໜຶ່ງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອໜໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫຍ້ຳກິນຄຳເຂົ້າ ໑ ຄຳ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍໜໍ"

ແລະພິກຂຸອີກຮູບໜຶ່ງທີ່ຈະເລີນມະຣະນັດສະຕິຢ່າງນີ້ວ່າ "ໂອໜໍ ເຮົາເພິ່ງເປັນຢູ່ໄດ້ພຽງຊົ່ວຂະນະຫາຍໃຈເຂົ້າຫາຍໃຈອອກ ຫຼື ຫາຍໃຈອອກຫາຍໃຈເຂົ້າ ເຮົາເພິ່ງມະນະສິການເຖິງຄຳສອນຂອງພຣະຜູ້ມີພຣະພາກເຈົ້າ ເຮົາເພິ່ງເຮັດກິດໃຫ້ຫຼາຍໜໍ"

ພິກຂຸທັງຫຼາຍ ເຮົາກ່າວວ່າພິກຂຸທັງ ໒ ຮູບນີ້ເປັນຜູ້ບໍ່ຜະໝາດຢູ່ ຈະເລີນມະຣະນັດສະຕິຢ່າງແຮງກ້າເພື່ອຄວາມສິ້ນອາສະວະທັງຫຼາຍ ເພາະເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ວ່າ "ເຮົາທັງຫຼາຍຈັກເປັນຜູ້ບໍ່ຜະໝາດຢູ່ ຈັກຈະເລີນມະຣະນັດສະຕິຢ່າງແຮງກ້າເພື່ອຄວາມສິ້ນອາສະວະທັງຫຼາຍ" ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ຢ່າງນີ້ແລ

**ປະຖະມະມະຣະນັດສະຕິສູດທີ ๓ ຈົບ**

# ๘. ທຸຕິຍະມະຣະນັດສະຕິສູດ

## ວ່າດ້ວຍການຈະເລີນມະຣະນັດສະຕິ[๒]ສູດທີ ๘

[໗๘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ຄິນຊະກາວະສະຖາຣາມໃນນາທິກະຄາມ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ໆລໆ ພິກຂຸທັງຫຼາຍ ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເມື່ອກາງເວັນຜ່ານໄປ ກາງຄືນກ້າວເຂົ້າມາ ພິຈາລະນາ ດັ່ງນີ້ວ່າ "ປັດໄຈແຫ່ງຄວາມຕາຍຂອງເຮົາມີຫຼາຍແທ້ ຄື ງູເພິ່ງກັດເຮົາກໍໄດ້ ແມງງອດເພິ່ງຕອດເຮົາກໍໄດ້ ຫຼືຂີ້ເຂັບເພິ່ງກັດເຮົາກໍໄດ້ ເພາະເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍ[๓]ນັ້ນ ເຮົາເພິ່ງພະລາດລົ້ມກໍໄດ້ ພັດຕາຫານທີ່ເຮົາສັນແລ້ວບໍ່ເພິ່ງຍ່ອຍກໍໄດ້ ປິຂອງເຮົາເພິ່ງກຳເຮີບກໍໄດ້ ເສມຫະຂອງເຮົາເພິ່ງກຳເຮີບກໍໄດ້ ລົມມີພິດດັ່ງອາວຸດຂອງເຮົາເພິ່ງກຳເຮີບກໍໄດ້ ພວກມະນຸດ ເພິ່ງທຳຮ້າຍເຮົາກໍໄດ້ ຫຼື ພວກອະມະນຸດເພິ່ງທຳຮ້າຍເຮົາກໍໄດ້ ເພາະເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ" ພິກຂຸທັງຫຼາຍ ພິກຂຸນັ້ນເພິ່ງພິຈາລະນາເຫັນດັ່ງນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງຄືນມີຢູ່ຫຼືບໍ່?"

ຖ້າພິກຂຸພິຈາລະນາຢູ່ຮູ້ຢ່າງນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງຄືນຍັງມີຢູ່" ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນຂັນແຂງ ຄວາມບໍ່ທໍ້ຖອຍ ສະຕິແລະສຳຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼື ມີຫົວທີ່ຖືກໄຟໄໝ້ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນຂັນແຂງ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະ ໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າ ຫຼືໄຟທີ່ໄໝ້ຫົວນັ້ນ ແມ່ນສັນໃດ ພິກຂຸນັ້ນກໍສັນນັ້ນ ຄືກັນ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນຂັນແຂງ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ຖ້າພິກຂຸພິຈາລະນາຢູ່ຮູ້ຢ່າງນີ້ວ່າ "ບາບກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນ

ອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງຄືນບໍ່ມີ" ພິກຂຸນັ້ນເພິ່ງເປັນຜູ້ມີປີຕິ ແລະປາໂມດນັ້ນແລ ຕາມ ຕັ້ງໃຈຮູ້ໃນກຸສົນທຳທັງຫຼາຍທັງກາງເວັນແລະກາງຄືນຢູ່ເທີ້ນ

ພິກຂຸໃນທຳວິໄນນີ້ ເມື່ອກາງຄືນຜ່ານໄປ ກາງເວັນກ້າວເຂົ້າມາ ພິຈາລະນາເຫັນດັ່ງນີ້ວ່າ "ປັດໄຈແຫ່ງຄວາມຕາຍຂອງເຮົາມີຫຼາຍແທ້ ຄື ງູເພິ່ງກັດເຮົາກໍໄດ້ ແມງງອດເພິ່ງຕອດເຮົາກໍໄດ້ ຫຼື ຂີ້ເຂັບເພິ່ງກັດເຮົາກໍໄດ້ ເພາະເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ ເຮົາເພິ່ງພະລາດລົ້ມກໍໄດ້ ພັດຕາຫານທີ່ເຮົາສັນແລ້ວບໍ່ເພິ່ງຍ່ອຍກໍໄດ້ ປິຂອງເຮົາເພິ່ງກຳເຣີບກໍໄດ້ ເສມຫະຂອງເຮົາເພິ່ງກຳເຣີບກໍໄດ້ ລົມມີພິດດັ່ງອາວຸດຂອງເຮົາເພິ່ງກຳເຣີບກໍໄດ້ ພວກມະນຸດເພິ່ງທຳຮ້າຍເຮົາກໍໄດ້ ຫຼືພວກອະມະນຸດເພິ່ງທຳຮ້າຍເຮົາກໍໄດ້ ເພາະເຫດນັ້ນ ເຮົາເພິ່ງຕາຍ ເຮົາເພິ່ງມີອັນຕະລາຍນັ້ນ" ພິກຂຸທັງຫຼາຍ ພິກຂຸນັ້ນເພິ່ງພິຈາລະນາເຫັນດັ່ງນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍ ແກ່ເຮົາຜູ້ຈະຕາຍໃນເວລາກາງເວັນຍັງມີຢູ່ຫຼືບໍ່?"

ຖ້າພິກຂຸພິຈາລະນາຢູ່ຮູ້ຢ່າງນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງເວັນຍັງມີຢູ່" ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນຂັນແຂງ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼື ມີຫົວທີ່ຖືກໄຟໄໝ້ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນຂັນແຂງ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າ ຫຼືໄຟທີ່ໄໝ້ຫົວນັ້ນ ແມ່ນສັນໃດ ພິກຂຸນັ້ນກໍສັນນັ້ນ ຄືກັນ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນຂັນແຂງ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ຖ້າພິກຂຸພິຈາລະນາຢູ່ຮູ້ຢ່າງນີ້ວ່າ "ບາບອະກຸສົນທຳທີ່ເຮົາຍັງລະບໍ່ໄດ້ ເຊິ່ງຈະເພິ່ງເປັນອັນຕະລາຍແກ່ເຮົາຜູ້ຈະຕາຍໃນເວລາກາງເວັນບໍ່ມີ" ພິກຂຸນັ້ນເພິ່ງເປັນຜູ້ມີປີຕິ ແລະປາໂມດນັ້ນແລ ຕາມຕັ້ງໃຈຮູ້ໃນກຸສົນທຳທັງຫຼາຍທັງກາງເວັນແລະກາງຄືນຢູ່ເທີ້ນ

ພິກຂຸທັງຫຼາຍ ມະຣະນັດສະຕິທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວຢ່າງນີ້ແລ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ ເປັນແນວນີ້ແລ

**ທຸຕິຍະມະຣະນັດສະຕິສູດທີ ໘ ຈົບ**

# ๕. ປະຖະມະສຳປະທາສູດ

## ວ່າດ້ວຍສຳປະທາ ສູດທີ ໑

[໗໕] ພິກຂຸທັງຫຼາຍ ສຳປະທາ (ຄວາມເຖິງພ້ອມ) ໘ ປະການນີ້

ສຳປະທາ ໘ ປະການ ອັນໃດແດ່ ຄື

໑. ອຸດຖານະສຳປະທາ (ຄວາມເຖິງພ້ອມດ້ວຍຄວາມໝັ່ນ)
໒. ອາຣັກຂະສຳປະທາ (ຄວາມເຖິງພ້ອມດ້ວຍການຮັກສາ)
໓. ກັນລະຍານະມິດຕະຕາ (ຄວາມເປັນຜູ້ມີມິດດີ)
໔. ສະມະຊີວິຕາ (ຄວາມເປັນຢູ່ເໝາະສົມ)
໕. ສັດທາສຳປະທາ (ຄວາມເຖິງພ້ອມດ້ວຍສັດທາ)
໖. ສີລະສຳປະທາ (ຄວາມເຖິງພ້ອມດ້ວຍສີນ)
໗. ຈາຄະສຳປະທາ (ຄວາມເຖິງພ້ອມດ້ວຍຈາຄະ)
໘. ປັນຍາສຳປະທາ (ຄວາມເຖິງພ້ອມດ້ວຍປັນຍາ)

ພິກຂຸທັງຫຼາຍ ສຳປະທາ ໘ ປະການນີ້ແລ

ຄົນຂະຫຍັນໝັ່ນພຽນໃນການເຮັດວຽກງານ
ບໍ່ຜະໝາດ ຮູ້ວິທີການລ້ຽງຊີບແຕ່ພໍເໝາະ
ຮັກສາຊັບທີ່ຫາມາໄດ້ ເປັນຜູ້ມີສັດທາ ເຖິງພ້ອມດ້ວຍສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຊຳຣະທາງແຫ່ງປະໂຫຍດທີ່ມີໃນພົບໜ້າຢູ່ເປັນນິດ
ທີ່ພຣະພຸດທະເຈົ້າຜູ້ມີພຣະນາມວ່າສັດຈະ ຕັດທຳ ໘ ປະການດັ່ງກ່າວມານີ້
ເພື່ອຜູ້ຄອງເຮືອນ ຜູ້ມີສັດທາ
ອັນເປັນເຫດນຳສຸກມາໃຫ້ໃນໂລກທັງ ໒ ຄື
ປະໂຫຍດເກື້ອກູນໃນພົບນີ້ ແລະສຸກໃນພົບໜ້າ
ຈາຄະ ບຸນນີ້ຍ່ອມຈະເລີນຍິ່ງຂຶ້ນແກ່ຄະລຶຫັດທັງຫຼາຍ ດ້ວຍປະການດັ່ງນີ້

**ປະຖະມະສຳປະທາສູດທີ ໕ ຈົບ**

# ໒. ທຸຕິຍະສຳປະທາສູດ

## ວ່າດ້ວຍສຳປະທາ ສູດທີ ໘

[໗໒] ພິກຂຸທັງຫຼາຍ ສຳປະທາ ໘ ປະການນີ້

ສຳປະທາ ໘ ປະການ ອັນໃດແດ່ ຄື

໑. ອຸດຖານະສຳປະທາ
໒. ອາຣັກຂະສຳປະທາ
໓. ກັນລະຍານະມິດຕະຕາ
໔. ສະມະຊີວິຕາ
໕. ສັດທາສຳປະທາ
໖. ສີລະສຳປະທາ
໗. ຈາຄະສຳປະທາ
໘. ປັນຍາສຳປະທາ

ອຸດຖານະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ລ້ຽງຊີບດ້ວຍວຽກງານໃດ ຈະເປັນກະສິກຳ ພານິດຊະກຳ ໂຄຣັກຂະກຳ ເປັນຊ່າງສອນ ຮັບຣາດຊະການ ຫຼື ສິລະປະຢ່າງໃດຢ່າງໜຶ່ງກໍຕາມ ເປັນຜູ້ຂະຫຍັນບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາ ອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ວຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ນີ້ຮຽກວ່າ ອຸດຖານະສຳປະທາ

ອາຣັກຂະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ມີໂພຄະຊັບທີ່ຫາມາໄດ້ດ້ວຍຄວາມຂະຫຍັນໝັ່ນພຽນ ເກັບລວບລວມດ້ວຍເຫື່ອແຮງ ອາບເຫື່ອຕາງນ້ຳ ປະກອບດ້ວຍທຳ ໄດ້ມາໂດຍທຳ ເຂົາຮັກສາຄຸ້ມຄອງໂພຄະຊັບນັ້ນດ້ວຍຄິດວ່າ “ເຮັດແນວໃດ ໂພຄະຊັບເຫຼົ່ານີ້ຂອງເຮົາຈຶ່ງຈະບໍ່ຖືກພຣະຣາຊາຢຶດ ໂຈນບໍ່ລັກ ໄຟບໍ່ໄໝ້ ນ້ຳບໍ່ພັດໄປ ທາຍາດຜູ້ບໍ່ເປັນທີ່ຮັກບໍ່ລັກໄປ” ນີ້ຮຽກວ່າ ອາຣັກຂະສຳປະທາ

ກັນລະຍານະມິດຕະຕາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ວາງຕົວເໝາະສົມ ເຈຣະຈາ ສົນທະນາກັບຄົນໃນໝູ່ບ້ານ ຫຼື ໃນນິຄົມທີ່ ຕົນອາໄສຢູ່ ຈະເປັນຄະຫະບໍດີ ບຸດຄະຫະບໍດີ ຄົນໜຸ່ມຜູ້ເຄັ່ງສິນ ຫຼື ຄົນແກ່ຜູ້ ເຄັ່ງສິນກໍຕາມ ຜູ້ເຖິງພ້ອມດ້ວຍສັດທາ ເຖິງພ້ອມດ້ວຍສິນ ເຖິງພ້ອມດ້ວຍຈາຄະ ແລະເຖິງພ້ອມດ້ວຍ

ປັນຍາ ຄອຍຖ້າສຶກສາສັດທາສຳປະທາຂອງທ່ານຜູ້ເຖິງພ້ອມດ້ວຍສັດທາຕາມສົມຄວນ ຄອຍຖ້າສຶກສາສີລະສຳປະທາຂອງທ່ານຜູ້ເຖິງພ້ອມດ້ວຍສີນຕາມສົມຄວນ ຄອຍຖ້າສຶກສາຈາຄະສຳປະທາຂອງທ່ານຜູ້ເຖິງພ້ອມດ້ວຍຈາຄະຕາມສົມຄວນ ແລະຄອຍຖ້າສຶກສາປັນຍາສຳປະທາຂອງທ່ານຜູ້ເຖິງພ້ອມດ້ວຍປັນຍາຕາມສົມຄວນ ນີ້ຮຽກວ່າ ກັນລະຍານະມິດຕະຕາ

ສະມະຊີວິຕາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ຮູ້ທາງຈະເລີນແຫ່ງໂພຄະຊັບ ແລະທາງເສື່ອມແຫ່ງໂພຄະຊັບແລ້ວ ລ້ຽງຊີວິດແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ “ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ” ປຽບເໝືອນຄົນຊັ່ງຂອງຫຼືລູກມືຂອງຄົນຊັ່ງຂອງຍົກຊິງຊັ່ງຂຶ້ນເບິ່ງກໍຮູ້ໄດ້ວ່າ “ຕ້ອງລຸດລົງ ເທົ່ານີ້ ຫຼືເພີ່ມຂຶ້ນເທົ່ານີ້” ສັນໃດ ກຸນລະບຸດ ກໍສັນນັ້ນຄືກັນ ຮູ້ທາງຈະເລີນແຫ່ງໂພຄະຊັບແລະທາງເສື່ອມແຫ່ງໂພຄະຊັບແລ້ວລ້ຽງຊີບແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ “ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ” ຖ້າກຸນລະບຸດນີ້ມີຣາຍຮັບໜ້ອຍ ແຕ່ລ້ຽງຊີບຢ່າງຟຸ່ມເຟືອຍ ກໍຈະມີຜູ້ກ່າວຫາເຂົາໄດ້ວ່າ “ກຸນລະບຸດຜູ້ນີ້ໃຊ້ຈ່າຍໂພຄະຊັບ ເໝືອນຄົນກິນໝາກເດື່ອ” ຖ້າກຸນລະບຸດນີ້ມີຣາຍຮັບຫຼາຍ ແຕ່ລ້ຽງຊີວິດຢ່າງຝືດເຄືອງ ກໍຈະມີຜູ້ກ່າວຫາເຂົາ ໄດ້ວ່າ “ກຸນລະບຸດຜູ້ນີ້ຈັກຕາຍຢ່າງບໍ່ສົມຖານະ” ແຕ່ເພາະກຸນລະບຸດນີ້ຮູ້ທາງຈະເລີນແຫ່ງ ໂພຄະຊັບແລະທາງເສື່ອມແຫ່ງໂພຄະຊັບແລ້ວລ້ຽງຊີວິດແຕ່ພໍເໝາະ ບໍ່ໃຫ້ຟຸ່ມເຟືອຍຫຼາຍ ບໍ່ໃຫ້ຝືດເຄືອງຫຼາຍດ້ວຍຄິດວ່າ “ດ້ວຍການໃຊ້ຈ່າຍຢ່າງນີ້ ຣາຍຮັບຂອງເຮົາຈັກເກີນຣາຍຈ່າຍ ແລະຣາຍຈ່າຍຂອງເຮົາຈັກບໍ່ເກີນຣາຍຮັບ” ນີ້ຮຽກວ່າ ສະມະຊີວິຕາ

ສັດທາສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ມີສັດທາ ເຊື່ອປັນຍາເຄື່ອງຕັດສະຮູ້ຂອງຕະຖາຄົດວ່າ “ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ” ນີ້ຮຽກວ່າ ສັດທາສຳປະທາ

ສີລະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ນີ້ຮຽກວ່າ ສີລະສຳປະທາ

ຈາຄະສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ຯລຯ ຄວນແກ່ການຂໍຍິນດີໃນການແຈກທານ ນີ້ຮຽກວ່າ ຈາຄະສຳປະທາ

ປັນຍາສຳປະທາ ເປັນແນວໃດ?

ຄື ກຸນລະບຸດໃນໂລກນີ້ເປັນຜູ້ມີປັນຍາ ຄື ຯລຯ ໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ນີ້ຮຽກວ່າ ປັນຍາສຳປະທາ

ພິກຂຸທັງຫຼາຍ ສຳປະທາ ໔ ປະການນີ້ແລ
ຄົນຂະຫຍັນໝັ່ນພຽນໃນການເຮັດວຽກງານ
ບໍ່ຜະໝາດ ຮູ້ວິທີການລ້ຽງຊີວິດແຕ່ພໍເໝາະ
ຮັກສາຊັບທີ່ຫາມາໄດ້ ເປັນຜູ້ມີສັດທາ ເຖິງພ້ອມດ້ວຍສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່
ຊຳຣະທາງແຫ່ງປະໂຫຍດທີ່ມີໃນພົບໜ້າຢູ່ເປັນນິດ
ທີ່ພຣະພຸດທະເຈົ້າຜູ້ມີພະນາມວ່າສັດຈະ ຕັດທຳ ໔ ປະການດັ່ງກ່າວມານີ້
ເພື່ອຜູ້ຄອງເຮືອນ ຜູ້ມີສັດທາ
ອັນເປັນເຫດນຳສຸກມາໃຫ້ໃນໂລກທັງ ໒ ຄື
ປະໂຫຍດເກື້ອກູນໃນພົບນີ້ ແລະສຸກໃນພົບໜ້າ
ຈາຄະ ບຸນນີ້ຍ່ອມຈະເລີນຍິ່ງຂຶ້ນແກ່ຄະລິຫັດທັງຫຼາຍ ດ້ວຍປະການດັ່ງນີ້

**ທຸຕິຍະສຳປະທາສູດທີ ໖ ຈົບ**

# ໗. ອິດສາສູດ

## ວ່າດ້ວຍຄວາມຢາກໄດ້ລາບ

[໗໗] ໃນທີ່ນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸ ທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວດັ່ງນີ້ວ່າ ບຸກຄົນ ໔ ຈຳພວກນີ້ ມີຜາກົດຢູ່ໃນໂລກ ບຸກຄົນ ໔ ຈຳພວກໃດແດ່ ຄື

໑. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ແຕ່ລາບກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານຈຶ່ງເສົ້າໂສກ ລຳບາກໃຈ ຮ່ຳໄຮ ທຸບເອິກ ຄ່ຳຄວນ ເຖິງຄວາມເລີເລືອນ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນ ຜູ້ບໍ່ໄດ້ລາບ ເສົ້າໂສກ ຮ່ຳໄຮ ແລະເຄື່ອນຈາກພຣະສັດທຳ

໔. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ່ນ ພາກພຽນ ພະຍາຍາມ ເພື່ອໃຫ້ໄດ້ລາບ ເມື່ອທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ລາບກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານຈຶ່ງມົວເມົາ ຜະໝາດ ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ໝັ່ນ ພາກພຽນ ພະຍາຍາມ ເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ໄດ້ລາບ ມົວເມົາ ຜະໝາດ ແລະເຄື່ອນຈາກພຣະສັດທຳ

໓. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ລາບກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານຈຶ່ງເສົ້າໂສກ ລຳບາກໃຈ ຮ່ຳໄຮ ທຸບເອິກຄ່ຳຄວນ ເຖິງຄວາມ ເລີເລືອນ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ແຕ່ບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ບໍ່ໄດ້ລາບ ເສົ້າໂສກ ຮ່ຳໄຮ ແລະເຄື່ອນຈາກພຣະສັດທຳ

໔. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ແຕ່ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ແຕ່ລາບກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານຈຶ່ງມົວເມົາ ຜະໝາດ ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບ ແຕ່ບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ໄດ້ລາບ ມົວເມົາ ຜະໝາດ ແລະເຄື່ອນຈາກພຣະສັດທຳ

໕. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ແຕ່ລາບ ກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານກໍບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ຮ່ຳໄຮ ບໍ່ທຸບເອິກຄ່ຳຄວນ ບໍ່ເຖິງຄວາມເລີເລືອນ ພິກຂຸນີ້ເຮົາ ຮຽກວ່າຜູ້ຢາກໄດ້ລາບຢູ່ ໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ບໍ່ໄດ້ລາບ ບໍ່ເສົ້າໂສກ ບໍ່ຮ່ຳໄຮ ແລະບໍ່ເຄື່ອນຈາກ ພຣະສັດທຳ

໖. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ທ່ານໝັ່ນ ພາກພຽນ ພະຍາຍາມເພື່ອ ໃຫ້ໄດ້ລາບ ເມື່ອທ່ານໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ລາບກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານກໍບໍ່ມົວເມົາ ບໍ່ຜະໝາດ ບໍ່ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ໝັ່ນ ພາກພຽນ ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ໄດ້ລາບ ບໍ່ມົວເມົາ ບໍ່ຜະໝາດ ແລະບໍ່ ເຄື່ອນຈາກພຣະສັດທຳ

໗. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ແຕ່ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ

ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ລາບກໍບໍ່ເກີດຂຶ້ນ ເພາະບໍ່ໄດ້ລາບນັ້ນ ທ່ານກໍບໍ່ເສົ້າໂສກ ບໍ່ລຳບາກໃຈ ບໍ່ຮ່ຳໄຮ ບໍ່ທຸບເອິກ ຄ່ຳຄວນ ບໍ່ເຖິງຄວາມເລີເລືອນ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ແຕ່ບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ບໍ່ໄດ້ລາບ ບໍ່ເສົ້າໂສກ ບໍ່ຮ່ຳໄຮ ແລະບໍ່ເຄື່ອນຈາກພຣະສັດທຳ

๘. ເມື່ອພິກຂຸໃນພຣະທຳວິໄນນີ້ຢູ່ຢ່າງສະຫງັດ ແຕ່ບໍ່ປະພຶດໃຫ້ຕໍ່ເນື່ອງ ຄວາມຢາກໄດ້ລາບຍ່ອມເກີດຂຶ້ນ ແຕ່ທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ເມື່ອທ່ານບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມ ເພື່ອໃຫ້ໄດ້ລາບ ແຕ່ລາບກໍເກີດຂຶ້ນ ເພາະໄດ້ລາບນັ້ນ ທ່ານກໍບໍ່ມົວເມົາ ບໍ່ຜະໝາດ ບໍ່ເລີນເລີ່ ພິກຂຸນີ້ເຮົາຮຽກວ່າຜູ້ຢາກໄດ້ລາບຢູ່ ແຕ່ບໍ່ໝັ່ນ ບໍ່ພາກພຽນ ບໍ່ພະຍາຍາມເພື່ອໃຫ້ໄດ້ລາບ ທ່ານຊື່ວ່າເປັນຜູ້ໄດ້ລາບ ບໍ່ມົວເມົາ ບໍ່ຜະໝາດ ແລະບໍ່ເຄື່ອນຈາກພຣະສັດທຳ

ຜູ້ມີອາຍຸທັງຫຼາຍ ບຸກຄົນ ๘ ຈຳພວກນີ້ ມີຜາກົດຢູ່ໃນໂລກ

**ອິດສາສູດທີ ๑ ຈົບ**

# ๘. ອະລັງສູດ

## ວ່າດ້ວຍຜູ້ສາມາດເຮັດປະໂຫຍດຕົນແລະຜູ້ອື່ນ

[໑໘] ໃນທີ່ນັ້ນ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຯລຯ ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๖ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແລະມີຄວາມສາມາດສຳລັບຜູ້ອື່ນ ທຳ ๖ ປະການ ອັນໃດແດ່ ຄື

ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາໄດ້ໄວໃນກຸສົນທຳທັງຫຼາຍ
໒. ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໓. ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້
໔. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໕. ມີວາຈາງາມ ເຈຣະຈາຖ້ອຍຄຳໄພເລາະ ປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍບໍ່ຫຍາບຄາຍໃຫ້ຮູ້ຄວາມໝາຍໄດ້
໖. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຮ່າເຣິງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ ເປັນຜູ້ມີຄວາມສາມາດ ສຳລັບຕົນເອງ ແລະມີຄວາມສາມາດສຳລັບຜູ້ອື່ນ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແລະມີຄວາມສາມາດສຳລັບຜູ້ອື່ນ ທຳ ໕ ປະການ ອັນໃດແດ່ ຄື

ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ແຕ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໒. ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້
໓. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໔. ມີວາຈາງາມ ໆລໆ ໃຫ້ຮູ້ຄວາມໝາຍໄດ້
໕. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈ ໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໕ ປະການນີ້ ເປັນຜູ້ມີຄວາມສາມາດ ສຳລັບຕົນເອງ ແລະມີຄວາມສາມາດສຳລັບຜູ້ອື່ນ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາໄດ້ໄວໃນກຸສົນທຳທັງຫຼາຍ
໒. ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໓. ພິຈາລະນາເນື້ອຄວາມທຳທີ່ຊົງຈຳໄວ້ໄດ້ ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໔. ບໍ່ມີວາຈາງາມ ບໍ່ເຈຣະຈາຖ້ອຍຄຳໄພເລາະ ບໍ່ປະກອບດ້ວຍວາຈາ ຊາວເມືອງທີ່ ສະຫຼະສະຫຼວຍບໍ່ຫຍາບຄາຍໃຫ້ຮູ້ຄວາມໝາຍໄດ້ ທັງບໍ່ຊີ້ແຈ່ງໃຫ້ ເພື່ອນພົມມະຈາຣີເຫັນແຈ້ງ ບໍ່ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ບໍ່ຊຸກຍູ້ໃຈ ໃຫ້ອາດຫານແກ່ກ້າ ບໍ່ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ ເປັນຜູ້ມີຄວາມສາມາດ ສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ ທຳ ໔ ປະການ ອັນໃດແດ່ ຄື

ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາໄດ້ໄວໃນກຸສົນທຳທັງຫຼາຍ
໔. ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ແຕ່ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ທັງບໍ່ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ
໓. ມີວາຈາງາມ ເຈຣະຈາຖ້ອຍຄຳໄພເລາະ ຯລຯ ໃຫ້ຮູ້ຄວາມໝາຍໄດ້
໔. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຯລຯ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ແຕ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້
໔. ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້
໓. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແຕ່ບໍ່ມີວາຈາງາມ ບໍ່ເຈຣະຈາຖ້ອຍຄຳໄພເລາະ ບໍ່ປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍ ບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ທັງບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີ ເຫັນແຈ້ງ ບໍ່ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ບໍ່ຊຸກຍູ້ໃຈໃຫ້ອາດຫານ ແກ່ກ້າ ບໍ່ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ ທຳ ໓ ປະການ ອັນໃດແດ່ ຄື

ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ແຕ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້

໔. ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ທັງບໍ່ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ມີວາຈາງາມ ໆລໆ ໃຫ້ຮູ້ຄວາມໝາຍໄດ້

໖. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໖ ປະການນີ້ແລ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດ ສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ ທຳ ໔ ປະການ ອັນໃດແດ່ ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ທັງບໍ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ແຕ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້

໔. ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ແຕ່ບໍ່ມີວາຈາງາມ ໆລໆ ໃຫ້ຮູ້ຄວາມໝາຍໄດ້ບໍ່ ທັງບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ໆລໆ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ ເປັນຜູ້ມີຄວາມສາມາດ ສຳລັບຕົນເອງ ແຕ່ບໍ່ມີຄວາມສາມາດສຳລັບຜູ້ອື່ນ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ ທຳ ໔ ປະການ ອັນໃດແດ່ ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາຣະນາບໍ່ໄດ້ໄວໃນກຸສົນທຳທັງຫຼາຍ ທັງບໍ່ຊົງຈຳທຳທີ່ຟັງແລ້ວໄວ້ໄດ້ ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ບໍ່ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນ ແກ່ທຳ ແຕ່ມີວາຈາງາມ ເຈຣະຈາຖ້ອຍຄຳໄພເລາະ ປະກອບດ້ວຍວາຈາຊາວເມືອງທີ່ ສະຫຼະສະຫຼວຍບໍ່ຫຍາບຄາຍໃຫ້ຮູ້ຄວາມໝາຍໄດ້

໔. ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານ ແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນຣ່າເຣີງ

ຜູ້ມີອາຍຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໔ ປະການນີ້ ເປັນຜູ້ມີຄວາມສາມາດສຳລັບຜູ້ອື່ນ ແຕ່ບໍ່ມີຄວາມສາມາດສຳລັບຕົນເອງ

**ອະລັງສູດທີ ໗ ຈົບ**

# ໙. ປະຣິຫານະສູດ

## ວ່າດ້ວຍທຳເປັນເຫດໃຫ້ພຣະເສຂະເສື່ອມ

[໗໙] ພິກຂຸທັງຫຼາຍ ທຳ ໘ ປະການນີ້ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ

ທຳ ໘ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ມັກວຽກ ງານ
໒. ຄວາມເປັນຜູ້ມັກການ ໂອ້ລົມ
໓. ຄວາມເປັນຜູ້ມັກການ ນອນຫຼັບ
໔. ຄວາມເປັນຜູ້ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ
໗. ຄວາມເປັນຜູ້ມັກທຳເປັນເຄື່ອງຂ້ອງ
໘. ຄວາມເປັນຜູ້ມັກປະປັນຈະທຳ

ພິກຂຸທັງຫຼາຍ ທຳ ໘ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເສື່ອມແກ່ພິກຂຸຜູ້ເປັນເສຂະ
ພິກຂຸທັງຫຼາຍ ທຳ ໘ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ ເປັນເສຂະ
ທຳ ໘ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ບໍ່ມັກ ວຽກງານ
໒. ຄວາມເປັນຜູ້ບໍ່ມັກການ ໂອ້ລົມ
໓. ຄວາມເປັນຜູ້ບໍ່ມັກການ ນອນຫຼັບ
໔. ຄວາມເປັນຜູ້ບໍ່ມັກການ ຄຸກຄີດ້ວຍໝູ່
໕. ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໖. ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ
໗. ຄວາມເປັນຜູ້ບໍ່ມັກທຳເປັນເຄື່ອງຂ້ອງ
໘. ຄວາມເປັນຜູ້ບໍ່ມັກປະປັນຈະທຳ

ພິກຂຸທັງຫຼາຍ ທຳ ໘ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມບໍ່ເສື່ອມແກ່ພິກຂຸຜູ້ເປັນເສຂະ

**ປະຣິຫານະສູດທີ ໙ ຈົບ**

# ໑໐. ກຸສີຕາຣຳພະວັດຖຸສູດ

## ວ່າດ້ວຍເຫດແຫ່ງຄວາມຂີ້ຄ້ານແລະເຫດພາຣົບຄວາມພຽນ

[໗໐] ພິກຂຸທັງຫຼາຍ ກຸສິຕະວັດຖຸ (ເຫດແຫ່ງຄວາມຂີ້ຄ້ານ) ໘ ປະການນີ້

ກຸສິຕະວັດຖຸ ໘ ປະການ ອັນໃດແດ່ ຄື

໑. ພິກຂຸໃນພຣະທຳວິໄນນີ້ມີວຽກທີ່ຕ້ອງເຮັດ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາຈັກ ຕ້ອງເຮັດວຽກ ເມື່ອເຮົາເຮັດວຽກຢູ່ ກາຍຈັກເມື່ອຍລ້າ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດ ໃຫ້ແຈ້ງ ນີ້ເປັນກຸສິຕະວັດຖຸປະການທີ ໑

໒. ພິກຂຸເຮັດວຽກແລ້ວ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາໄດ້ເຮັດວຽກແລ້ວ ເມື່ອເຮົາເຮັດວຽກ ກາຍເມື່ອຍລ້າແລ້ວ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳ ທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສິຕະວັດຖຸປະການທີ ໒

໓. ພິກຂຸຕ້ອງເດີນທາງ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາຈັກຕ້ອງເດີນທາງ ເມື່ອເຮົາເດີນທາງ ກາຍຈັກເມື່ອຍລ້າ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສິຕະວັດຖຸປະການທີ ໓

໔. ພິກຂຸເດີນທາງແລ້ວ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາເດີນທາງແລ້ວ ເມື່ອເຮົາເດີນທາງ ກາຍເມື່ອຍລ້າແລ້ວ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສິຕະວັດຖຸປະການທີ ໔

໕. ພິກຂຸທ່ຽວບິນທະບາດຕາມໝູ່ບ້ານຫຼືນິຄົມ ບໍ່ໄດ້ໂພຊະນະເສົ້າໝອງ ຫຼື ປະນີດບໍລິບູນພຽງພໍຕາມຕ້ອງການ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາທ່ຽວບິນທະບາດຕາມໝູ່ບ້ານຫຼືນິຄົມ ກໍບໍ່ໄດ້ໂພຊະນະເສົ້າໝອງ ຫຼື ປະນີດບໍລິບູນພຽງພໍຕາມຕ້ອງການ ກາຍຂອງເຮົານັ້ນເມື່ອຍລ້າແລ້ວ ບໍ່ຄວນແກ່ວຽກງານ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນ ຯລຯ ນີ້ເປັນກຸສິຕະວັດຖຸປະການທີ ໕

๗. ພິກຂຸທ່ຽວບິນທະບາດຕາມໝູ່ບ້ານ ຫຼື ນິຄົມ ໄດ້ໂພຊະນະເສົ້າໝອງ ຫຼື ປະນີດ ບໍລິບູນພຽງພໍຕາມຕ້ອງການ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາທ່ຽວບິນທະບາດຕາມໝູ່ບ້ານຫຼືນິຄົມ ໄດ້ໂພຊະນະເສົ້າໝອງ ຫຼື ປະນີດບໍລິບູນພຽງພໍຕາມຕ້ອງການແລ້ວ ກາຍຂອງເຮົານັ້ນໜັກ ບໍ່ຄວນແກ່ວຽກງານ ເໝືອນຖົ່ວຣາດຊະມາດຊຸ່ມດ້ວຍນໍ້າ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນ ຯລຯ ນີ້ເປັນກຸສີຕະວັດຖຸປະການທີ ໗

໘. ພິກຂຸເກີດມີອາພາດຂຶ້ນເລັກໜ້ອຍ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາເກີດມີອາພາດຂຶ້ນເລັກໜ້ອຍແລ້ວ ມີຂໍ້ອ້າງທີ່ຈະນອນໄດ້ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນ ຯລຯ ນີ້ເປັນ ກຸສີຕະວັດຖຸປະການທີ ໘

໙. ພິກຂຸຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ກາຍຂອງເຮົານັ້ນຍັງອ່ອນແອ ບໍ່ຄວນແກ່ວຽກງານ ຢ່າຈັ່ງຊັ້ນເລີຍ ເຮົາຈະນອນ" ທ່ານຈຶ່ງນອນສາ ບໍ່ພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນກຸສີຕະວັດຖຸປະການທີ ໙

ພິກຂຸທັງຫຼາຍ ກຸສີຕະວັດຖຸ ໙ ປະການນີ້ແລ
ພິກຂຸທັງຫຼາຍ ອາຣຳພະວັດຖຸ (ເຫດພາຣົບຄວາມພຽນ) ໙ ປະການນີ້
ອາຣຳພະວັດຖຸ ໙ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ມີວຽກທີ່ຕ້ອງເຮັດ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາຈັກຕ້ອງເຮັດວຽກ ເມື່ອເຮົາເຮັດວຽກ ການຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າ ບໍ່ແມ່ນເຮັດໄດ້ງ່າຍ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ທ່ານຈຶ່ງພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ນີ້ເປັນ ອາຣຳພະວັດຖຸປະການທີ ໑

໒. ພິກຂຸເຮັດວຽກແລ້ວ ທ່ານມີຄວາມຄິດຢ່າງນີ້ວ່າ "ເຮົາເຮັດວຽກແລ້ວ ເມື່ອເຮັດວຽກກໍບໍ່ ສາມາດທີ່ຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າໄດ້ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວພາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຮັດໃຫ້ແຈ້ງ" ທ່ານຈຶ່ງພາຣົບຄວາມພຽນ ຯລຯ ນີ້ເປັນອາຣຳພະວັດຖຸປະການທີ ໒

໓. ພິກຂຸຕ້ອງເດີນທາງ ທ່ານມີຄວາມຄິດຢ່າງນີ້ວ່າ ເຮົາຈັກຕ້ອງເດີນທາງ ການທີ່ເຮົາເດີນທາງຢູ່ຈະໃສ່ໃຈຄຳສັ່ງສອນຂອງພຣະພຸດທະເຈົ້າບໍ່ແມ່ນເຮັດໄດ້ງ່າຍ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວພາຣົບຄວາມພຽນ ຯລຯ ນີ້ເປັນອາຣຳພະວັດຖຸປະການທີ ໓

໔. ພິກຂຸເດີນທາງແລ້ວ ທ່ານມີຄວາມຄິດຢ່າງນີ້ວ່າ ເຮົາເດີນທາງແລ້ວ ເມື່ອເດີນທາງກໍບໍ່ສາມາດຈະໃສ່ໃຈຄໍາສັ່ງສອນຂອງພຣະພຸດທະເຈົ້າໄດ້ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວຜາຣົບຄວາມພຽນ ฯລฯ ນີ້ເປັນອາຣໍາພະວັດຖຸປະການທີ ໔

໕. ພິກຂຸທ່ຽວບິນທະບາດຕາມໝູ່ບ້ານ ຫຼື ນິຄົມ ບໍ່ໄດ້ໂພຊະນະເສົ້າໝອງ ຫຼື ປະນີດບໍລິບູນພຽງພໍຕາມຕ້ອງການ ທ່ານມີຄວາມຄິດຢ່າງນີ້ວ່າ ເຮົາທ່ຽວບິນທະບາດຕາມໝູ່ບ້ານຫຼືນິຄົມກໍບໍ່ໄດ້ໂພຊະນະເສົ້າໝອງ ຫຼື ປະນີດບໍລິບູນພຽງພໍຕາມຕ້ອງການ ກາຍຂອງເຮົານັ້ນເບົາ ຄວນແກ່ວຽກງານ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວຜາຣົບຄວາມພຽນฯລฯ ນີ້ເປັນອາຣໍາພະວັດຖຸປະການທີ ໕

໖. ພິກຂຸທ່ຽວບິນທະບາດຕາມໝູ່ບ້ານຫຼືນິຄົມ ໄດ້ໂພຊະນະເສົ້າໝອງຫຼືປະນີດບໍລິບູນພຽງພໍຕາມຕ້ອງການ ທ່ານມີຄວາມຄິດຢ່າງນີ້ວ່າ ເຮົາທ່ຽວບິນທະບາດຕາມໝູ່ບ້ານຫຼືນິຄົມ ໄດ້ໂພຊະນະເສົ້າໝອງຫຼືປະນີດບໍລິບູນພຽງພໍຕາມຕ້ອງການແລ້ວ ກາຍຂອງເຮົາເບົາ ຄວນແກ່ວຽກງານ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວຜາຣົບຄວາມພຽນ ฯລฯ ນີ້ເປັນອາຣໍາພະວັດຖຸປະການທີ ໖

໗. ພິກຂຸເກີດມີອາພາດຂຶ້ນເລັກໜ້ອຍ ທ່ານມີຄວາມຄິດຢ່າງນີ້ວ່າ ເຮົາເກີດມີອາພາດຂຶ້ນເລັກໜ້ອຍແລ້ວ ເປັນໄປໄດ້ທີ່ອາພາດຂອງເຮົາຈະເພີ່ງຮຸນແຮງຂຶ້ນ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວຜາຣົບຄວາມພຽນ ฯລฯ ນີ້ເປັນອາຣໍາພະວັດຖຸປະການທີ ໗

໘. ພິກຂຸຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ທ່ານມີຄວາມຄິດຢ່າງນີ້ວ່າ “ເຮົາຫາຍອາພາດແລ້ວ ແຕ່ຫາຍອາພາດຍັງບໍ່ດົນ ເປັນໄປໄດ້ທີ່ອາພາດຂອງເຮົາຈະເພີ່ງກັບກໍາເຣີບຂຶ້ນ ຢ່າຈັ່ງຊັ້ນເລີຍ ເຮົາຈະຟ້າວຜາຣົບຄວາມພຽນ ເພື່ອເຖິງທໍາທີ່ຍັງບໍ່ເຖິງ ເພື່ອບັນລຸທໍາທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທໍາທີ່ຍັງບໍ່ເຮັດໃຫ້ແຈ້ງ” ທ່ານຈຶ່ງຜາຣົບຄວາມພຽນ ເພື່ອເຖິງທໍາທີ່ຍັງບໍ່ເຖິງ ເພື່ອບັນລຸທໍາທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງ ທໍາທີ່ຍັງບໍ່ເຮັດໃຫ້ແຈ້ງ ນີ້ເປັນອາຣໍາພະວັດຖຸປະການທີ ໘

ພິກຂຸທັງຫຼາຍ ອາຣໍາພະວັດຖຸ ໘ ປະການນີ້ແລ

**ກຸສີຕາຣໍາພະວັດຖຸສູດທີ ໑໐ ຈົບ**

**ຍະມະກະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖະມະສັດທາສູດ
໒. ທຸຕິຍະສັດທາສູດ
໓. ປະຖະມະມະຣະນັດສະຕິສູດ
໔. ທຸຕິຍະມະຣະນັດສະຕິສູດ

# ໔. ສະຕິວັກ

## ໝວດວ່າດ້ວຍສະຕິສຳປະຊັນຍະ

# ໑. ສະຕິສຳປະຊັນຍະສູດ

## ວ່າດ້ວຍຜົນແຫ່ງສະຕິສຳປະຊັນຍະ

[໘໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເມື່ອສະຕິສຳປະຊັນຍະບໍ່ມີ ຫິຣິແລະໂອດຕັບປະຂອງບຸກຄົນຜູ້ມີສະຕິສຳປະຊັນຍະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຫິຣິ ແລະໂອດຕັບປະບໍ່ມີ ອິນຊີສັງວອນຂອງບຸກຄົນຜູ້ມີຫິຣິ ແລະໂອດຕັບປະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອິນຊີສັງວອນບໍ່ມີ ສີນຂອງບຸກຄົນຜູ້ມີອິນຊີສັງວອນວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສີນບໍ່ມີສຳມາສະມາທິຂອງບຸກຄົນຜູ້ມີສີນວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາ ແລະວິຣາຄະຂອງບຸກຄົນ ຜູ້ມີຍະຖາພູຕະຍານທັດສະນະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາ ແລະວິຣາຄະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ

ພິກຂຸທັງຫຼາຍ ຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ສະເກັດ ເປືອກ ມອກ ແມ່ນແກ່ນ ຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນ ແມ່ນສັນໃດ

ພິກຂຸທັງຫຼາຍ ເມື່ອສະຕິສຳປະຊັນຍະບໍ່ມີ ຫິຣິແລະໂອດຕັບປະຂອງບຸກຄົນຜູ້ມີສະຕິສຳປະຊັນຍະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຫິຣິແລະໂອດຕັບປະບໍ່ມີ ອິນຊີສັງວອນຂອງບຸກຄົນຜູ້ມີຫິຣິແລະໂອດຕັບປະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ຯລຯ ວິມຸດຕິ ຍານທັດສະນະຂອງບຸກຄົນຜູ້ມີນິບພິທາ ແລະວິຣາຄະວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ສັນນັ້ນຄືກັນ

ພິກຂຸທັງຫຼາຍ ເມື່ອສະຕິສຳປະຊັນຍະມີ ຫິຣິແລະໂອດຕັບປະຂອງບຸກຄົນຜູ້ສົມບູນດ້ວຍສະຕິສຳປະຊັນຍະ ຊື່ວ່າມີເຫດສົມບູນ ເມື່ອຫິຣິແລະໂອດຕັບປະມີ ອິນຊີສັງວອນ ຂອງບຸກຄົນຜູ້

ສົມບູນດ້ວຍຫິຣິແລະໂອດຕັບປະ ຊື່ວ່າມີເຫດສົມບູນ ເມື່ອອິນຊີສັງວອນມີ ສີນຂອງບຸກຄົນຜູ້ສົມບູນດ້ວຍອິນຊີສັງວອນ ຊື່ວ່າມີເຫດສົມບູນ ເມື່ອສີນມີ ສຳມາສະມາທິຂອງບຸກຄົນຜູ້ສົມບູນດ້ວຍສີນ ຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິ ຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະ ຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນ ດ້ວຍນິບພິທາ ແລະວິຣາຄະ ຊື່ວ່າມີເຫດສົມບູນ

ພິກຂຸທັງຫຼາຍ ຕົ້ນໄມ້ທີ່ມີງ່າແລະໃບສົມບູນ ສະເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມເຖິງຄວາມບໍລິບູນ ແມ່ນສັນໃດ

ພິກຂຸທັງຫຼາຍ ເມື່ອສະຕິສຳປະຊັນຍະມີ ຫິຣິ ແລະໂອດຕັບປະຂອງບຸກຄົນຜູ້ສົມບູນດ້ວຍສະຕິສຳປະຊັນຍະ ຊື່ວ່າມີເຫດສົມບູນ ເມື່ອຫິຣິແລະໂອດຕັບປະມີ ອິນຊີສັງວອນຂອງບຸກຄົນຜູ້ສົມບູນດ້ວຍຫິຣິແລະໂອດຕັບປະ ຊື່ວ່າມີເຫດສົມບູນ ຯລຯ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າມີເຫດສົມບູນ ສັນນັ້ນຄືກັນ

**ສະຕິສຳປະຊັນຍະສູດທີ ໑ ຈົບ**

# ໘. ປຸນນິຍະສູດ

## ວ່າດ້ວຍພຣະປຸນນິຍະ

[໗໘] ຄັ້ງນັ້ນ ທ່ານພຣະປຸນນິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ພຣະທຳມະເທດສະໜາຂອງພຣະຕະຖາຄົດແຈ້ງຊັດໃນບາງເວລາ ແຕ່ໃນບາງເວລາກັບບໍ່ແຈ້ງຊັດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ປຸນນິຍະ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ເຂົ້າໄປຫາທຳມະເທດສະໜາຂອງຕະຖາຄົດຈຶ່ງບໍ່ແຈ້ງຊັດ ແຕ່ເມື່ອໃດ ພິກຂຸເປັນຜູ້ມີສັດທາແລະເຂົ້າໄປຫາເມື່ອນັ້ນ ທຳມະເທດສະໜາຂອງຕະຖາຄົດຈຶ່ງແຈ້ງຊັດ

ປຸນນິຍະ ພິກຂຸເປັນຜູ້ມີສັດທາ ແລະເຂົ້າໄປຫາ ແຕ່ບໍ່ເຂົ້າໄປນັ່ງໃກ້ ຯລຯ ເຂົ້າໄປນັ່ງໃກ້ ແຕ່ບໍ່ສອບຖາມ ຯລຯ ສອບຖາມ ແຕ່ບໍ່ງ່ຽງໂສດຟັງທຳ ຯລຯ ງ່ຽງໂສດຟັງທຳ ແຕ່ຟັງທຳ

ແລ້ວບໍ່ຊົງຈຳທຳໄວ້ໄດ້ ۶ລ۶ ຟັງແລ້ວຊົງຈຳໄວ້ໄດ້ ແຕ່ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ۶ລ۶ ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ແຕ່ກໍບໍ່ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ທຳມະເທດສະໜາຂອງຕະຖາຄົດຈຶ່ງບໍ່ແຈ້ງຊັດ

ປຸນນິຍະ ແຕ່ເມື່ອໃດ ພິກຂຸເປັນຜູ້ມີສັດທາ ເຂົ້າໄປຫາ ເຂົ້າໄປນັ່ງໃກ້ ສອບຖາມ ງ່ຽງໂສດຟັງທຳ ຟັງທຳແລ້ວຊົງຈຳທຳໄວ້ ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ເປັນຜູ້ຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ ເມື່ອນັ້ນ ທຳມະເທດສະໜາຂອງຕະຖາຄົດ ຈຶ່ງແຈ້ງຊັດ

ປຸນນິຍະ ທຳມະເທດສະໜາຂອງຕະຖາຄົດປະກອບດ້ວຍທຳ ໙ ປະການນີ້ ຈຶ່ງແຈ້ງຊັດໂດຍແທ້”

**ປຸນນິຍະສູດທີ ໔ ຈົບ**

# ໓. ມູລະກະສູດ

## ວ່າດ້ວຍມູນເຫດແຫ່ງທຳທັງປວງ

[໙໓] ພິກຂຸທັງຫຼາຍ ຖ້າອັນຍະເດຍຣະຖີປະຣິພາຊົກຖາມຢ່າງນີ້ວ່າ

໑. ທຳທັງປວງມີອັນໃດເປັນ ມູນເຫດ
໔. ທຳທັງປວງມີອັນໃດເປັນ ແດນເກີດ
໓. ທຳທັງປວງມີອັນໃດເປັນ ເຫດເກີດ
໔. ທຳທັງປວງມີອັນໃດເປັນ ທີ່ປະຊຸມ
໕. ທຳທັງປວງມີອັນໃດເປັນ ປະມຸກ
໖. ທຳທັງປວງມີອັນໃດເປັນ ໃຫຍ່
໗. ທຳທັງປວງມີອັນໃດເປັນ ຍິ່ງ
໙. ທຳທັງປວງມີອັນໃດເປັນ ແກ່ນ

ທ່ານທັງຫຼາຍຖືກຖາມແລ້ວຢ່າງນີ້ ຈະເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຢ່າງໃດ?

ພິກຂຸເຫຼົ່ານັ້ນ ຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງ ທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າເທົ່ານັ້ນ

ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ້ງຊັດໄດ້ ພິກຂຸທັງຫຼາຍຟັງຕໍ່ຈາກ ພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ວ່າ

ພິກຂຸທັງຫຼາຍ ຖ້າອັນຍະເດຍຣະຖີປະຣິພາຊົກຖາມຢ່າງນີ້ວ່າ

໑. ທຳທັງປວງມີອັນໃດເປັນ ມູນ
໒. ທຳທັງປວງມີອັນໃດເປັນ ແດນເກີດ
໓. ທຳທັງປວງມີອັນໃດເປັນ ເຫດເກີດ
໔. ທຳທັງປວງມີອັນໃດເປັນ ທີ່ປະຊຸມ
໕. ທຳທັງປວງມີອັນໃດເປັນ ປະມຸກ
໖. ທຳທັງປວງມີອັນໃດເປັນ ໃຫຍ່
໗. ທຳທັງປວງມີອັນໃດເປັນ ຍິ່ງ
໘. ທຳທັງປວງມີອັນໃດເປັນ ແກ່ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມຢ່າງນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຢ່າງນີ້ວ່າ

໑. ທຳທັງປວງມີ ສັນທະເປັນມູນ
໒. ທຳທັງປວງມີ ມະນະສິການເປັນແດນເກີດ
໓. ທຳທັງປວງມີ ຜັດສະເປັນເຫດເກີດ
໔. ທຳທັງປວງມີ ເວທະນາເປັນທີ່ປະຊຸມ
໕. ທຳທັງປວງມີ ສະມາທິເປັນປະມຸກ
໖. ທຳທັງປວງມີ ສະຕິເປັນໃຫຍ່
໗. ທຳທັງປວງມີ ປັນຍາເປັນຍິ່ງ
໘. ທຳທັງປວງມີ ວິມຸດຕິເປັນແກ່ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມຢ່າງນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຢ່າງນີ້ແລ

**ມູລະກະສູດທີ ໓ ຈົບ**

# ໔. ໂຈຣະສູດ

## ວ່າດ້ວຍເຫດເສື່ອມຂອງມະຫາໂຈນ

[໗໔] ພິກຂຸທັງຫຼາຍ ມະຫາໂຈນປະກອບດ້ວຍອົງ ໗ ປະການ ຍ່ອມເສື່ອມ ຢ່າງໄວ ດຳຣົງຢູ່ໄດ້ບໍ່ດົນ ອົງ ໗ ປະການ ອັນໃດແດ່ ຄື

໑. ທຳຮ້າຍຄົນທີ່ບໍ່ໂຕ້ຕອບ
໒. ລັກເອົາສິ່ງຂອງຈົນບໍ່ເຫຼືອ
໓. ຂ້າຜູ້ຍິງ
໔. ຂົ່ມຂືນເດັກຍິງ
໕. ປຸ້ນນັກບວດ
໖. ປຸ້ນຫ້ອງພຣະຄັງ
໗. ປຸ້ນໃກ້ຖິ່ນເກີນໄປ
໘. ບໍ່ສະຫຼາດໃນການເກັບ

ພິກຂຸທັງຫຼາຍ ມະຫາໂຈນປະກອບດ້ວຍອົງ ໗ ປະການນີ້ແລ ຍ່ອມເສື່ອມຢ່າງໄວ ດຳຣົງຢູ່ໄດ້ບໍ່ດົນ

ພິກຂຸທັງຫຼາຍ ມະຫາໂຈນປະກອບດ້ວຍອົງ ໗ ປະການ ຍ່ອມບໍ່ເສື່ອມຢ່າງໄວ ດຳຣົງຢູ່ໄດ້ດົນນານ ອົງ ໗ ປະການ ອັນໃດແດ່ ຄື

໑. ບໍ່ທຳຮ້າຍຄົນທີ່ບໍ່ໂຕ້ຕອບ
໒. ບໍ່ປຸ້ນສິ່ງຂອງຈົນບໍ່ເຫຼືອ
໓. ບໍ່ຂ້າຜູ້ຍິງ
໔. ບໍ່ຂົ່ມຂືນເດັກຍິງ
໕. ບໍ່ປຸ້ນນັກບວດ
໖. ບໍ່ປຸ້ນຫ້ອງພຣະຄັງ
໗. ບໍ່ປຸ້ນໃກ້ຖິ່ນເກີນໄປ
໘. ສະຫຼາດໃນການເກັບ

ພິກຂຸທັງຫຼາຍ ມະຫາໂຈນປະກອບດ້ວຍອົງ ໗ ປະການນີ້ ຍ່ອມບໍ່ເສື່ອມຢ່າງໄວ ດຳຣົງຢູ່ໄດ້ດົນນານ

**ໂຈຣະສູດທີ ໔ ຈົບ**

# ໕. ສະມະນະສູດ

## ວ່າດ້ວຍພຣະນາມຂອງພຣະພຸດທະເຈົ້າ

[໗໕] ພິກຂຸທັງຫຼາຍ

໑. ຄຳວ່າ ສະມະນະ ເປັນພຣະນາມຂອງພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ

໔. ຄຳວ່າ ພາມ ຯລຯ
໑. ຄຳວ່າ ເວທະຄູ ຯລຯ
໔. ຄຳວ່າ ພິສັກກະ ຯລຯ
໕. ຄຳວ່າ ນິມມະລະ ຯລຯ
໖. ຄຳວ່າ ວິມະລະ ຯລຯ
໗. ຄຳວ່າ ຍານີ ຯລຯ
໘. ຄຳວ່າ ວິມຸດຕະ ຯລຯ

ສິ່ງໃດທີ່ຜູ້ເປັນສະມະນະ ຜູ້ເປັນພາມ
ຢູ່ຈົບພົມມະຈັນເພິ່ງບັນລຸ
ສິ່ງໃດອັນປະເສີດ ທີ່ຜູ້ຈົບເວດ
ຜູ້ເປັນສັນຍະແພດເພິ່ງບັນລຸ
ສິ່ງໃດທີ່ຜູ້ໝົດມົນທິນ
ຜູ້ປອດມົນທິນ ຜູ້ສະອາດເພິ່ງບັນລຸ
ສິ່ງໃດອັນປະເສີດ ທີ່ຜູ້ໄດ້ຍານ
ຜູ້ລຸດພົ້ນເພິ່ງບັນລຸ
ສິ່ງນັ້ນ ໆ ເຮົາບັນລຸແລ້ວ
ເຮົານັ້ນເປັນຜູ້ຊະນະສົງຄາມ
ເປັນຜູ້ລຸດພົ້ນ ປົດເປື້ອງມະຫາຊົນຈາກເຄື່ອງຜູກ
ເຮົາເປັນຜູ້ປະເສີດ ເປັນຜູ້ເຝິກຕົນໄດ້ຢ່າງປະເສີດ
ເປັນອະເສຂະບຸກຄົນ ປະຣິນິບພານແລ້ວ[໑]

**ສະມະນະສູດທີ ໕ ຈົບ**

## ໖. ຍະສະສູດ
## ວ່າດ້ວຍຍົດ

[໘໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໝູ່ບ້ານພາມແຄວ້ນໂກສົນຊື່ອິດສານັງຄະລະ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຮາວປ່າຊື່ອິດສານັງຄະລະ ໃກ້ໝູ່ບ້ານພາມຊື່ອິດສານັງຄະລະ

ພວກພາມ ແລະຄະຫະບໍດີຊາວບ້ານໂກອິດສານັງຄະລະໄດ້ຮູ້ຂ່າວວ່າ "ທ່ານພຣະສະມະນະ-ໂຄດົມສາກະຍະບຸດ ຊົງອອກບວດຈາກສາກະຍະຕະກູນ ສະເດັດເຖິງບ້ານໂກອິດສານັງ

ຄະລະປະ ທັບຢູ່ ທີ່ຣາວປ່າໂກອິດສານັງຄະລະໃກ້ໝູ່ບ້ານພານຊື່ ໂກອິດສານັງຄະລະ ທ່ານພຣະສະມະນະໂຄດົມ ພຣະອົງນັ້ນ ມີກິດຕິສັບອັນງາມຂະຈອນໄປຢ່າງນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ຯລຯ ກໍການໄດ້ພົບ ພຣະອະຣະຫັນເຊັ່ນນີ້ເປັນຄວາມດີຢ່າງແທ້ຈິງ"

ເມື່ອຄືນຜ່ານໄປ ພານ ແລະຄະຫະບໍດີຊາວບ້ານອິດສານັງຄະລະ ຈຶ່ງພາກັນຖືເອົາຂອງຫຍ້ຳຂອງສັນເປັນຈຳນວນຫຼາຍ ເຂົ້າໄປເຖິງຣາວປ່າຊື່ອິດສານັງຄະລະ ໄດ້ຢືນຊຸມນຸມກັນສົ່ງສຽງ ຟົດຟື້ນ ທີ່ຊຸ້ມປະຕູດ້ານນອກ

ສະໄໝນັ້ນ ທ່ານພຣະນາຄິຕະເປັນອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກທ່ານພຣະນາຄິຕະມາຕັດຖາມວ່າ "ນາຄິຕະ ຄົນພວກໃດສົ່ງສຽງ ຟົດຟື້ນຢູ່ນັ້ນ ຄ້າຍພວກຊາວປະມົງຍາດປາກັນ"

ທ່ານພຣະນາຄິຕະຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພານ ແລະຄະຫະບໍດີຊາວບ້ານອິດສານັງຄະລະເຫຼົ່ານັ້ນ ພາກັນຖືຂອງຫຍ້ຳຂອງສັນເປັນຈຳນວນຫຼາຍ ມາຢືນຊຸມນຸມກັນຢູ່ທີ່ຊຸ້ມປະຕູດ້ານນອກເພື່ອຖວາຍພຣະຜູ້ມີພຣະພາກເຈົ້າ ແລະພິກຂຸສົງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາຄິຕະ ເຮົາບໍ່ຕິດຍົດ ແລະຍົດກໍບໍ່ຕິດເຮົາ ຜູ້ໃດບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ປະວິເວກສຸກ ອຸປະສະມະສຸກ ແລະສຳໂພທິສຸກທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ ຜູ້ນັ້ນຊື່ວ່າຍິນດີສຸກທີ່ບໍ່ສະອາດ ສຸກໃນການນອນຫຼັບ ແລະສຸກທີ່ອີງອາໄສລາບສັກກາຣະ ແລະ ການສັນເສີນ"

ທ່ານພຣະນາຄິຕະຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້ ຂໍພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດຈົ່ງຊົງຮັບ ບັດນີ້ ເປັນເວລາທີ່ພຣະຜູ້ມີພຣະພາກເຈົ້າຈະຊົງຮັບ ພຣະອົງຈັກສະເດັດໄປທາງໃດ ໆ ພານ ຄະຫະບໍດີ ຊາວນິຄົມ ແລະຊາວຊົນນະບົດກໍຈັກຫຼັ່ງໄຫຼໄປທາງນັ້ນ ໆ ຂ້າແດ່ພຣະອົງຜູ້ຈະເລີນ ປຽບເໝືອນເມື່ອຝົນເມັດໃຫຍ່ຕົກລົງມາ ນ້ຳຍ່ອມໄຫຼໄປຕາມທີ່ລຸ່ມ ຂໍ້ນັ້ນເພາະເຫດໃດ ເພາະພຣະຜູ້ມີພຣະພາກເຈົ້າຊົງມີສີນແລະປັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນາຄິຕະ ເຮົາບໍ່ຕິດຍົດ ແລະຍົດກໍບໍ່ຕິດເຮົາ ຜູ້ໃດແລບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ຯລຯ ທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ ຜູ້ນັ້ນຊື່ວ່າຍິນດີສຸກທີ່ບໍ່ສະອາດ ສຸກໃນການນອນຫຼັບ ສຸກທີ່ອີງອາໄສລາບສັກກາຣະ ແລະການສັນເສີນ

ນາຄິຕະ ແມ່ນແຕ່ເທວະດາບາງພວກກໍບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ຯລຯ ທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ ນາຄິຕະ ແມ່ນແຕ່ພວກທ່ານມາປະຊຸມພ້ອມໜ້າກັນ ໝັ່ນປະກອບ ການຢູ່ຄຸກຄີຢູ່ ກໍມີຄວາມຄິດຢ່າງນີ້ວ່າ ທ່ານເຫຼົ່ານີ້ບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ຯລຯ ທີ່ເຮົາໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ ເພາະທ່ານເຫຼົ່ານັ້ນມາປະຊຸມພ້ອມໜ້າກັນ ໝັ່ນປະກອບການຢູ່ຄຸກຄີຢູ່

໑. ເຮົາເຫັນພິກຂຸທັງຫຼາຍໃນທຳວິໄນນີ້ໃຊ້ນິ້ວຈີ້ຢອກຍິ້ມແຍ້ມກັນຢູ່ ເຮົານັ້ນ ມີຄວາມຄິດຢ່າງນີ້ວ່າ ທ່ານເຫຼົ່ານີ້ບໍ່ເພິ່ງໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງເນກຂຳມະສຸກ ຯລຯ ທີ່ເຮົາໄດ້ຕາມຄວາມປາຖະໜາ ຯລຯ ເພາະທ່ານເຫຼົ່ານີ້ໃຊ້ນິ້ວຈີ້ຢອກຍິ້ມແຍ້ມກັນຢູ່

໒. ເຮົາເຫັນພິກຂຸທັງຫຼາຍ ໃນທຳວິໄນນີ້ສັນອາຫານຕາມຕ້ອງການຈົນອີ່ມທ້ອງແລ້ວ ໝັ່ນປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນຫຼັງ ແລະຄວາມສຸກໃນການຫຼັບຢູ່ ເຮົານັ້ນມີຄວາມຄິດຢ່າງນີ້ວ່າ ທ່ານເຫຼົ່ານີ້ ບໍ່ໄດ້ຕາມຄວາມປາຖະໜາ ບໍ່ໄດ້ໂດຍບໍ່ຍາກ ບໍ່ໄດ້ໂດຍບໍ່ລຳບາກເຊິ່ງ ເນກຂຳມະສຸກ ຯລຯ ທີ່ເຮົາໄດ້ຕາມຄວາມປາຖະໜາ ຯລຯ ເພາະທ່ານເຫຼົ່ານີ້ສັນອາຫານຕາມຕ້ອງການຈົນອີ່ມທ້ອງແລ້ວ ໝັ່ນປະກອບຄວາມສຸກ ໃນການນອນ ຄວາມສຸກໃນການເອນຫຼັງ ແລະຄວາມສຸກໃນການຫຼັບຢູ່

໓. ເຮົາເຫັນພິກຂຸໃນທຳວິໄນນີ້ ຜູ້ຢູ່ໃນເສນາສະນະໃກ້ໝູ່ບ້ານ ມີສະມາທິນັ່ງຢູ່ ເຮົາມີຄວາມຄິດຢ່າງນີ້ວ່າ "ບັດນີ້ ຄົນວັດ ຫຼື ສະມະນຸດເທດຈັກບຳຣຸງ ທ່ານຜູ້ນີ້ ຈັກເຮັດໃຫ້ທ່ານເຄື່ອນຈາກສະມາທິ" ເພາະເຫດນັ້ນ ເຮົາຈຶ່ງບໍ່ຍິນດີ ການຢູ່ໃນເສນາສະນະໃກ້ໝູ່ບ້ານຂອງພິກຂຸນັ້ນ

໔. ເຮົາເຫັນພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າເປັນຂໍ້ວັດ ນັ່ງໂງກງ່ວງຢູ່ໃນປ່າ ເຮົາມີຄວາມຄິດຢ່າງນີ້ວ່າ "ບັດນີ້ ທ່ານຜູ້ນີ້ຈັກບັນເທົາຄວາມລຳບາກ ຄື ການຫຼັບນີ້ແລ້ວ ມະນະສິການຄວາມກຳນົດໝາຍວ່າປ່າເປັນເອກັກຄະຕາຣົມ" ເພາະເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

໕. ເຮົາເຫັນພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າເປັນຂໍ້ວັດ ບໍ່ມີສະມາທິນັ່ງຢູ່ໃນປ່າ ເຮົາມີຄວາມຄິດຢ່າງນີ້ວ່າ "ບັດນີ້ ທ່ານຜູ້ນີ້ຈັກຕັ້ງຈິດທີ່ບໍ່ເປັນສະມາທິໃຫ້ເປັນສະມາທິ ຫຼືຈັກຕາມຮັກສາຈິດທີ່ເປັນສະມາທິໄວ້" ເພາະເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

໖. ເຮົາເຫັນພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າເປັນຂໍ້ວັດ ມີສະມາທິບັ່ງຢູ່ໃນປ່າ ເຮົາມີຄວາມຄິດຢ່າງນີ້ວ່າ "ບັດນີ້ ທ່ານຜູ້ນີ້ຈັກປົດຈິດທີ່ຍັງບໍ່ລຸດພົ້ນ ໃຫ້ລຸດພົ້ນ ຫຼືຈັກຕາມຮັກສາຈິດທີ່ລຸດພົ້ນແລ້ວໄວ້ໄດ້" ເພາະເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

໗. ເຮົາເຫັນພິກຂຸໃນທຳວິໄນນີ້ຜູ້ຢູ່ໃນເສນາສະນະໃກ້ໝູ່ບ້ານ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທ່ານພໍໃຈລາບ ສັກກາຣະ ແລະການສັນເສີນນັ້ນ ລະຖິ້ມການຫຼີບຫຼີກ ລະຖິ້ມເສນາສະນະອັນສະຫງັດຄືປ່າໂປ່ງແລະປ່າທຶບ ເຂົ້າມາໂຮມກັນຢູ່ຕາມໝູ່ບ້ານເຂດແລະເມືອງຫຼວງ" ເພາະເຫດນັ້ນ ເຮົາຈຶ່ງບໍ່ຍິນດີການຢູ່ໃນເສນາສະນະໃກ້ໝູ່ບ້ານຂອງພິກຂຸນັ້ນ

໘. ເຮົາເຫັນພິກຂຸໃນທຳວິໄນນີ້ຜູ້ຢູ່ປ່າເປັນຂໍ້ວັດ ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທ່ານສະລັດລາບສັກກາຣະ ແລະການສັນເສີນນັ້ນ ບໍ່ລະຖິ້ມການຫຼີບຫຼີກ ບໍ່ລະຖິ້ມເສນາສະນະອັນສະຫງັດຄືປ່າໂປ່ງແລະປ່າທຶບ" ເພາະເຫດນັ້ນ ເຮົາຈຶ່ງຍິນດີການຢູ່ໃນປ່າຂອງພິກຂຸນັ້ນ

ສະໄໝໃດ ເຮົາເດີນທາງໄກ ບໍ່ເຫັນຜູ້ໃດຢູ່ຂ້າງໜ້າ ຫຼື ຂ້າງຫຼັງ ສະໄໝນັ້ນ ເຮົາຍ່ອມມີຄວາມຜາສຸກ ໂດຍທີ່ສຸດ ແມ່ນແຕ່ການຖ່າຍອຸດຈາຣະແລະປັດສາວະ"

**ຍະສະສູດທີ ໖ ຈົບ**

# ໗. ປັດຕະນິກຸດຊະນະສູດ

## ວ່າດ້ວຍເຫດແຫ່ງການຂວ້ຳບາດແລະຫງາຍບາດ

[໘໗] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງຂວ້ຳບາດຕໍ່ອຸປາສົກຜູ້ປະກອບດ້ວຍອົງ ໘ ປະການ ອົງ ໘ ປະການ ອັນໃດແດ່ ຄື

໑. ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸທັງຫຼາຍ
໒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸທັງຫຼາຍ
໓. ຂົນຂວາຍເພື່ອຄວາມຢູ່ບໍ່ໄດ້ຂອງພິກຂຸທັງຫຼາຍ
໔. ດ່າບໍຣິພາດພິກຂຸທັງຫຼາຍ
໕. ຍຸຍົງພິກຂຸທັງຫຼາຍໃຫ້ແຕກກັນ
໖. ກ່າວຕິຕຽນພຣະພຸດທະເຈົ້າ

໗. ກ່າວຕິຕຽນພຣະທຳ
໘. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງຂວ້ຳບາດຕໍ່ອຸປາສົກຜູ້ປະກອບດ້ວຍອົງ ໘ ປະການນີ້

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງຫງາຍບາດຕໍ່ອຸປາສົກຜູ້ປະກອບດ້ວຍອົງ ໘ ປະການ ທຳ ໘ ປະການ ອັນໃດແດ່ ຄື

໑. ບໍ່ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸທັງຫຼາຍ
໒. ບໍ່ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸທັງຫຼາຍ
໓. ບໍ່ຂົນຂວາຍເພື່ອຄວາມຢູ່ບໍ່ໄດ້ຂອງພິກຂຸທັງຫຼາຍ
໔. ບໍ່ດ່າບໍ່ບໍຣິພາດພິກຂຸທັງຫຼາຍ
໕. ບໍ່ຍຸຍົງພິກຂຸທັງຫຼາຍໃຫ້ແຕກກັນ
໖. ກ່າວສັນເສີນພຣະພຸດທະເຈົ້າ
໗. ກ່າວສັນເສີນພຣະທຳ
໘. ກ່າວສັນເສີນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງຫງາຍບາດຕໍ່ອຸປາສົກຜູ້ປະກອບດ້ວຍອົງ ໘ ປະການນີ້ແລ

**ປັດຕະນິກຸດຊະນະສູດທີ ໗ ຈົບ**

# ໘. ອັບປະສາທະປະເວທະນີຍະສູດ

## ວ່າດ້ວຍເຫດທີ່ຄວນປະກາດວ່າບໍ່ຄວນເຫຼື້ອມໃສ

[໘໘] ພິກຂຸທັງຫຼາຍ ອຸປາສົກເມື່ອມຸ້ງຫວັງ ເພິ່ງປະກາດຄວາມບໍ່ເຫຼື້ອມໃສຕໍ່ພິກຂຸ ຜູ້ປະກອບດ້ວຍທຳ ໘ ປະການ ທຳ ໘ ປະການ ອັນໃດແດ່ ຄື

໑. ຂົນຂວາຍເພື່ອບໍ່ແມ່ນລາບຂອງຄະລຶຫັດທັງຫຼາຍ
໒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງຄະລຶຫັດທັງຫຼາຍ
໓. ດ່າບໍຣິພາດຄະລຶຫັດທັງຫຼາຍ
໔. ຍຸຍົງຄະລຶຫັດທັງຫຼາຍໃຫ້ແຕກກັນ
໕. ກ່າວຕິຕຽນພຣະພຸດທະເຈົ້າ
໖. ກ່າວຕິຕຽນພຣະທຳ

໗. ກ່າວຕິຕຽນພຣະສົງ
໘. ອຸປາສິກາທັງຫຼາຍເຫັນພິກຂຸນັ້ນໃນອະໂຄຈອນ

ພິກຂຸທັງຫຼາຍ ອຸປາສິກາເມື່ອມຸ້ງຫວັງ ເພິ່ງປະກາດຄວາມບໍ່ເຫຼື້ອມໃສຕໍ່ພິກຂຸຜູ້ປະກອບດ້ວຍທຳ ໘ ປະການນີ້ແລ

ພິກຂຸທັງຫຼາຍ ອຸປາສິກາເມື່ອມຸ້ງຫວັງ ເພິ່ງປະກາດຄວາມເຫຼື້ອມໃສຕໍ່ພິກຂຸຜູ້ປະກອບດ້ວຍທຳ ໘ ປະການ ທຳ ໘ ປະການ ອັນໃດແດ່ ຄື

໑. ບໍ່ຂົນຂວາຍເພື່ອບໍ່ແມ່ນລາບຂອງຄະລຶຫັດທັງຫຼາຍ
໒. ບໍ່ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງຄະລຶຫັດທັງຫຼາຍ
໓. ບໍ່ດ່າບໍ່ບໍຣິພາດຄະລຶຫັດທັງຫຼາຍ
໔. ບໍ່ຍຸຍົງຄະລຶຫັດທັງຫຼາຍໃຫ້ແຕກກັນ
໕. ກ່າວສັນເສີນພຣະພຸດທະເຈົ້າ
໖. ກ່າວສັນເສີນພຣະທຳ
໗. ກ່າວສັນເສີນພຣະສົງ
໘. ອຸປາສິກາທັງຫຼາຍເຫັນພິກຂຸນັ້ນໃນໂຄຈອນ

ພິກຂຸທັງຫຼາຍ ອຸປາສິກາເມື່ອມຸ້ງຫວັງ ເພິ່ງປະກາດຄວາມເຫຼື້ອມໃສຕໍ່ພິກຂຸຜູ້ປະກອບດ້ວຍທຳ ໘ ປະການນີ້ແລ

**ອັບປະສາທະປະເວທະນີຍະສູດທີ ໘ ຈົບ**

## ໙. ປະຕິສາຣະນີຍະສູດ

## ວ່າດ້ວຍເຫດທີ່ຄວນລົງປະຕິສາຣະນີຍະກຳ

[໘໙] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳຕໍ່ພິກຂຸຜູ້ປະກອບດ້ວຍທຳ ໘ ປະການ ທຳ ໘ ປະການ ອັນໃດແດ່ ຄື

໑. ຂົນຂວາຍເພື່ອບໍ່ແມ່ນລາບຂອງຄະລຶຫັດທັງຫຼາຍ
໒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງຄະລຶຫັດທັງຫຼາຍ
໓. ດ່າບໍຣິພາດຄະລຶຫັດທັງຫຼາຍ
໔. ຍຸຍົງຄະລຶຫັດທັງຫຼາຍໃຫ້ແຕກກັນ
໕. ກ່າວຕິຕຽນພຣະພຸດທະເຈົ້າ

໖. ກ່າວຕິຕຽນພຣະທຳ
໗. ກ່າວຕິຕຽນພຣະສົງ
໘. ຮັບຄຳທີ່ຊອບທຳຂອງຄະລິຫັດແຕ່ບໍ່ເຮັດຕາມ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳຕໍ່ພິກຂຸຜູ້ປະກອບດ້ວຍທຳ ໘ ປະການນີ້

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງຣະງັບປະຕິສາຣະນີຍະກຳຕໍ່ພິກຂຸຜູ້ປະກອບດ້ວຍທຳ ໘ ປະການ ທຳ ໘ ປະການ ອັນໃດແດ່ ຄື

໑. ບໍ່ຂົນຂວາຍເພື່ອບໍ່ແມ່ນລາບຂອງຄະລິຫັດທັງຫຼາຍ
໒. ບໍ່ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງຄະລິຫັດທັງຫຼາຍ
໓. ບໍ່ດ່າບໍ່ບໍຣິພາດຄະລິຫັດທັງຫຼາຍ
໔. ບໍ່ຍຸຍົງຄະລິຫັດທັງຫຼາຍໃຫ້ແຕກກັນ
໕. ກ່າວສັນເສີນພຣະພຸດທະເຈົ້າ
໖. ກ່າວສັນເສີນພຣະທຳ
໗. ກ່າວສັນເສີນພຣະສົງ
໘. ຮັບຄຳທີ່ຊອບທຳຂອງຄະລິຫັດແລ້ວເຮັດຕາມ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງຣະງັບປະຕິສາຣະນີຍະກຳຕໍ່ພິກຂຸຜູ້ປະກອບດ້ວຍທຳ ໘ ປະການນີ້

**ປະຕິສາຣະນີຍະສູດທີ ໙ ຈົບ**

# ໑໐. ສຳມາວັດຕະນະສູດ

## ວ່າດ້ວຍການປະພຶດຊອບ

[໙໐] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງຕັດສະປາປິຍະສິກາກຳແລ້ວ ເພິ່ງປະພຶດ ຊອບໃນທຳ ໘ ປະການ ຄື

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິດໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ

໔. ບໍ່ເພິ່ງຮັບສົມມຸດເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບສົມມຸດແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຮັບສົມມຸດອັນໃດ ໆ ຈາກສົງ
໗. ບໍ່ເພິ່ງດຳຣົງຢູ່ໃນຕຳແໜ່ງຫົວໜ້າອັນໃດ ໆ
໘. ບໍ່ເພິ່ງໃຫ້ປະພຶດວຸດຖານະວິທີເພາະຕຳແໜ່ງເດີມນັ້ນ

ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງຕັດສະປາປິຍະສິກາກຳແລ້ວ ເພິ່ງປະພຶດຊອບໃນທຳ ໘ ປະການນີ້

**ສຳມາວັດຕະນະສູດທີ ໑໐ ຈົບ**

**ສະຕິວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສະຕິສຳປະຊັນຍະສູດ
໒. ມູລະກະສູດ
໓. ສະມະນະສູດ
໔. ໂຈຣະສູດ
໕. ສະມະນະສູດ
໖. ຍະສະສູດ
໗. ປັດຕະນິກຸດຊະນະສູດ
໘. ອັບປະສາທະປະເວທະນີຍະສູດ
໙. ປະຕິສາຣະນີຍະສູດ
໑໐. ສຳມາວັດຕະນະສູດ

# ໕. ສາມັນຍະວັກ

## ໝວດວ່າດ້ວຍທຳທີ່ຄືກັນ

[໙໑-໑໑໖] ໂພດຊາອຸປາສິກາ ສິຣິມາອຸປາສິກາ ປະທຸມາອຸປາສິກາ ສຸທຳມາ ອຸປາສິກາ ມະນຸຊາອຸປາສິກາ ອຸດຕະຣາອຸປາສິກາ ມຸດຕາອຸປາສິກາ ເຂມາອຸປາສິກາ ຣຸຈີອຸປາສິກາ ຈຸນທີຣາດຊະກຸມາຣີ ພິມພີອຸປາສິກາ ສຸມະນາຣາດຊະກຸມາຣີ ມັນລິກາເທວີ ຕິດສາອຸປາສິກາ ຕິດສະມາຕາອຸປາສິກາ ໂສນາອຸປາສິກາ ໂສນະມາຕາອຸປາສິກາ ການາອຸປາສິກາ ການະມາຕາອຸປາສິກາ ອຸດຕະຣານັນທະມາຕາອຸປາສິກາ ວິສາຂາມິຄາຣະມາຕາອຸປາສິກາ ຂຸດຊຸດຕະຣາອຸປາສິກາ ສາມາວະດີອຸປາສິກາ ສຸປະວາສາໂກລິຍະທິດາ ສຸບປິຍາອຸປາສິກາ ນະກຸລະມາຕາຄະຫະປະຕານີ [໑-໘໖]

**ສາມັນຍະວັກທີ ໕ ຈົບ**

**ທຸຕິຍະປັນນາດ ຈົບ**

# ຣາຄະເປີຍຍາລະ

[໑໑໗] ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທຳ ໘ ປະການ ເພື່ອຮູ້ຍິ່ງຣາຄະ (ຄວາມກຳໜັດ) ທຳ ໘ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ສຳມາທິດຖິ (ເຫັນຖືກ) | ໒. ສຳມາສັງກັບປະ (ດຳຣິຖືກ) |
| ໓. ສຳມາວາຈາ (ເຈຣະຈາຖືກ) | ໔. ສຳມາກຳມັນຕະ (ກະທຳຖືກ) |
| ໕. ສຳມາອາຊີວະ (ລ້ຽງຊີບຖືກ) | ໖. ສຳມາວາຍາມະ (ພະຍາຍາມຖືກ) |
| ໗. ສຳມາສະຕິ (ຣະນຶກຖືກ) | ໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ) |

[໑໑໘] ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທຳ ໘ ປະການ ເພື່ອຮູ້ຍິ່ງຣາຄະ (໑)

ທຳ ໘ ປະການ ອັນໃດແດ່ ຄື

໑. ພິກຂຸອົງໜຶ່ງມີຮູບສັນຍາພາຍໃນ ເຫັນຮູບພາຍນອກ ຂະໜາດນ້ອຍ ມີສີສັນດີຫຼືບໍ່ດີຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

໒. ພິກຂຸອົງໜຶ່ງມີຮູບສັນຍາພາຍໃນ ເຫັນຮູບພາຍນອກ ຂະໜາດໃຫຍ່ ມີສີສັນດີ ຫຼື ບໍ່ດີ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

໓. ພິກຂຸອົງໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກ ຂະໜາດນ້ອຍ ມີສີສັນ ດີຫຼືບໍ່ດີ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

໔. ພິກຂຸອົງໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກ ຂະໜາດໃຫຍ່ ມີສີສັນດີຫຼືບໍ່ດີ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

໕. ພິກຂຸອົງໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

໖. ພິກຂຸອົງໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

໗. ພິກຂຸອົງໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

໘ ພິກຂຸອົງໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ຄອບງໍາຮູບເຫຼົ່ານັ້ນໄດ້ ມີສັນຍາຢ່າງນີ້ວ່າ "ເຮົາຮູ້ ເຮົາເຫັນ"

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທໍາ ໘ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໒)

[໑໑໗] ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທໍາ ໘ ປະການ ເພື່ອຮູ້ຍິ່ງຣາຄະ

ທໍາ ໘ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ມີຮູບ ເຫັນຮູບທັງຫຼາຍ

໒. ພິກຂຸຜູ້ມີອະຮູບປະສັນຍາພາຍໃນ ເຫັນຮູບທັງຫຼາຍພາຍນອກ

໓. ພິກຂຸເປັນຜູ້ນ້ອມໃຈໄປວ່າ "ງາມ" ເທົ່ານັ້ນ

໔. ພິກຂຸບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ

໕. ພິກຂຸລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸ ວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່

໖. ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸ ອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່

໗. ພິກຂຸລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸ ເນວະສັນຍານາສັນຍາຍະຕະນະຊານຢູ່

໘. ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທຳ ໘ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໓)

[໑໔໐-໑໔໖] ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທຳ ໘ ປະການ ເພື່ອກຳນົດຮູ້ຣາຄະ

ฯລฯ ເພື່ອຄວາມສິ້ນຣາຄະ

ฯລฯ ເພື່ອລະຣາຄະ

ฯລฯ ເພື່ອຄວາມສິ້ນໄປແຫ່ງຣາຄະ

ฯລฯ ເພື່ອຄວາມເສື່ອມໄປແຫ່ງຣາຄະ

ฯລฯ ເພື່ອຄວາມຄາຍອອກແຫ່ງຣາຄະ

ฯລฯ ເພື່ອຄວາມດັບໄປແຫ່ງຣາຄະ

ฯລฯ ເພື່ອຄວາມສະລະຣາຄະ

ฯລฯ ເພື່ອຄວາມສະລະຄືນຣາຄະฯລฯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທຳ ໘ ປະການນີ້ ເພື່ອຄວາມສະລະຄືນຣາຄະ ฯລฯ

(໔-໓໐)

[໑໔໗-໖໔໖] ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທຳ ໘ ປະການ ເພື່ອຮູ້ຍິ່ງໂທສະ (ຄວາມຄິດປະທຸດສະຮ້າຍ)

ฯລฯ ເພື່ອກຳນົດຮູ້ໂທສະ

ຯລຯ ເພື່ອຄວາມສິ້ນໂທສະ

ຯລຯ ເພື່ອລະໂທສະ

ຯລຯ ເພື່ອຄວາມສິ້ນໄປແຫ່ງໂທສະ

ຯລຯ ເພື່ອຄວາມເສື່ອມໄປແຫ່ງໂທສະ

ຯລຯ ເພື່ອຄວາມຄາຍອອກແຫ່ງໂທສະ

ຯລຯ ເພື່ອຄວາມດັບໄປແຫ່ງໂທສະ

ຯລຯ ເພື່ອຄວາມສະລະໂທສະ

ຯລຯ ເພື່ອຄວາມສະລະຄືນໂທສະ ຯລຯ ໂມຫະ (ຄວາມຫຼົງ) ຯລຯ ໂກທະ (ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ຯລຯ ປະລາສະ (ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ມານຍາ) ຯລຯ ສາເຖີຍຍະ (ຄວາມໂອ້ອວດ) ຯລຯ ຖໍາພະ (ຄວາມຫົວດື້) ຯລຯ ສາຣໍາພະ (ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືຕົວ) ຯລຯ ອະຕິມານະ (ຄວາມດູໝິ່ນເຂົາ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝາດ) ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທໍາ ໗ ປະການນີ້ ເພື່ອຄວາມສະລະຄືນປະມາທະ (໓໑-໕໑໐)

**ຣາຄະເປີຍຍາລະ ຈົບ**

**ອັດຖະກະນິບາດ ຈົບບໍລິບູນ**

# ພຣະສູດຕັນຕະປິດົກ

## ອັງຄຸດຕະຣະນິກາຍ ນະວະກະນິບາດ

**ຂໍ້ນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ**

## ໑. ປະຖະມະປັນນາດ

## ໑. ສຳໂພທິວັກ

**ໝວດວ່າດ້ວຍສຳໂພທິ**

### ໑. ສຳໂພທິສູດ

**ວ່າດ້ວຍສຳໂພທິ**

[໑] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ໃນທີ່ນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກຖາມຢ່າງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ອັນໃດເປັນເຫດແຫ່ງການຈະເລີນທຳທີ່ເປັນຝ່າຍແຫ່ງສຳໂພທິ" ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມຢ່າງນີ້ແລ້ວ ຈະຕອບພວກອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຢ່າງໃດ"

ພິກຂຸເຫຼົ່ານັ້ນ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ ພິກຂຸທັງຫຼາຍຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ" ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ວ່າ

"ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກຖາມຢ່າງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ອັນໃດເປັນເຫດແຫ່ງການຈະເລີນທຳທີ່ເປັນຝ່າຍແຫ່ງສຳໂພທິ" ທ່ານທັງຫຼາຍຖືກຖາມຢ່າງນີ້ ຄວນຕອບພວກອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຢ່າງນີ້ ວ່າ

໑. ພິກຂຸໃນທຳວິໄນນີ້ ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ນີ້ເປັນເຫດປະການທີ ໑ ແຫ່ງການຈະເລີນທຳທີ່ເປັນຝ່າຍແຫ່ງສຳໂພທິ

໒. ພິກຂຸເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ເປັນເຫດປະການທີ ໒ ແຫ່ງການຈະເລີນທຳທີ່ເປັນຝ່າຍແຫ່ງສຳໂພທິ

໓. ພິກຂຸເປັນຜູ້ໄດ້ກະຖາເປັນເຄື່ອງຂັດເກົາຢ່າງຍິ່ງ ທີ່ເປັນສັບປາຍະແຫ່ງຄວາມເປັນໄປຂອງ ຈິດ[໓] ຄື ອັບປິດສະກະຖາ (ເລື້ອງຄວາມມັກໜ້ອຍ) ສັນຕຸດຖີກະຖາ (ເລື້ອງຄວາມສັນໂດດ) ປະວິເວກກະຖາ (ເລື້ອງຄວາມສະຫງັດ) ອະສັງສັກຄະກະຖາ (ເລື້ອງຄວາມບໍ່ຄຸກຄີ) ວິຣິຍາຣຳພະກະຖາ(ເລື້ອງການຜາຣົບຄວາມພຽນ) ສີລະກະຖາ (ເລື້ອງສີນ) ສະມາທິກະຖາ (ເລື້ອງສະມາທິ) ປັນຍາກະຖາ(ເລື້ອງປັນຍາ) ວິມຸດຕິກະຖາ (ເລື້ອງວິມຸດຕິ) ວິມຸດຕິຍານທັດສະນະກະຖາ (ເລື້ອງຄວາມຮູ້ຄວາມເຫັນ ໃນວິມຸດຕິ) ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ນີ້ເປັນເຫດປະການທີ ໓ ແຫ່ງການຈະເລີນທຳທີ່ເປັນຝ່າຍແຫ່ງສຳໂພທິ

໔. ພິກຂຸເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳທັງຫຼາຍ ນີ້ເປັນເຫດປະການທີ ໔ ແຫ່ງການຈະເລີນທຳທີ່ເປັນຝ່າຍແຫ່ງສຳໂພທິ

໕. ພິກຂຸເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາ ເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຊອບ ນີ້ເປັນເຫດປະການທີ ໕ ແຫ່ງການຈະເລີນທຳທີ່ເປັນຝ່າຍແຫ່ງສຳໂພທິ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດ ແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ໄດ້ກະຖາ ເປັນເຄື່ອງຂັດເກົາຢ່າງຍິ່ງ ທີ່ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ ຄື ອັບປິດສະກະຖາ ສັນຕຸດຖິກະຖາ ປະວິເວກກະຖາ ອະສັງສັກຄະກະຖາ ວິຣິຍາຣຳພະກະຖາ ສີລະກະຖາ ສະມາທິກະຖາ ປັນຍາກະຖາ ວິມຸດຕິກະຖາ ວິມຸດຕິຍານທັດສະນະກະຖາ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳທັງຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ມີປັນຍາ ຄືປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ

ພິກຂຸທັງຫຼາຍ ພິກຂຸນັ້ນດຳຣົງຢູ່ໃນທຳ ໕ ປະການນີ້ແລ້ວ ເພິ່ງຈະເລີນທຳ ໔ ປະການໃຫ້ຍິ່ງຂຶ້ນໄປ ຄື

໑. ເພິ່ງຈະເລີນອະສຸພະເພື່ອລະຣາຄະ
໒. ເພິ່ງຈະເລີນເມດຕາເພື່ອລະພະຍາບາດ
໓. ເພິ່ງຈະເລີນອານາປານະສະຕິເພື່ອຕັດວິຕົກ
໔. ເພິ່ງຈະເລີນອະນິດຈະສັນຍາເພື່ອຖອນອັດສະມິມານະ

ພິກຂຸທັງຫຼາຍ ອະນັດຕະສັນຍາຍ່ອມຜາກົດແກ່ພິກຂຸຜູ້ໄດ້ອະນິດຈະສັນຍາ ພິກຂຸຜູ້ໄດ້ອະນັດຕະສັນຍາ ຍ່ອມບັນລຸນິບພານທີ່ຖອນອັດມິມານະໄດ້ໃນປັດຈຸບັນ

**ສຳໂພທິສູດທີ ໑ ຈົບ**

# ໒. ນິດສະຍະສູດ

## ວ່າດ້ວຍນິດໄສ

[໒] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນທີ່ຮຽກກັນວ່າ "ຜູ້ເຖິງພ້ອມດ້ວຍນິດໄສ ຜູ້ເຖິງພ້ອມດ້ວຍ ນິດໄສ" ພິກຂຸຊື່ວ່າ ເປັນຜູ້ເຖິງພ້ອມດ້ວຍນິດໄສ ດ້ວຍເຫດພຽງເທົ່າໃດນໍ

พระผู้มีพระพาคเจ้าตัดตอบว่າ

๑. ຖ້າພິກຂຸອາໄສສັດທາແລ້ວ ລະອະກຸສົນ ຈະເລີນກຸສົນໄດ້ ອະກຸສົນນັ້ນ ຍ່ອມ ເປັນອັນທ່ານລະໄດ້ແນ່ແທ້

๒. ຖ້າພິກຂຸອາໄສຫິຣິ ฯลฯ
๓. ຖ້າພິກຂຸອາໄສໂອດຕັບປະ ฯลฯ
๔. ຖ້າພິກຂຸອາໄສວິຣິຍະ ฯลฯ

๕. ຖ້າພິກຂຸອາໄສປັນຍາແລ້ວ ລະອະກຸສົນ ຈະເລີນກຸສົນໄດ້ ອະກຸສົນນັ້ນຍ່ອມ ເປັນອັນທ່ານລະໄດ້ແນ່ແທ້ ອະກຸສົນທີ່ພິກຂຸລະໄດ້ແລ້ວ ເພາະເຫັນດ້ວຍປັນຍາ ອັນເປັນອະຣິຍະ ເປັນອັນພິກຂຸນັ້ນລະໄດ້ແລ້ວ ລະໄດ້ດີແລ້ວ

ພິກຂຸນັ້ນດຳຣົງຢູ່ໃນທຳ ๕ ປະການແລ້ວ ເພິ່ງອາໄສທຳ ๔ ປະການຢູ່ ທຳ ๔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

๑. ພິຈາລະນາແລ້ວເສບ
๒. ພິຈາລະນາແລ້ວອົດກັ້ນ
๓. ພິຈາລະນາແລ້ວເວັ້ນ
๔. ພິຈາລະນາແລ້ວບັນເທົາ

ພິກຂຸຜູ້ເຖິງພ້ອມດ້ວຍນິດໄສ ເປັນແນວນີ້ແລ

**ນິດສະຍະສູດທີ ๒ ຈົບ**

# ๓. ເມຄິຍະສູດ

## ວ່າດ້ວຍພຣະເມຄິຍະ

[๓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນຈາລິກາບັນພົດ ເຂດເມືອງ ຈາລິກາ ສະ ໄໝນັ້ນ ທ່ານພຣະເມຄິຍະເປັນອຸປັດຖາກຂອງພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນ ທ່ານພຣະເມ ຄິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນໃນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງ ປາຖະໜ

าจะເຂົ້າໄປສູ່ຊຸ້ນຕຸຄາມເພື່ອບິນທະບາດ” ພຣະຜູ້ມີພຣະພາກເຈົ້າຕັດວ່າ “ເມຄິຍະ ທ່ານຈົ່ງກຳນົດເວລາທີ່ຄວນໃນບັດນີ້ເທີ້ນ”

ເມື່ອເວລາເຊົ້າ ທ່ານພຣະເມຄິຍະຄອງອັນຕະຣາວາສົກ ຖືບາດ ແລະຈີວອນເຂົ້າໄປສູ່ຊຸ້ນຕຸຄາມເພື່ອບິນທະບາດ ກັບຈາກບິນທະບາດ ຫຼັງຈາກສັນອາຫານສຳເລັດແລ້ວ ຍ່າງໄປຕາມຝັ່ງແມ່ນ້ຳກິມິການາ ຂະນະທີ່ທ່ຽວຍ່າງພັກຜ່ອນ ຢູ່ທີ່ຝັ່ງແມ່ນ້ຳກິມິການານັ້ນ ໄດ້ເຫັນປ່າໝາກມ່ວງທີ່ງົດງາມ ໜ້າຮື່ນຣົມ ຈຶ່ງມີຄວາມຄິດດັ່ງນີ້ວ່າ “ປ່າໝາກມ່ວງນີ້ຊ່າງງົດງາມ ໜ້າຮື່ນຣົມຈິງ ເໝາະແກ່ການພ່ຳເພັງພຽນຂອງກຸນລະບຸດຜູ້ຕ້ອງການພ່ຳເພັງພຽນ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດເຮົາ ເຮົາຈະກັບມາພ່ຳເພັງພຽນ ໃນປ່າໝາກມ່ວງນີ້”

ຕໍ່ມາ ທ່ານພຣະເມຄິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເມື່ອເຊົ້ານີ້ ຂ້າພຣະອົງຄອງອັນຕະຣາວາສົກ ຖືບາດແລະຈີວອນ ເຂົ້າໄປສູ່ຊຸ້ນຕຸຄາມເພື່ອບິນທະບາດ ກັບຈາກບິນທະບາດ ພາຍຫຼັງສັນອາຫານສຳເລັດແລ້ວ ຍ່າງໄປຕາມຝັ່ງແມ່ນ້ຳກິມິການາ ຂະນະທີ່ທ່ຽວຍ່າງພັກຜ່ອນຢູ່ທີ່ຝັ່ງແມ່ນ້ຳກິມິການາ ໄດ້ເຫັນ ປ່າໝາກມ່ວງທີ່ງົດງາມ ໜ້າຮື່ນຣົມ ຈຶ່ງມີຄວາມຄິດດັ່ງນີ້ວ່າ “ປ່າໝາກມ່ວງນີ້ຊ່າງງົດງາມ ໜ້າຮື່ນຣົມຈິງ ເໝາະແກ່ການພ່ຳເພັງພຽນສຳລັບ ກຸນລະບຸດຜູ້ຕ້ອງການພ່ຳເພັງພຽນໂດຍແທ້ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດເຮົາ ເຮົາຈະກັບມາພ່ຳເພັງພຽນໃນປ່າໝາກມ່ວງນີ້” ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຂ້າພຣະອົງ ຂ້າພຣະອົງຈະກັບໄປພ່ຳເພັງພຽນໃນປ່າໝາກມ່ວງນັ້ນ”

ເມື່ອທ່ານພຣະເມຄິຍະຂາບທູນຢ່າງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບທ່ານດັ່ງນີ້ວ່າ “ເມຄິຍະ ເຮົາຢູ່ຄົນດຽວ ທ່ານຈົ່ງຖ້າຢູ່ກ່ອນຈົນກວ່າພິກຂຸອົງອື່ນຈະມາ”[๑]

ແມ່ນຄັ້ງທີ ໔ ທ່ານພຣະເມຄິຍະກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກ ທັງບໍ່ມີການສັ່ງສົມກິດທີ່ເຮັດແລ້ວ ສ່ວນຂ້າພຣະອົງຍັງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກ ທັງຍັງຕ້ອງສັ່ງສົມ ກິດທີ່ເຮັດແລ້ວ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຂ້າພຣະອົງ ຂ້າພຣະອົງຈະກັບໄປພ່ຳເພັງພຽນໃນປ່າ ໝາກມ່ວງນັ້ນ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ເມຄິຍະ ທ່ານຈົ່ງຖ້າຢູ່ກ່ອນ ຈົນກວ່າພິກຂຸອົງອື່ນຈະມາ”

ແມ່ນຄັ້ງທີ ๓ ທ່ານພຣະເມຄິຍະກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກ ທັງບໍ່ມີ

ການສັ່ງສົມກິດທີ່ເຮັດແລ້ວ ສ່ວນຂ້າພຣະອົງຍັງມີກິດທີ່ຈະຕ້ອງເຮັດໃຫ້ຍິ່ງຂຶ້ນໄປອີກ ທັງຍັງຕ້ອງສັ່ງສົມກິດທີ່ເຮັດແລ້ວ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຂ້າພຣະອົງ ຂ້າພຣະອົງຈະກັບໄປພໍ່າເພັງພຽນໃນປ່າໝາກ ມ່ວງນັ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເມຄິຍະ ເມື່ອທ່ານເວົ້າວ່າ "ຈະໄປພໍ່າເພັງພຽນ" ເຮົາຄົງຈະຫ້າມຫຍັງບໍ່ໄດ້ ທ່ານຈົ່ງກໍານົດເວລາທີ່ສົມຄວນໃນບັດນີ້ເທີ້ນ" ລໍາດັບນັ້ນ ທ່ານພຣະເມຄິຍະລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທໍາປະທັກຂິນແລ້ວເຂົ້າໄປສູ່ປ່າໝາກມ່ວງນັ້ນ ອາໄສປ່າໝາກມ່ວງນັ້ນ ນັ່ງພັກກາງເວັນຢູ່ໃນເຫງົ້າໄມ້ໝາກມ່ວງຕົ້ນໜຶ່ງ ເມື່ອທ່ານພັກຢູ່ ໃນປ່າໝາກມ່ວງນັ້ນ ບາບອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ (ຄວາມນຶກໃນທາງກາມ) ພະຍາປາທະວິຕົກ (ຄວາມນຶກໃນທາງພະຍາບາດ) ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ) ເກີດຂຶ້ນໂດຍສ່ວນຫຼາຍ

ຄັ້ງນັ້ນ ທ່ານພຣະເມຄິຍະໄດ້ມີຄວາມຄິດດັ່ງນີ້ວ່າ "ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາແທ້ ໆ ແຕ່ປານນັ້ນເຮົາກໍຍັງຖືກບາບ ອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ ພະຍາປາທະວິຕົກ ວິຫິງສາວິຕົກຣຸມເຮົ້າຈິດໄດ້"

ຕໍ່ມາ ທ່ານພຣະເມຄິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ເມື່ອຂ້າພຣະອົງຢູ່ໃນປ່າໝາກມ່ວງນັ້ນ ບາບອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ ພະຍາປາທະວິຕົກ ວິຫິງສາວິຕົກເກີດຂຶ້ນໂດຍສ່ວນຫຼາຍ ຂ້າພຣະອົງຈຶ່ງມີຄວາມຄິດດັ່ງນີ້ວ່າ "ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາແທ້ ໆ ແຕ່ປານນັ້ນ ກໍຍັງຖືກບາບອະກຸສົນວິຕົກ ໓ ປະການ ຄື ກາມວິຕົກ ພະຍາປາທະວິຕົກ ວິຫິງສາວິຕົກຣຸມເຮົ້າຈິດໄດ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເມຄິຍະ ທໍາ ໕ ປະການ ຍ່ອມເປັນໄປເພື່ອຄວາມ ແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

ທໍາ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທໍາວິໄນນີ້ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ນີ້ເປັນທໍາປະການທີ ໑ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

໔. ພິກຂຸໃນທໍາວິໄນນີ້ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ

ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ເປັນທຳປະການທີ ๔ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

๓. ພິກຂຸໃນທຳວິໄນນີ້ເປັນຜູ້ໄດ້ກະຖາເປັນເຄື່ອງຂັດເກົາຢ່າງຍິ່ງ ທີ່ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ ຄື ອັບປິດສະກະຖາ ສັນຕຸດຖິກະຖາ ປະວິເວກກະຖາ ອະສັງສັກຄະກະຖາ ວິຣິຍາຣຳພະກະຖາ ສີລະກະຖາ ສະມາທິກະຖາ ປັນຍາກະຖາ ວິມຸດຕິກະຖາ ວິມຸດຕິຍານທັດສະນະກະຖາ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ນີ້ເປັນທຳປະການທີ ๓ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

๔. ພິກຂຸໃນທຳວິໄນນີ້ເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ເປັນຜູ້ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳທັງຫຼາຍ ນີ້ເປັນທຳປະການທີ ๔ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

๕. ພິກຂຸໃນທຳວິໄນນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ ນີ້ເປັນທຳປະການທີ ๕ ທີ່ເປັນໄປເພື່ອຄວາມແກ່ກ້າແຫ່ງເຈໂຕວິມຸດຕິທີ່ຍັງບໍ່ແກ່ກ້າ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ມີສີນ ฯลฯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ໄດ້ກະຖາ ເປັນເຄື່ອງຂັດເກົາຢ່າງຍິ່ງ ທີ່ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ ຄື ອັບປິດສະກະຖາ ฯลฯ ວິມຸດຕິຍານທັດສະນະກະຖາ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ຜາຣົບຄວາມພຽນ ฯลฯ ບໍ່ຖີ້ເບົາໃນກຸສົນທຳທັງຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງໄດ້ຂໍ້ນີ້ ຄື ຈັກເປັນຜູ້ມີປັນຍາ ฯลฯ ໃຫ້ເຖິງຄວາມໝົດສິ້ນທຸກໂດຍຊອບ

ເມຄິຍະ ພິກຂຸນັ້ນດຳຣົງຢູ່ໃນທຳ ๕ ປະການນີ້ແລ້ວ ເພິ່ງຈະເລີນທຳ ๔ ປະການໃຫ້ຍິ່ງຂຶ້ນໄປ ຄື

໑. ເພິ່ງຈະເລີນອະສຸພະເພື່ອລະຣາຄະ
໒. ເພິ່ງຈະເລີນເມດຕາເພື່ອລະພະຍາບາດ
໓. ເພິ່ງຈະເລີນອານາປານະສະຕິເພື່ອຕັດວິຕົກ
໔. ເພິ່ງຈະເລີນອະນິດຈະສັນຍາເພື່ອຖອນອັດສະມິມານະ

ເມຄິຍະ ອະນັດຕະສັນຍາຍ່ອມຜາກົດແກ່ພິກຂຸຜູ້ໄດ້ອະນິດຈະສັນຍາ ພິກຂຸຜູ້ໄດ້ອະນັດຕະສັນຍາ ຍ່ອມບັນລຸນິບພານທີ່ຖອນອັດສະມິມານະໄດ້ໃນປັດຈຸບັນ

**ເມຄິຍະສູດທີ ໓ ຈົບ**

# ໔. ນັນທະກະສູດ

## ວ່າດ້ວຍພຣະນັນທະກະສະແດງທຳ

[໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນ ພຣະເຊຕະວັນ ອາຣາມຂອງ ອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ສະໄໝນັ້ນ ທ່ານພຣະນັນທະກະຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ຊວນໃຈໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈ ໃຫ້ສົດຊື່ນຮ່າເຮີງດ້ວຍທຳມີກະຖາໃນຫໍສັນ

ເມື່ອເວລາເຢັນ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ຫຼີບຫຼີກເຂົ້າໄປສູ່ຫໍສັນ ໄດ້ປະທັບຢືນຖ້າທີ່ຊຸ້ມປະຕູດ້ານນອກຈົນຈົບກະຖາ ຊົງຮູ້ວ່າຈົບກະຖາແລ້ວ ຊົງອະແຮ່ມ ແລ້ວເຄາະທີ່ບານປະຕູ ພິກຂຸເຫຼົ່ານັ້ນ ເປີດປະຕູຖວາຍພຣະຜູ້ມີພຣະພາກເຈົ້າແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ຕັດກັບທ່ານພຣະນັນທະກະດັ່ງນີ້ວ່າ

“ນັນທະກະ ທຳບັນລະຍາຍທີ່ທ່ານສະແດງແກ່ພິກຂຸທັງຫຼາຍນີ້ຍາວຫຼາຍ ເຮົາຄອຍຖ້າຟັງຢູ່ທີ່ ຊຸ້ມປະຕູນອກຈົນກວ່າຈະຈົບກະຖາ ເຮັດໃຫ້ເຮົາຮູ້ສຶກເມື່ອຍຫຼັງ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະນັນທະກະຮູ້ສຶກກະດາກໃຈ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ຮູ້ເລີຍວ່າ “ພຣະຜູ້ມີພຣະພາກເຈົ້າປະທັບຢືນຖ້າທີ່ຊຸ້ມປະຕູດ້ານນອກ ຖ້າຂ້າພຣະອົງຮູ້ ກໍຈະສະແດງບໍ່ໄດ້ເຖິງພຽງນີ້”

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ທ່ານພຣະນັນທະກະກຳລັງລຳບາກໃຈ ຈຶ່ງຕັດກັບທ່ານດັ່ງນີ້ວ່າ “ດີແລ້ວ ດີແລ້ວ ນັນທະກະ ການທີ່ທ່ານທັງຫຼາຍຜູ້ເປັນກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ ນັ່ງປະຊຸມກັນເຮັດກິດ ໒ ຢ່າງ ຄື ທຳມີກະຖາ ຫຼື ຄວາມ

ເປັນຜູ້ນິ່ງຢ່າງພຣະອະຣິຍະ ນັນທະກະ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ມີສີນ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນຢ່າງນີ້ ທ່ານເພິ່ງພໍ່າເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ" ເມື່ອໃດ ພິກຂຸເປັນຜູ້ມີສັດທາແລະມີສີນ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸເປັນຜູ້ມີສັດທາແລະມີສີນ ແຕ່ບໍ່ໄດ້ເຈໂຕສະມາທິພາຍໃນ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນຢ່າງນີ້ ທ່ານເພິ່ງພໍ່າເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ ແລະໄດ້ເຈໂຕສະມາທິພາຍໃນ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສີນ ແລະໄດ້ເຈໂຕສະມາທິພາຍໃນ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸເປັນຜູ້ມີສັດທາ ມີສີນ ແລະໄດ້ເຈໂຕສະມາທິພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທໍາດ້ວຍປັນຍາອັນຍິ່ງ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ຢ່າງນີ້ ນັນທະກະ ສັດສີ່ຕີນ ແຕ່ຕີນຂ້າງໜຶ່ງຂອງມັນບົກຜ່ອງພິການ ມັນຊື່ວ່າເປັນສັດບໍ່ບໍລິບູນດ້ວຍອົງນັ້ນ ຢ່າງນີ້ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ເປັນຜູ້ມີສັດທາ ມີສີນ ແລະໄດ້ເຈໂຕສະມາທິພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທໍາດ້ວຍປັນຍາອັນຍິ່ງ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ຢ່າງນີ້ ທ່ານເພິ່ງພໍ່າເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ ໄດ້ເຈໂຕສະມາທິພາຍໃນ ແລະໄດ້ຄວາມເຫັນແຈ້ງທໍາດ້ວຍປັນຍາອັນຍິ່ງ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສີນ ໄດ້ເຈໂຕສະມາທິພາຍໃນ ແລະໄດ້ຄວາມເຫັນແຈ້ງທໍາດ້ວຍ ປັນຍາອັນຍິ່ງ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງສະເດັດລຸກຈາກອາສະນະ ເຂົ້າໄປສູ່ພຣະວິຫານ

ຄັ້ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຫຼີກໄປແລ້ວບໍ່ດົນ ທ່ານພຣະນັນທະກະ ຈຶ່ງຮຽກພິກຂຸທັງຫຼາຍມາກ່າວວ່າ "ຜູ້ມີອາຍຸທັງຫຼາຍ ບັດນີ້ ພຣະຜູ້ມີພຣະພາກເຈົ້າຊົງປະກາດພົມມະຈັນທີ່ ບໍລິສຸດບໍລິບູນຄົບຖ້ວນດ້ວຍບົດ ໔ ປະການແລ້ວ ສະເດັດລຸກ ຈາກອາສະນະເຂົ້າໄປສູ່ພຣະວິຫານ ພຣະອົງຕັດວ່າ

ນັນທະກະ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ມີສີນ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ຢ່າງນີ້ ທ່ານເພິ່ງບໍາເພັນອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ" ເມື່ອໃດ ພິກຂຸເປັນຜູ້ມີສັດທາແລະມີສີນ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ພິກຂຸເປັນຜູ້ມີສັດທາແລະມີສີນ ແຕ່ບໍ່ໄດ້ເຈໂຕສະມາທິພາຍໃນ ฯລฯ ໄດ້ເຈໂຕສະມາທິພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທໍາດ້ວຍປັນຍາອັນຍິ່ງ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ

ຢ່າງນີ້ ນັນທະກະ ສັດສີ່ຕີນແຕ່ຕີນຂ້າງໜຶ່ງພິການ ມັນຊື່ວ່າ ເປັນສັດບໍ່ບໍລິບູນດ້ວຍອົງນັ້ນ ຢ່າງນີ້ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ເປັນຜູ້ມີສັດທາ ມີສີນ ແລະໄດ້ເຈໂຕສະມາທິພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາ ອັນຍິ່ງ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ຢ່າງນີ້ ທ່ານເພິ່ງພໍ່າເພັງອົງນັ້ນໃຫ້ ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ ໄດ້ເຈໂຕສະມາທິພາຍໃນ ແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສີນ ໄດ້ເຈໂຕສະມາທິພາຍໃນ ແລະໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນຢ່າງນີ້

ຜູ້ມີອາຍຸທັງຫຼາຍ ອານິສົງໃນການຟັງທຳຕາມການ ແລະການສົນທະນາທຳ ຕາມການ ໕ ປະການນີ້

ອານິສົງ ໕ ປະການ ອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸທັງຫຼາຍ ຜູ້ມີອາຍຸທັງຫຼາຍ ພິກຂຸສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸທັງຫຼາຍໂດຍວິທີໃດ ໆ ພິກຂຸນັ້ນຍ່ອມເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ ເຄົາລົບ ແລະເປັນທີ່ຍົກຍ້ອງຂອງພຣະສາດສະດາໂດຍວິທີນັ້ນ ໆ ນີ້ເປັນອານິສົງ ປະການທີ ໑ ໃນການຟັງທຳຕາມການແລະການສົນທະນາທຳຕາມການ

໔. ພິກຂຸໃນທຳວິໄນນີ້ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸທັງຫຼາຍ ພິກຂຸສະແດງທຳມີຄວາມງາມໃນເບື້ອງຕົ້ນ ຯລຯ ປະກາດພົມມະຈັນ ຯລຯ ແກ່ພິກຂຸທັງຫຼາຍໂດຍວິທີໃດ ໆ ພິກຂຸນັ້ນຍ່ອມເປັນຜູ້ຮູ້ອັດຖະ ແລະຮູ້ທຳໃນທຳນັ້ນໂດຍວິທີນັ້ນ ໆ ນີ້ເປັນອານິສົງປະການທີ ໔ ໃນການຟັງທຳຕາມການແລະການສົນທະນາທຳຕາມການ

໓. ພິກຂຸໃນທຳວິໄນນີ້ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸທັງຫຼາຍ ພິກຂຸສະແດງທຳມີຄວາມງາມໃນເບື້ອງຕົ້ນ ຯລຯ ປະກາດພົມມະຈັນ ຯລຯ ແກ່ພິກຂຸທັງຫຼາຍໂດຍວິທີໃດ ໆ ພິກຂຸນັ້ນຍ່ອມເຫັນແຈ້ງບົດທີ່ເລິກເຊິ່ງ ໃນທຳນັ້ນດ້ວຍປັນຍາ ນີ້ເປັນອານິສົງປະການທີ ໓ ໃນການຟັງທຳ ຕາມການ ແລະການສົນທະນາທຳຕາມການ

໔. ພິກຂຸໃນທຳວິໄນນີ້ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸທັງຫຼາຍ ພິກຂຸສະແດງທຳມີຄວາມງາມໃນເບື້ອງຕົ້ນ ຯລຯ ປະກາດພົມມະຈັນ ຯລຯ ແກ່ພິກຂຸທັງຫຼາຍໂດຍວິທີໃດ ໆ ເພື່ອນພົມມະຈາຣີທັງຫຼາຍຍ່ອມຍົກຍ້ອງທ່ານຢ່າງຍິ່ງວ່າ "ທ່ານຜູ້ນີ້ໄດ້ບັນລຸແລ້ວ ຫຼື ກຳລັງຈະໄດ້ບັນລຸຢ່າງແນ່ນອນ" ນີ້ເປັນອານິສົງປະການທີ ໔ ໃນການຟັງທຳຕາມການແລະການສົນທະນາທຳຕາມການ

໕. ພິກຂຸໃນທຳວິໄນນີ້ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມ ທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸທັງຫຼາຍ ພິກຂຸສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸທັງຫຼາຍໂດຍວິທີໃດ ໆ ບັນດາພິກຂຸເຫຼົ່ານັ້ນ ພິກຂຸເຫຼົ່າໃດເປັນເສຂະ ມີໃຈຍັງບໍ່ບັນລຸ ປາຖະໜາທຳອັນເປັນແດນກະເສມຈາກໂຍຄະອັນປະເສີດຢູ່ ພິກຂຸເຫຼົ່ານັ້ນຟັງທຳນັ້ນແລ້ວ ຜາຣົບຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໂດຍວິທີນັ້ນ ໆ ສ່ວນພິກຂຸເຫຼົ່າໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວເພາະຮູ້ໂດຍຊອບ ພິກຂຸເຫຼົ່ານັ້ນຟັງທຳນັ້ນແລ້ວ ປະກອບທຳເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຢູ່ເນືອງ ໆ ນີ້ເປັນອານິສົງປະການທີ ໕ ໃນການຟັງທຳຕາມການ ແລະການສົນທະນາທຳຕາມການ

ຜູ້ມີອາຍຸທັງຫຼາຍ ອານິສົງໃນການຟັງທຳຕາມການ ແລະການສົນທະນາທຳຕາມການ ໕ ປະການນີ້

**ບັນທະກະສູດທີ ໔ ຈົບ**

## ໕. ພະລະສູດ

### ວ່າດ້ວຍພະລະ

[໕] ພິກຂຸທັງຫຼາຍ ພະລະ ໔ ປະການນີ້

ພະລະ ໔ ປະການ ອັນໃດແດ່ ຄື

໑. ປັນຍາພະລະ (ກຳລັງຄືປັນຍາ)

໔. ວິຣິຍະພະລະ (ກຳລັງຄືຄວາມພຽນ)
໕. ອະນະວັດຊະພະລະ (ກຳລັງຄືກຳທີ່ບໍ່ມີໂທດ)
໖. ສັງຄະຫະພະລະ (ກຳລັງຄືການສົງເຄາະ)

ປັນຍາພະລະ ເປັນແນວໃດ?

ຄື ທຳເຫຼົ່າໃດເປັນກຸສົນ ນັບວ່າເປັນກຸສົນ ທຳເຫຼົ່າໃດເປັນອະກຸສົນ ນັບວ່າເປັນອະກຸສົນ ທຳເຫຼົ່າໃດເປັນທຳມີໂທດ ນັບວ່າເປັນທຳມີໂທດ ທຳເຫຼົ່າໃດເປັນທຳບໍ່ມີໂທດ ນັບວ່າເປັນທຳບໍ່ມີໂທດ ທຳເຫຼົ່າໃດເປັນທຳດຳ ນັບວ່າເປັນທຳດຳ ທຳເຫຼົ່າໃດເປັນທຳຂາວ ນັບວ່າເປັນທຳຂາວ ທຳເຫຼົ່າໃດເປັນທຳທີ່ຄວນເສບ ນັບວ່າເປັນທຳທີ່ຄວນເສບ ທຳເຫຼົ່າໃດເປັນທຳທີ່ບໍ່ຄວນເສບ ນັບວ່າເປັນທຳທີ່ບໍ່ຄວນເສບ ທຳເຫຼົ່າໃດເປັນທຳທີ່ບໍ່ສາມາດທຳຄວາມເປັນອະຣິຍະ ນັບວ່າເປັນທຳທີ່ບໍ່ສາມາດທຳຄວາມເປັນອະຣິຍະ ທຳເຫຼົ່າໃດເປັນທຳສາມາດທຳຄວາມເປັນອະຣິຍະ ນັບວ່າເປັນທຳສາມາດທຳຄວາມເປັນອະຣິຍະ ທຳເຫຼົ່ານັ້ນເປັນທຳທີ່ບຸກຄົນເຫັນໄດ້ດ້ວຍດີ ພິຈາລະນາແລ້ວດ້ວຍປັນຍາ ນີ້ຮຽກວ່າ ປັນຍາພະລະ

ວິຣິຍະພະລະ ເປັນແນວໃດ?

ຄື ທຳເຫຼົ່າໃດເປັນອະກຸສົນ ນັບວ່າເປັນອະກຸສົນ ທຳເຫຼົ່າໃດເປັນທຳມີໂທດ ນັບວ່າເປັນທຳມີໂທດ ທຳເຫຼົ່າໃດເປັນທຳດຳ ນັບວ່າເປັນທຳດຳ ທຳເຫຼົ່າໃດ ເປັນທຳທີ່ບໍ່ຄວນເສບ ນັບວ່າເປັນທຳທີ່ບໍ່ຄວນເສບ ທຳເຫຼົ່າໃດເປັນທຳທີ່ບໍ່ສາມາດທຳຄວາມເປັນອະຣິຍະ ນັບວ່າເປັນທຳທີ່ບໍ່ສາມາດທຳຄວາມເປັນອະຣິຍະ ບຸກຄົນສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນ ເພື່ອລະທຳເຫຼົ່ານັ້ນ ທຳເຫຼົ່າໃດເປັນກຸສົນ ນັບວ່າເປັນກຸສົນ ທຳເຫຼົ່າໃດເປັນທຳບໍ່ມີໂທດ ນັບວ່າເປັນທຳບໍ່ມີໂທດ ທຳເຫຼົ່າໃດເປັນທຳຂາວ ນັບວ່າເປັນທຳຂາວ ທຳເຫຼົ່າໃດເປັນທຳທີ່ຄວນເສບ ນັບວ່າເປັນທຳທີ່ຄວນເສບ ທຳເຫຼົ່າໃດເປັນທຳທີ່ສາມາດທຳຄວາມເປັນອະຣິຍະ ນັບວ່າເປັນທຳທີ່ສາມາດທຳຄວາມເປັນອະຣິຍະ ບຸກຄົນສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອໄດ້ທຳເຫຼົ່ານັ້ນ ນີ້ຮຽກວ່າ ວິຣິຍະພະລະ

ອະນະວັດຊະພະລະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເປັນຜູ້ປະກອບດ້ວຍກາຍຍະກຳທີ່ບໍ່ມີໂທດ ປະກອບດ້ວຍວະຈີກຳທີ່ບໍ່ມີໂທດ ປະກອບດ້ວຍມະໂນກຳທີ່ບໍ່ມີໂທດ ນີ້ຮຽກວ່າ ອະນະວັດຊະພະລະ

ສັງຄະຫະພະລະ ເປັນແນວໃດ?

ຄື ສັງຄະຫະວັດຖຸ (ທຳເຄື່ອງຍຶດໜ່ຽວ) ໔ ປະການນີ້ ໄດ້ແກ່ (໑) ທານ (ການໃຫ້) (໒) ເປີຍຍະວັດຊະ (ວາຈາເປັນທີ່ຮັກ) (໓) ອັດຖະຈະຣິຍາ (ການປະພຶດປະໂຫຍດ) (໔) ສະມານັດຕະຕາ (ການວາງຕົນສະໝ່ຳສະເໝີ) ພິກຂຸທັງຫຼາຍ ການໃຫ້ທຳເລີດກວ່າການໃຫ້ທັງຫຼາຍ ການສະແດງທຳເລື້ອຍ ໆ ແກ່ບຸກຄົນຜູ້ຕ້ອງການຈະຟັງ ງ່ຽງໂສຕະລົງສະດັບເລີດກວ່າວາຈາເປັນທີ່ຮັກທັງຫຼາຍ ການຊັກຊວນຄົນທີ່ບໍ່ມີສັດທາໃຫ້ຕັ້ງໝັ້ນ ດຳຣົງໝັ້ນໃນສັດທາສຳປະທາ ຊັກຊວນຄົນທີ່ບໍ່ມີສິນໃຫ້ຕັ້ງໝັ້ນ ດຳຣົງໝັ້ນໃນສິນສຳປະທາ ຊັກຊວນຄົນທີ່ມີຄວາມຂີ້ຖີ່ໃຫ້ຕັ້ງໝັ້ນ ດຳຣົງໝັ້ນໃນຈາຄະສຳປະທາ ຊັກຊວນຄົນທີ່ມີປັນຍາຊາມໃຫ້ຕັ້ງໝັ້ນ ດຳຣົງໝັ້ນໃນປັນຍາສຳປະທາ ເລີດກວ່າການປະພຶດປະໂຫຍດທັງຫຼາຍ ການທີ່ພຣະໂສດາບັນມີຕົນສະເໝີກັບພຣະໂສດາບັນ ພຣະສະກະທາຄາມີ ມີຕົນສະເໝີກັບພຣະສະກະທາຄາມີ ພຣະອະນາຄາມີ ມີຕົນສະເໝີກັບພຣະອະນາຄາມີ ພຣະອະຣະຫັນມີຕົນສະເໝີກັບ ພຣະອະຣະຫັນ ເລີດກວ່າຄວາມມີຕົນສະເໝີທັງຫຼາຍ ນີ້ຮຽກວ່າ ສັງຄະຫະພະລະ

ພິກຂຸທັງຫຼາຍ ພະລະ ໔ ປະການເປັນຢ່າງນີ້

ພິກຂຸທັງຫຼາຍ ອະຣິຍະສາວົກປະກອບດ້ວຍພະລະ ໔ ປະການນີ້ ຍ່ອມຂ້າມພົ້ນໄພ ໕ ປະການໄດ້ ໄພ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ອາຊີວິກະໄພ | (ໄພເນື່ອງດ້ວຍການລ້ຽງຊີບ) |
| ໒. ອະສິໂລກະໄພ | (ໄພຄືຄວາມເສື່ອມເສຍຊື່ສຽງ) |
| ໓. ປະຣິສະສາຣັດຊະໄພ | (ໄພຄືຄວາມເກງກົວໃນບໍລິສັດ) |
| ໔. ມໍຣະນະໄພ | (ໄພຄືຄວາມຕາຍ) |
| ໕. ທຸກຄະຕິໄພ | (ໄພຄືທຸກຄະຕິ) |

ພິກຂຸທັງຫຼາຍ ອະຣິຍະສາວົກພິຈາລະນາເຫັນດັ່ງນີ້ວ່າ ເຮົາບໍ່ຢ້ານອາຊີວິກະໄພ ເຮົາຈັກຢ້ານອາຊີວິກະໄພໄປເຮັດຫຍັງ ເຮົາມີພະລະ ໔ ປະການ ຄື (໑) ປັນຍາພະລະ (໒) ວິຣິຍະພະລະ (໓) ອະນະວັດຊະພະລະ (໔) ສັງຄະຫະພະລະ ຄົນມີປັນຍາຊາມເພິ່ງຢ້ານອາຊີວິກະໄພ ຄົນຂີ້ຄ້ານເພິ່ງຢ້ານອາຊີວິກະໄພ ຄົນມີວຽກງານທາງກາຍທີ່ມີໂທດ ມີວຽກງານທາງວາຈາທີ່ມີໂທດ ແລະມີວຽກງານທາງໃຈທີ່ມີໂທດເພິ່ງຢ້ານອາຊີວິກະໄພ ຄົນຜູ້ບໍ່ສົງເຄາະໃຜ ໆ ເພິ່ງຢ້ານອາຊີວິກະໄພ

| | |
|---|---|
| ເຮົາບໍ່ຢ້ານອະສິໂລກະໄພ | ฯลฯ |
| ເຮົາບໍ່ຢ້ານປະຣິສະສາຣັດຊະໄພ | ฯลฯ |
| ເຮົາບໍ່ຢ້ານມໍຣະນະໄພ | ฯลฯ |

ເຮົາບໍ່ຢ້ານທຸກຄະຕິໄພ ເຮົາຈັກຢ້ານທຸກຄະຕິໄພໄປເຮັດຫຍັງ ເຮົາມີພະລະ ໔ ປະການ ຄື (໑) ປັນຍາພະລະ (໒) ວິຣິຍະພະລະ (໓) ອະນະວັດຊະພະລະ (໔) ສັງຄະຫະພະລະ ຄົນມີປັນຍາຊາມເພິ່ງຢ້ານທຸກຄະຕິໄພ ຄົນຂີ້ຄ້ານເພິ່ງຢ້ານທຸກຄະຕິໄພ ຄົນມີວຽກງານທາງກາຍທີ່ມີໂທດ ມີວຽກງານທາງວາຈາທີ່ມີໂທດ ແລະມີວຽກງານທາງໃຈທີ່ມີໂທດເພິ່ງຢ້ານທຸກຄະຕິໄພ ຄົນຜູ້ບໍ່ສົງເຄາະໃຜ ໆ ເພິ່ງຢ້ານທຸກຄະຕິໄພ

ພິກຂຸທັງຫຼາຍ ອະຣິຍະສາວົກປະກອບດ້ວຍພະລະ ໔ ປະການນີ້ແລ ຍ່ອມຂ້າມພົ້ນໄພ ໕ ປະການນີ້ໄດ້

**ພະລະສູດທີ ໕ ຈົບ**

# ໖. ເສວະນາສູດ

## ວ່າດ້ວຍສິ່ງທີ່ ຄວນເສບແລະບໍ່ຄວນເສບ

[໖] ໃນທີ່ນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ฯລฯ ທ່ານພຣະສາຣີບຸດໄດ້ກ່າວດັ່ງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ແມ່ນບຸກຄົນກໍເພິ່ງຮູ້ວ່າມີ ໒ ປະເພດ ຄື ບຸກຄົນທີ່ຄວນຄົບ ແລະບຸກຄົນທີ່ ບໍ່ຄວນຄົບ ແມ່ນຈີວອນກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ຈີວອນທີ່ຄວນໃຊ້ສອຍ ແລະຈີວອນທີ່ບໍ່ຄວນໃຊ້ສອຍ ແມ່ນບິນທະບາດກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ບິນທະບາດທີ່ຄວນສັນ ແລະບິນທະບາດທີ່ບໍ່ຄວນສັນ ແມ່ນເສນາສະນະກໍເພິ່ງຮູ້ວ່າມີ ໒ ຢ່າງ ຄືເສນາສະນະທີ່ຄວນຢູ່ອາໄສ ແລະເສນາສະນະທີ່ບໍ່ຄວນຢູ່ອາໄສ ແມ່ນບ້ານແລະນິຄົມກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ບ້ານ ແລະນິຄົມທີ່ຄວນຢູ່ອາໄສ ບ້ານແລະນິຄົມທີ່ບໍ່ຄວນຢູ່ອາໄສ ແມ່ນຊົນນະບົດແລະປະເທດກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ຊົນນະບົດ ແລະປະເທດທີ່ຄວນຢູ່ກຫອາໄສ ແລະຊົນນະບົດ ແລະປະເທດທີ່ບໍ່ຄວນຢູ່ອາໄສ

ເຮົາກ່າວໄວ້ເຊັ່ນນີ້ ໒ ວ່າ "ແມ່ນບຸກຄົນກໍເພິ່ງຮູ້ວ່າມີ ໒ ປະເພດ ຄື ບຸກຄົນ ທີ່ຄວນຄົບ ແລະບຸກຄົນທີ່ບໍ່ຄວນຄົບ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ບັນດາບຸກຄົນ ໒ ປະເພດນັ້ນ ບຸກຄົນໃດພິກຂຸຮູ້ວ່າ "ເມື່ອເຮົາຄົບບຸກຄົນນີ້ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ ບໍຣິຂານ ສຳລັບຊີວິດເຫຼົ່າໃດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທີ່ເຮົາຜູ້ເປັນບັນພະຊິດຄວນກຽມໄວ້ໃຫ້ພ້ອມ ບໍຣິຂານສຳລັບຊີວິດເຫຼົ່ານັ້ນຍ່ອມເກີດຂຶ້ນໄດ້ໂດຍຍາກ ແລະ

ປະໂຫຍດຄືຄວາມເປັນສະມະນະທີ່ເຮົາອອກຈາກເຮືອນບວດເປັນບັນພະຊິດ ຕ້ອງການ ກໍຍັງບໍ່ເຖິງຄວາມຈະເລີນເຕັມທີ່ " ພິກຂຸແມ່ນຮູ້ບຸກຄົນນັ້ນໃນເວລາກາງຄືນຫຼືກາງເວັນ ກໍຕາມ ກໍບໍ່ຕ້ອງບອກລາ ຈາກໄປໄດ້ ບໍ່ຄວນຕິດຕາມບຸກຄົນນັ້ນໄປ

ບຸກຄົນໃດພິກຂຸຮູ້ວ່າ "ເມື່ອເຮົາຄົບບຸກຄົນນີ້ແລ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ ບໍຣິຂານສຳລັບຊີວິດເຫຼົ່າໃດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະ ປັດໄຈເພສັດຊະບໍຣິຂານ ທີ່ເຮົາຜູ້ເປັນບັນພະຊິດຄວນກຽມໄວ້ໃຫ້ພ້ອມ ບໍຣິຂານສຳລັບຊີວິດເຫຼົ່ານັ້ນຍ່ອມເກີດຂຶ້ນໄດ້ໂດຍຍາກ ແລະປະໂຫຍດ ຄື ຄວາມເປັນສະມະນະທີ່ເຮົາອອກຈາກເຮືອນບວດເປັນບັນພະຊິດຕ້ອງການ ກໍຍັງບໍ່ເຖິງຄວາມຈະເລີນເຕັມທີ່ " ພິກຂຸແມ່ນຮູ້ບຸກຄົນນັ້ນ ກໍບໍ່ຕ້ອງບອກລາ ຈາກໄປໄດ້ ບໍ່ຄວນຕິດຕາມບຸກຄົນນັ້ນໄປ

ບຸກຄົນໃດພິກຂຸຮູ້ວ່າ "ເມື່ອເຮົາຄົບບຸກຄົນນີ້ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ບໍຣິຂານສຳລັບຊີວິດເຫຼົ່າໃດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທີ່ເຮົາຜູ້ເປັນບັນພະຊິດຄວນກຽມໄວ້ໃຫ້ພ້ອມ ບໍຣິຂານສຳລັບຊີວິດເຫຼົ່ານັ້ນຍ່ອມເກີດຂຶ້ນໄດ້ໂດຍຍາກ ແລະປະໂຫຍດຄືຄວາມເປັນສະມະນະ ທີ່ເຮົາອອກຈາກເຮືອນບວດເປັນບັນພະຊິດຕ້ອງການ ກໍຍັງບໍ່ເຖິງຄວາມຈະເລີນເຕັມທີ່ " ພິກຂຸຮູ້ບຸກຄົນນັ້ນແລ້ວຄວນຕິດຕາມບຸກຄົນນັ້ນໄປ ບໍ່ຄວນຈາກໄປ

ບຸກຄົນໃດພິກຂຸຮູ້ວ່າ "ເມື່ອເຮົາຄົບບຸກຄົນນີ້ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ແລະບໍຣິຂານສຳລັບຊີວິດເຫຼົ່າໃດ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ທີ່ເຮົາຜູ້ເປັນບັນພະຊິດຄວນກຽມໄວ້ໃຫ້ພ້ອມ ບໍຣິຂານສຳລັບຊີວິດເຫຼົ່ານັ້ນຍ່ອມເກີດຂຶ້ນໄດ້ໂດຍຍາກ ແລະປະໂຫຍດຄືຄວາມເປັນສະມະນະ ທີ່ເຮົາອອກຈາກເຮືອນບວດເປັນບັນພະຊິດຕ້ອງການ ກໍຍັງບໍ່ເຖິງຄວາມຈະເລີນເຕັມທີ່ " ພິກຂຸຄວນຕິດຕາມບຸກຄົນນັ້ນໄປຈົນຕະຫຼອດຊີວິດ ບໍ່ເພິ່ງຈາກໄປ ແມ່ນຈະຖືກຂັບໄລ່ກໍຕາມ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ແມ່ນບຸກຄົນກໍເພິ່ງຮູ້ວ່າມີ ໔ ປະເພດ ຄື ບຸກຄົນທີ່ຄວນຄົບ ແລະບຸກຄົນທີ່ບໍ່ຄວນຄົບ"

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ແມ່ນຈີວອນກໍເພິ່ງຮູ້ວ່າມີ ໔ ຢ່າງ ຄື ຈີວອນທີ່ຄວນໃຊ້ສອຍ ແລະຈີວອນທີ່ບໍ່ຄວນໃຊ້ສອຍ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ບັນດາຈີວອນ ໔ ຢ່າງນັ້ນ ຈີວອນໃດພິກຂຸຮູ້ວ່າ "ເມື່ອເຮົາໃຊ້ສອຍຈີວອນນີ້ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ" ຈີວອນນີ້ບໍ່ຄວນ

ໃຊ້ສອຍ ຈີວອນໃດພິກຂຸຮູ້ວ່າ "ເມື່ອເຮົາໃຊ້ສອຍຈີວອນນີ້ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ຈີວອນນີ້ຄວນໃຊ້ສອຍ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ແມ່ນຈີວອນກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ຈີວອນທີ່ໃຊ້ຄວນສອຍ ແລະຈີວອນທີ່ບໍ່ຄວນໃຊ້ສອຍ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ແມ່ນບິນທະບາດກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ບິນທະບາດ ທີ່ຄວນສັນແລະບິນທະບາດທີ່ບໍ່ຄວນສັນ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ບັນດາບິນທະບາດ ໒ ຢ່າງນັ້ນ ບິນທະບາດໃດພິກຂຸຮູ້ວ່າ "ເມື່ອເຮົາສັນບິນທະບາດນີ້ແລ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ ບິນທະບາດນີ້ບໍ່ຄວນສັນ ບິນທະບາດໃດພິກຂຸຮູ້ວ່າ "ເມື່ອເຮົາສັນບິນທະບາດນີ້ແລ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ບິນທະບາດນີ້ຄວນສັນ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ແມ່ນບິນທະບາດກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ບິນທະບາດທີ່ຄວນສັນ ແລະບິນທະບາດທີ່ບໍ່ຄວນສັນ"

ເຮົາກ່າວໄວ້ເຊັ່ນນີ້ແລວ່າ "ແມ່ນເສນາສະນະກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ເສນາສະນະທີ່ຄວນຢູ່ອາໄສ ແລະເສນາສະນະທີ່ບໍ່ຄວນຢູ່ອາໄສ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວ ໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ບັນດາເສນາສະນະ ໒ ຢ່າງນັ້ນ ເສນາສະນະໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສເສນາສະນະນີ້ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ" ເສນາສະນະນີ້ບໍ່ຄວນຢູ່ອາໄສ ເສນາສະນະໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສ ເສນາສະນະນີ້ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ເສນາສະນະນີ້ຄວນໃຊ້ສອຍ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ແມ່ນເສນາສະນະກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ເສນາສະນະທີ່ຄວນຢູ່ອາໄສ ແລະເສນາສະນະທີ່ບໍ່ຄວນຢູ່ອາໄສ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ແມ່ນບ້ານແລະນິຄົມກໍເພິ່ງຮູ້ວ່າມີ ໒ ຢ່າງ ຄື ບ້ານ ແລະນິຄົມທີ່ຄວນຢູ່ອາໄສ ບ້ານແລະນິຄົມທີ່ບໍ່ຄວນຢູ່ອາໄສ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ບັນດາບ້ານແລະນິຄົມ ໒ ຢ່າງນັ້ນ ບ້ານແລະນິຄົມໃດ ພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສບ້ານແລະນິຄົມນີ້ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ" ບ້ານແລະນິຄົມນີ້ບໍ່ຄວນຢູ່ອາໄສ ບ້ານແລະນິຄົມໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສບ້ານ

ແລະນິຄົມນີ້ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ" ບ້ານແລະນິຄົມນີ້ຄວນຢູ່ອາໄສ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ແມ່ນບ້ານ ແລະນິຄົມກໍເພິ່ງຮູ້ວ່າມີ ໔ ຢ່າງ ຄື ບ້ານແລະນິຄົມທີ່ຄວນຢູ່ອາໄສ ແລະບ້ານແລະນິຄົມທີ່ບໍ່ຄວນຢູ່ອາໄສ"

ເຮົາກ່າວໄວ້ແລ້ວເຊັ່ນນີ້ວ່າ "ແມ່ນຊົນນະບົດ ແລະປະເທດກໍເພິ່ງຮູ້ວ່າມີ ໔ ຢ່າງ ຄື ຊົນນະບົດ ແລະປະເທດທີ່ຄວນຢູ່ອາໄສ ຊົນນະບົດແລະປະເທດທີ່ບໍ່ຄວນຢູ່ອາໄສ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນັ້ນວ່າ ບັນດາຊົນນະບົດແລະປະເທດ ໔ ຢ່າງນັ້ນ ຊົນນະບົດແລະປະເທດໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສຊົນນະບົດ ແລະປະເທດນີ້ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ ຊົນນະບົດ ແລະປະເທດນີ້ບໍ່ຄວນຢູ່ອາໄສ ຊົນນະບົດ ແລະປະເທດໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສຊົນນະບົດ ແລະປະເທດນີ້ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍ ຈະເລີນຍິ່ງຂຶ້ນ" ຊົນນະບົດ ແລະປະເທດນີ້ຄວນຢູ່ອາໄສ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ແມ່ນຊົນນະບົດ ແລະປະເທດກໍເພິ່ງຮູ້ວ່າມີ ໔ ຢ່າງ ຄື ຊົນນະບົດແລະປະເທດທີ່ຄວນຢູ່ອາໄສ ແລະຊົນນະບົດແລະປະເທດທີ່ບໍ່ຄວນຢູ່ອາໄສ"

**ເສວະນາສູດທີ ໙ ຈົບ**

# ໆ. ສຸຕະວາສູດ

## ວ່າດ້ວຍປະຣິພາຊົກຊື່ສຸຕະວາ

[໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພູຄິດຊະກູດ ເຂດເມືອງຣາດຊະຄຶ ຄັ້ງນັ້ນ ປະຣິພາຊົກຊື່ ສຸຕະວາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າ ພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນ ສະໄໝໜຶ່ງ ຂ້າພຣະອົງຢູ່ໃນເມືອງຣາດຊະຄຶ ອັນມີຊື່ວ່າຄິຣິພົບຊະນີ້ ໃນທີ່ນັ້ນ ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກ ພຣະຜູ້ມີພຣະພາກເຈົ້າວ່າ "ສຸຕະວາ ພິກຂຸໃດ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະອະ

ສັງໂຍດແລ້ວ ລຸດພົ້ນແລ້ວເພາະຮູ້ໂດຍຊອບ ພິກຂຸນັ້ນ ບໍ່ອາດຈະລ່ວງລະເມີດຖານະ ໕ ປະການໄດ້ ຄື

໑. ບໍ່ອາດຈະຈົງໃຈປົງຊີວິດສັດ
໒. ບໍ່ອາດຈະຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ອັນເປັນສ່ວນແຫ່ງຄວາມເປັນຂະໂມຍ
໓. ບໍ່ອາດຈະເສບເມຖຸນທຳ
໔. ບໍ່ອາດຈະເວົ້າຕົວະທັງທີ່ຮູ້
໕. ບໍ່ອາດຈະສະສົມບໍຣິໂພກການເໝືອນທີ່ເຄີຍເປັນຄະລືຫັດມາກ່ອນ

ຄຳນີ້ຂ້າພຣະອົງໄດ້ສະດັບຮັບມາຈາກພຣະຜູ້ມີພຣະພາກເຈົ້າ ໃສ່ໃຈຊົງຈຳໄວ້ໄດ້ຖືກຕ້ອງດີແລ້ວ ແມ່ນບໍ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ສຸຕະວາ ແມ່ນແລ້ວ ຄຳນີ້ທ່ານໄດ້ສະດັບຮັບມາໃສ່ໃຈຊົງຈຳໄວ້ໄດ້ຖືກຕ້ອງດີແລ້ວ ສຸຕະວາ ເວລາກ່ອນ ແລະເວລານີ້ ເຮົາກໍຍັງກ່າວຢ່າງນີ້ວ່າ ພິກຂຸໃດເປັນ ອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວເພາະຮູ້ໂດຍຊອບ ພິກຂຸນັ້ນບໍ່ອາດຈະລ່ວງລະເມີດຖານະ ๙ ປະການ ຄື

໑. ບໍ່ອາດຈະຈົງໃຈປົງຊີວິດສັດ
໒. ບໍ່ອາດຈະຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ອັນເປັນສ່ວນແຫ່ງຄວາມເປັນຂະໂມຍ
໓. ບໍ່ອາດຈະເສບເມຖຸນທຳ
໔. ບໍ່ອາດຈະເວົ້າຕົວະທັງທີ່ຮູ້
໕. ບໍ່ອາດຈະສະສົມບໍຣິໂພກການເໝືອນທີ່ເຄີຍເປັນຄະລືຫັດມາກ່ອນ
໖. ບໍ່ອາດຈະລຳອຽງເພາະຮັກ
໗. ບໍ່ອາດຈະລຳອຽງເພາະຊັງ
໘. ບໍ່ອາດຈະລຳອຽງເພາະຫຼົງ
໙. ບໍ່ອາດຈະລຳອຽງເພາະຢ້ານ

ສຸຕະວາ ເວລາກ່ອນ ແລະເວລານີ້ ເຮົາກໍຍັງກ່າວຢ່າງນີ້ວ່າ “ພິກຂຸໃດ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວເພາະຮູ້ໂດຍຊອບ ພິກຂຸນັ້ນບໍ່ອາດຈະລ່ວງລະເມີດຖານະ ໙ ປະການນີ້ແລ”

# ໗. ສັດຊະສູດ

## ວ່າດ້ວຍປະຣິພາຊົກຊື່ສັດຊະ

[໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພູຄິດຊະກູດ ເຂດເມືອງຣາດຊະຄຶ ຄັ້ງນັ້ນ ປະຣິພາຊົກຊື່ ສັດຊະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າ ພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນ ສະໄໝໜຶ່ງ ຂ້າພຣະອົງຢູ່ໃນເມືອງຣາດຊະຄຶ ອັນມີຊື່ວ່າຄິຣິພົບຊະນີ້ ໃນທີ່ນັ້ນ ຂ້າພຣະອົງໄດ້ສະດັບຮັບມາສະເພາະພຣະພັກ ພຣະຜູ້ມີພຣະພາກເຈົ້າວ່າ "ສັດຊະ ພິກຂຸໃດເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວເພາະຮູ້ໂດຍຊອບ ພິກຂຸນັ້ນບໍ່ອາດຈະລ່ວງລະເມີດຖານະ ໕ ປະການ ຄື

໑. ບໍ່ອາດຈະຈົງໃຈປົງຊີວິດສັດ
໒. ບໍ່ອາດຈະຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ອັນເປັນສ່ວນແຫ່ງຄວາມເປັນຂະໂມຍ
໓. ບໍ່ອາດຈະເສບເມຖຸນທຳ
໔. ບໍ່ອາດຈະເວົ້າຕົວະທັງທີ່ຮູ້
໕. ບໍ່ອາດຈະສະສົມບໍຣິໂພກການເໝືອນທີ່ເຄີຍເປັນຄະລຶຫັດມາກ່ອນ

ຄຳນີ້ຂ້າພຣະອົງໄດ້ສະດັບຮັບມາຈາກພຣະຜູ້ມີພຣະພາກເຈົ້າ ໃສ່ໃຈຊົງຈຳໄວ້ໄດ້ຖືກຕ້ອງດີແລ້ວ ແມ່ນບໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສັດຊະ ຈິງ ຄຳນີ້ທ່ານໄດ້ສະດັບຮັບມາໃສ່ໃຈຊົງຈຳໄວ້ໄດ້ ຖືກຕ້ອງດີແລ້ວ ສັດຊະ ເວລາກ່ອນແລະເວລານີ້ ເຮົາກໍຍັງກ່າວຢ່າງນີ້ວ່າ ພິກຂຸໃດເປັນອະຣະຫັນຕະ- ຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວເພາະຮູ້ໂດຍຊອບ ພິກຂຸນັ້ນ ບໍ່ອາດຈະລ່ວງລະເມີດຖານະ ໙ ປະການ ຄື

໑. ບໍ່ອາດຈະຈົງໃຈປົງຊີວິດສັດ

ຯລຯ

໕. ບໍ່ອາດຈະສະສົມບໍຣິໂພກການເໝືອນທີ່ເຄີຍເປັນຄະລຶຫັດມາກ່ອນ

៦. ບໍ່ອາດຈະບອກຄືນພຣະພຸດທະເຈົ້າ
៧. ບໍ່ອາດຈະບອກຄືນພຣະທຳ
៨. ບໍ່ອາດຈະບອກຄືນພຣະສົງ
៩. ບໍ່ອາດຈະບອກຄືນສິກຂາ

ສັດຊະ ເວລາກ່ອນແລະເວລານີ້ ເຮົາກໍຍັງກ່າວຢ່າງນີ້ວ່າ “ພິກຂຸໃດເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວເພາະຮູ້ໂດຍຊອບ ພິກຂຸນັ້ນບໍ່ອາດຈະລ່ວງລະເມີດຖານະ ៩ ປະການນີ້ແລ”

**ສັດຊະສູດທີ ៨ ຈົບ**

# ៩. ປຸກຄະລະສູດ

## ວ່າດ້ວຍບຸກຄົນ ៩ ຈຳພວກ

[៩] ພິກຂຸທັງຫຼາຍ ບຸກຄົນ ៩ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ៩ ຈຳພວກໃດແດ່ ຄື

១. ພຣະອະຣະຫັນ
២. ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນ
៣. ພຣະອະນາຄາມີ
៤. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ
៥. ພຣະສະກະທາຄາມີ
៦. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ
៧. ພຣະໂສດາບັນ
៨. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ
៩. ປຸຖຸຊົນ

ພິກຂຸທັງຫຼາຍ ບຸກຄົນ ៩ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

**ປຸກຄະລະສູດທີ ៩ ຈົບ**

# ໑໐. ອາຫຸເນີຍຍະສູດ

## ວ່າດ້ວຍບຸກຄົນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ

[໑໐] ພິກຂຸທັງຫຼາຍ ບຸກຄົນ ໙ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໙ ຈຳພວກໃດແດ່ ຄື

໑. ພຣະອະຣະຫັນ
໒. ບຸກຄົນຜູ້ປະຕິບັດເພື່ອອະຣະຫັດຕະຜົນ
໓. ພຣະອະນາຄາມີ
໔. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ
໕. ພຣະສະກະທາຄາມີ
໖. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ
໗. ພຣະໂສດາບັນ
໘. ບຸກຄົນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ
໙. ໂຄຕະຣະພູບຸກຄົນ

ພິກຂຸທັງຫຼາຍ ບຸກຄົນ ໙ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ອາຫຸເນີຍຍະສູດທີ ໑໐ ຈົບ**

**ສຳໂພທິວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ສຳໂພທິສູດ | ໒. ນິດສະຍະສູດ |
| ໓. ເມຄິຍະສູດ | ໔. ນັນທະກະສູດ |
| ໕. ພະລະສູດ | ໖. ເສວະນາສູດ |
| ໗. ສຸຕະວາສູດ | ໘. ສັດຊະສູດ |
| ໙. ປຸກຄະລະສູດ | ໑໐. ອາຫຸເນີຍຍະສູດ |

# ໘. ສີຫະນາທະວັກ

## ໝວດວ່າດ້ວຍການບັນລືສີຫະນາດ

## ໑. ສີຫະນາທະສູດ

### ວ່າດ້ວຍການບັນລືສີຫະນາດ

[໑໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນດຖະກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນແລ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈຳພັນສາຢູ່ໃນເມືອງສາວັດຖີແລ້ວ ປາຖະໜາຈະຈາຣິກໄປໃນຊົນນະບົດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ລຳດັບນັ້ນ ທ່ານພຣະສາຣີບຸດລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າທຳປະທັກຂິນແລ້ວຈາກໄປ

ຄັ້ງນັ້ນ ເມື່ອທ່ານພຣະສາຣີບຸດຈາກໄປແລ້ວບໍ່ດົນ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ທ່ານພຣະສາຣີບຸດກະທົບຂ້າພຣະອົງແລ້ວບໍ່ຂໍໂທດ ແຕ່ກໍຈາຣິກໄປ"

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ "ພິກຂຸ ທ່ານຈົ່ງມາ ຈົ່ງໄປຮຽກສາຣີບຸດຕາມຄຳຂອງເຮົາວ່າ "ທ່ານສາຣີບຸດ ພຣະສາດສະດາຮຽກຫາທ່ານ" ພິກຂຸນັ້ນທູນສະໜອງຮັບພຣະດຳຣັດພຣະຜູ້ມີພຣະພາກເຈົ້າແລ້ວ ເຂົ້າໄປຫາທ່ານພຣະສາຣີບຸດເຖິງທີ່ຢູ່ ໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ "ທ່ານສາຣີບຸດ ພຣະສາດສະດາຮັບສັ່ງຮຽກຫາທ່ານ" ທ່ານພຣະສາຣີບຸດຮັບຄຳແລ້ວ

ສະໄໝນັ້ນ ທ່ານພຣະມະຫາໂມກຄັນລານະ ແລະທ່ານພຣະອານົນຖືລູກກຸນແຈທ່ຽວປະກາດໄປໃນວິຫານວ່າ "ອອກໄປເທີ້ນ ທ່ານຜູ້ມີອາຍຸທັງຫຼາຍ ອອກໄປເທີ້ນ ທ່ານຜູ້ມີອາຍຸທັງຫຼາຍ ບັດນີ້ ທ່ານພຣະສາຣີບຸດຈັກບັນລືສີຫະນາດ ຕໍ່ພຣະພັກພຣະຜູ້ມີພຣະພາກເຈົ້າ"

ເມື່ອທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບທ່ານພຣະສາຣີບຸດວ່າ "ສາຣີບຸດ ເພື່ອນພົມມະຈາຣີອົງໜຶ່ງໃນທຳວິໄນນີ້ກ່າວຫາທ່ານວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ທ່ານພຣະ ສາຣີບຸດກະທົບຂ້າພຣະອົງແລ້ວ ບໍ່ຂໍໂທດ ແຕ່ກໍຈາຣິກໄປ"

ທ່ານພຣະສາຣີບຸດຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາ ສະຕິ (ສະຕິໄປໃນກາຍ) ໄວ້ໃນກາຍ ພິກຂຸນັ້ນ ກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງ ໃນທຳວິໄນ ນີ້ແລ້ວ ບໍ່ຂໍໂທດ ກໍເພິ່ງຈາຣິກໄປ

ຂ້າແດ່ ພຣະອົງຜູ້ຈະເລີນ

໑. ຊົນທັງຫຼາຍຍ່ອມຖິ້ມຂອງສະອາດແດ່ ຖິ້ມຂອງບໍ່ສະອາດແດ່ ຖິ້ມຄູດແດ່ ຖິ້ມມູດແດ່ ຖິ້ມນ້ຳລາຍແດ່ ຖິ້ມໜອງແດ່ ຖິ້ມເລືອດແດ່ ລົງເທິງແຜ່ນດິນ ແຕ່ແຜ່ນດິນກໍບໍ່ອຶດອັດ ຣະອາ ຫຼື ຣັງກຽດສິ່ງນັ້ນ ແມ່ນສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ມີໃຈສະເໝີດ້ວຍແຜ່ນດິນ ໄພບູນ ເປັນ ມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດ ບໍ່ຕັ້ງໝັ້ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນ ກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງ ໃນ ພຣະທຳວິໄນນີ້ແລ້ວ ບໍ່ຂໍໂທດ ເພິ່ງຈາຣິກໄປ

໒. ຊົນທັງຫຼາຍຍ່ອມລ້າງຂອງສະອາດແດ່ ລ້າງຂອງບໍ່ສະອາດແດ່ ລ້າງຄູດແດ່ ລ້າງມູດ ແດ່ ລ້າງນ້ຳລາຍແດ່ ລ້າງໜອງແດ່ ລ້າງເລືອດແດ່ ໃນນ້ຳ ແຕ່ນ້ຳກໍບໍ່ອຶດອັດ ຣະອາ ຫຼື ຣັງ ກຽດສິ່ງນັ້ນ ແມ່ນສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ມີໃຈສະເໝີດ້ວຍນ້ຳ ໄພບູນ ເປັນມະຫັກ ຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີ ອົງໃດອົງໜຶ່ງໃນພຣະທຳ ວິໄນນີ້ແລ້ວ ບໍ່ຂໍໂທດ ເພິ່ງຈາຣິກໄປ

໓. ໄຟຍ່ອມໄໝ້ຂອງສະອາດແດ່ ໄໝ້ຂອງບໍ່ສະອາດແດ່ ໄໝ້ຄູດແດ່ ໄໝ້ມູດແດ່ ໄໝ້ ນ້ຳລາຍແດ່ ໄໝ້ໜອງແດ່ ໄໝ້ເລືອດແດ່ ແຕ່ໄຟກໍບໍ່ອຶດອັດ ຣະອາ ຫຼື ຣັງກຽດສິ່ງນັ້ນ ແມ່ນ ສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ມີໃຈສະເໝີດ້ວຍໄຟ ໄພບູນ ເປັນມະຫັກຄະຕະ ບໍ່ມີຂອບ ເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາ ສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງໃນພຣະທຳວິໄນນີ້ແລ້ວ ບໍ່ຂໍ ໂທດ ເພິ່ງຈາຣິກໄປ

໔. ລົມຍ່ອມພັດຂອງສະອາດແດ່ ພັດຂອງບໍ່ສະອາດແດ່ ພັດຄູດແດ່ ພັດມູດແດ່ ພັດນ້ຳ ລາຍແດ່ ພັດໜອງແດ່ ພັດເລືອດແດ່ ແຕ່ລົມກໍບໍ່ ອຶດອັດ ຣະອາ ຫຼື ຣັງກຽດສິ່ງນັ້ນ ແມ່ນ

ສັນໃດ ຂ້າພຣະອົງກໍສັນນັ້ນ ຄືກັນ ມີໃຈສະເໝີດ້ວຍລົມ ໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງ ໃນພຣະທຳວິໄນນີ້ແລ້ວ ບໍ່ຂໍໂທດ ເພິ່ງຈາຣິກໄປ

໕. ຜ້າເຊັດຝຸ່ນຍ່ອມເຊັດຂອງສະອາດແດ່ ເຊັດຂອງບໍ່ສະອາດແດ່ ເຊັດຄູດແດ່ ເຊັດມູດແດ່ ເຊັດນ້ຳລາຍແດ່ ເຊັດໜອງແດ່ ເຊັດເລືອດແດ່ ແຕ່ຜ້າເຊັດທຸລີກໍບໍ່ອຶດອັດ ຣະອາ ຫຼື ຣັງກຽດສິ່ງນັ້ນ ແມ່ນສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ມີໃຈສະເໝີດ້ວຍຜ້າເຊັດທຸລີ ໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີ ອົງໃດອົງໜຶ່ງໃນພຣະທຳວິໄນນີ້ແລ້ວ ບໍ່ຂໍໂທດ ເພິ່ງຈາຣິກໄປ

໖. ເດັກຈັນທານຜູ້ຊາຍ ຫຼື ເດັກຈັນທານຜູ້ຍິງ ຫິ້ວກະຕ່າ ນຸ່ງຜ້າຊາຍຂາດ ເມື່ອເຂົ້າໄປສູ່ບ້ານຫຼືນິຄົມ ຍ່ອມຕັ້ງຈິດນອບນ້ອມເທົ່ານັ້ນເຂົ້າໄປ ແມ່ນສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ມີໃຈສະເໝີດ້ວຍເດັກຈັນທານ ຜູ້ຊາຍຫຼືເດັກຈັນທານຜູ້ຍິງ ໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງ ໃນພຣະທຳວິໄນນີ້ແລ້ວ ບໍ່ຂໍໂທດ ເພິ່ງຈາຣິກໄປ

໗. ງົວຜູ້ເຂົາຫັກ ສະງົບສະງ່ຽມ ໄດ້ຮັບການເຝິກມາດີ ໄດ້ຮັບການແນະນຳມາດີ ໃຫ້ຕັ້ງໃຈຮູ້ດີ ຍ່າງໄປຕາມຖະໜົນຫົນທາງ ຕາມທາງແຍກນ້ອຍໃຫຍ່ ບໍ່ດິດ ຫຼື ຊົນໃຜ ໆ ແມ່ນສັນໃດ ຂ້າພຣະ ອົງກໍສັນນັ້ນຄືກັນ ມີໃຈສະເໝີ ດ້ວຍງົວຜູ້ເຂົາຫັກ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງ ໃນພຣະທຳວິໄນນີ້ແລ້ວ ບໍ່ຂໍໂທດ ເພິ່ງຈາຣິກໄປ

໘. ສະຕີຫຼືບຸຣຸດທີ່ຍັງໜຸ່ມສາວ ມີປົກກະຕິມັກແຕ່ງຕົວ ອາບນ້ຳດຳຫົວແລ້ວ ເພິ່ງອຶດອັດ ຣະອາ ຫຼື ຣັງກຽດຊາກງູ ຊາກໝາ ຫຼື ຊາກມະນຸດທີ່ຄ້ອງຄໍໄວ້ ແມ່ນສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ຍ່ອມອຶດອັດ ຣະອາ ຣັງກຽດກາຍອັນເປື່ອຍເນົ່ານີ້ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງໃນພຣະທຳວິໄນນີ້ແລ້ວ ບໍ່ຂໍໂທດ ເພິ່ງຈາຣິກໄປ

໙. ຂ້າແດ່ພຣະອົງຜູ້ຈະເລີນ ບຸຣຸດປະຄອງຖາດມັນຂຸ້ນທີ່ມີຊ່ອງນ້ອຍໃຫຍ່ ນ້ຳໄຫຼອອກໄດ້ຂ້າງເທິງ ໄຫຼອອກໄດ້ຂ້າງລຸ່ມ ແມ່ນສັນໃດ ຂ້າພຣະອົງກໍສັນນັ້ນຄືກັນ ຍ່ອມບໍລິຫານກາຍນີ້

ທີ່ມີຊ່ອງນ້ອຍຊ່ອງໃຫຍ່ ໄຫຼເຂົ້າໄຫຼອອກຢູ່ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸໃດບໍ່ຕັ້ງໝັ້ນກາຍະຄະຕາສະຕິໄວ້ໃນກາຍ ພິກຂຸນັ້ນກະທົບເພື່ອນພົມມະຈາຣີອົງໃດອົງໜຶ່ງ ໃນພຣະທຳວິໄນນີ້ແລ້ວ ບໍ່ຂໍໂທດເພິ່ງຈາຣິກໄປ

ລຳດັບນັ້ນ ພິກຂຸອົງນັ້ນລຸກຈາກອາສະນະ ຫົ່ມຈີວອນບ່ຽງບ່າ ໝອບລົງແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມແລ້ວ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ໂທດໄດ້ມາເຖິງຂ້າພຣະອົງຜູ້ເປັນຄົນພານ ເປັນຄົນຫຼົງ ເປັນຄົນບໍ່ສະຫຼາດ ທີ່ໄດ້ກ່າວຕູ່ທ່ານພຣະສາຣີບຸດດ້ວຍຄຳທີ່ບໍ່ມີຢູ່ ເປົ່າປະໂຫຍດ ເປັນເລື້ອງເທັດ ບໍ່ເປັນຈິງ ຂໍພຣະຜູ້ມີພຣະພາກເຈົ້າໂຜດອົດໂທດແກ່ຂ້າພຣະອົງເພື່ອຄວາມສັງລວມຕໍ່ໄປເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂທດໄດ້ມາເຖິງທ່ານຜູ້ເປັນຄົນພານ ເປັນຄົນຫຼົງ ເປັນຄົນບໍ່ສະຫຼາດ ທີ່ທ່ານໄດ້ກ່າວຕູ່ສາຣີບຸດດ້ວຍຄຳທີ່ບໍ່ມີຢູ່ ເປົ່າປະໂຫຍດ ເປັນເລື້ອງຕົວະ ບໍ່ເປັນຈິງ ແຕ່ເພາະທ່ານເຫັນໂທດໂດຍຄວາມເປັນໂທດແລ້ວເຮັດຄືນຕາມທຳ ເຮົາຍ່ອມອົດໂທດນັ້ນແກ່ທ່ານ ຂໍ້ທີ່ພິກຂຸເຫັນໂທດໂດຍຄວາມເປັນໂທດແລ້ວ ເຮັດຄືນຕາມທຳ ເຖິງຄວາມສັງລວມຕໍ່ໄປ ນີ້ເປັນຄວາມຈະເລີນໃນອະຣິຍະວິໄນ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະສາຣີບຸດດັ່ງນີ້ວ່າ "ສາຣີບຸດ ທ່ານຈົງອົດໂທດໃຫ້ແກ່ໂມຄະບຸຣຸດຜູ້ນີ້ເທີ້ນ ກ່ອນທີ່ຫົວຂອງເຂົາຈະແຕກເປັນ ໗ ສ່ຽງ ເພາະໂທດ ນັ້ນນັ້ນເອງ"

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈະອົດໂທດ ແກ່ທ່ານອົງນັ້ນ ຖ້າທ່ານອົງນັ້ນໄດ້ກ່າວກັບຂ້າພຣະອົງຢ່າງນີ້ວ່າ "ຂໍທ່ານຜູ້ມີອາຍຸນັ້ນ ຈົງອົດໂທດແກ່ຂ້າພະເຈົ້າດ້ວຍເທີ້ນ"

**ສີຫະນາທະສູດທີ ໑ ຈົບ**

# ໘. ສະອຸປາທິເສສະສູດ

## ວ່າດ້ວຍສະອຸປາທິເສສະບຸກຄົນ

[໑໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ເມື່ອເວລາເຊົ້າ ທ່ານພຣະສາຣີບຸດ ຄອງອັນຕະຣາວາສົກ ຖືບາດແລະຈີວອນ ເຂົ້າໄປໃນເມືອງສາວັດຖີ ເພື່ອບິນທະບາດ ຕໍ່ມາ ທ່ານພຣະສາຣີບຸດໄດ້ມີຄວາມຄິດດັ່ງນີ້ວ່າ "ການທ່ຽວໄປບິນທະບາດໃນເມືອງສາວັດຖີຍັງເຊົ້າໂພດ ທາງທີ່ດີເຮົາ

ຄວນ ເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ" ເມື່ອແລ້ວ ທ່ານພຣະສາຣີບຸດຈຶ່ງເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສກັບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ສະໄໝນັ້ນເອງ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ກຳລັງນັ່ງປະຊຸມສົນທະນາກັນດັ່ງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ບຸກຄົນໃດບຸກຄົນໜຶ່ງເປັນສະອຸປາທິເສສະ (ຍັງມີອຸປາທິເຫຼືອ) ເມື່ອຕາຍໄປ ລ້ວນບໍ່ພົ້ນຈາກນະຣົກ ບໍ່ພົ້ນຈາກກຳເນີດສັດດີຣັດສານ ບໍ່ພົ້ນຈາກເຜດວິໄສ ບໍ່ພົ້ນຈາກອະບາຍ ທຸຄະຕິ ແລະວິນິບາດ

ຄັ້ງນັ້ນ ທ່ານພຣະສາຣີບຸດບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ "ເຮົາຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ"

ເມື່ອທ່ານພຣະສາຣີບຸດທ່ຽວໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ຫຼັງຈາກສັນອາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເມື່ອເຊົ້ານີ້ ຂ້າພຣະອົງຄອງ ອັນຕະຣາວາສົກ ຖືບາດແລະຈີວອນ ເຂົ້າໄປໃນເມືອງສາວັດຖີເພື່ອບິນທະບາດ ໄດ້ມີຄວາມຄິດ ດັ່ງນີ້ວ່າ "ການທ່ຽວໄປບິນທະບາດໃນເມືອງສາວັດຖີ ຍັງເຊົ້າໂພດ ທາງທີ່ດີ ເຮົາຄວນເຂົ້າໄປສູ່ ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ" ເມື່ອແລ້ວ ຂ້າພຣະອົງຈຶ່ງເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສກັບອັນຍະເດຍຣະຖີເຫຼົ່ານັ້ນ ພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ສະໄໝນັ້ນ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ກຳລັງນັ່ງປະຊຸມກັນສົນທະນາກັນດັ່ງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ບຸກຄົນໃດບຸກຄົນໜຶ່ງເປັນສະອຸປາທິເສສະ ເມື່ອຕາຍໄປ ລ້ວນບໍ່ພົ້ນຈາກນະຣົກ ບໍ່ພົ້ນຈາກກຳເນີດສັດດີຣັດສານ ບໍ່ພົ້ນຈາກເຜດວິໄສ ບໍ່ພົ້ນຈາກອະບາຍ ທຸຄະຕິ ແລະວິນິບາດ ຂ້າພຣະອົງບໍ່ຍິນດີບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກມາດ້ວຍຄິດວ່າ "ເຮົາຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ສາຣີບຸດ ອັນຍະເດຍຣະຖີປະຣິພາຊົກຜູ້ໂງ່ບໍ່ສຽບແຫຼມ ເປັນພວກໃດແລະພວກໃດຈັກຮູ້ຈັກບຸກຄົນຜູ້ເປັນສະອຸປາທິເສສະວ່າເປັນສະອຸປາທິເສະສ ຫຼື ຈັກຮູ້ຈັກບຸກຄົນຜູ້ເປັນອະນຸປາທິເສສະວ່າເປັນອະນຸປາທິເສສະ

ສາຣີບຸດ ບຸກຄົນ ໙ ຈຳພວກນີ້ ເປັນສະອຸປາທິເສສະ ເມື່ອຕາຍໄປ ກໍພົ້ນຈາກນະຮົກໄດ້ ພົ້ນຈາກກຳເນີດສັດດີຣັດສານໄດ້ ພົ້ນຈາກເຜດວິໄສໄດ້ ພົ້ນຈາກອະບາຍ ທຸຄະຕິ ແລະວິນິບາດໄດ້

ບຸກຄົນ ໙ ຈຳພວກໃດແດ່ ຄື

໑. ບຸກຄົນບາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິໃຫ້ບໍລິບູນ ມີປົກກະຕິເຮັດປັນຍາພໍປະມານ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເຂົາຈຶ່ງເປັນອັນຕະຣາປະຣິນິບພາຍີ ນີ້ເປັນບຸກຄົນຈຳພວກທີ ໑ ຜູ້ເປັນສະອຸປາທິເສສະ ເມື່ອຕາຍໄປ ກໍພົ້ນຈາກນະຮົກໄດ້ ພົ້ນຈາກກຳເນີດສັດເດຍຣັດສານໄດ້ ພົ້ນຈາກເຜດວິໄສໄດ້ ພົ້ນຈາກອະບາຍ ທຸກຄະຕິ ແລະວິນິບາດໄດ້

໒. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິໃຫ້ບໍລິບູນ ມີປົກກະຕິເຮັດປັນຍາພໍປະມານ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ເຂົາຈຶ່ງເປັນອຸປະຫັດຈະປະຣິນິບພາຍີ ຯລຯ

໓. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນອະສັງຂາຣະປະຣິນິບພາຍີ ຯລຯ

໔. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນສະສັງຂາຣະປະຣິນິບພາຍີ ຯລຯ

໕. ບຸກຄົນບາງຄົນໃນໂລກນີ້ ຯລຯ ຈຶ່ງເປັນອຸດທັງໂສຕະອະກະນິດຖະຄາມີ ຯລຯ

໖. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິພໍປະມານ ມີປົກກະຕິເຮັດປັນຍາພໍປະມານ ເພາະສັງໂຍດ ໓ ປະການສິ້ນໄປ ແລະເພາະຣາຄະໂທສະ ແລະໂມຫະເບົາບາງ ເຂົາຈຶ່ງເປັນສະກະທາຄາມີ ມາສູ່ໂລກນີ້ອີກເທື່ອດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ນີ້ເປັນບຸກຄົນຈຳພວກທີ ໖ ຜູ້ເປັນສະອຸປາທິເສສະ ເມື່ອຕາຍໄປ ກໍພົ້ນຈາກນະຮົກໄດ້ ຯລຯ ພົ້ນຈາກອະບາຍ ທຸກຄະຕິ ແລະວິນິບາດໄດ້

໗. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິພໍປະມານ ມີປົກກະຕິເຮັດປັນຍາພໍປະມານ ເພາະສັງໂຍດ ໓ ປະການສິ້ນໄປ ເຂົາຈຶ່ງເປັນເອກະພີຊີ ເກີດເປັນມະນຸດອີກພຽງເທື່ອດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ນີ້ເປັນບຸກຄົນຈຳພວກທີ ໗ ຜູ້ເປັນສະອຸປາທິເສສະ ເມື່ອຕາຍໄປ ກໍພົ້ນຈາກນະຮົກໄດ້ ຯລຯ ພົ້ນຈາກອະບາຍ ທຸກຄະຕິ ແລະ ວິນິບາດໄດ້

໘. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິພໍປະມານ ມີປົກກະຕິເຮັດປັນຍາພໍປະມານ ເພາະສັງໂຍດ ໓ ປະການສິ້ນໄປ ເຂົາຈຶ່ງເປັນໂກ

ລັງໂກລະ ທ່ອງທ່ຽວໄປສູ່ຕະກູນ ໒ ຫຼື ໓ ຕະກູນ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ນີ້ເປັນບຸກຄົນຈຳພວກທີ ๓ ຜູ້ເປັນສະອຸປາທິເສສະ ເມື່ອຕາຍໄປ ກໍພົ້ນຈາກນະຣົກໄດ້ ໆລໆ ພົ້ນຈາກອະບາຍ ທຸຄະຕິແລະວິນິບາດໄດ້

໙. ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີປົກກະຕິເຮັດສິນໃຫ້ບໍລິບູນ ມີປົກກະຕິເຮັດສະມາທິພໍປະມານ ມີປົກກະຕິເຮັດປັນຍາພໍປະມານ ເພາະສັງໂຍດ ໓ ປະການສິ້ນໄປ ເຂົາຈຶ່ງເປັນສັດຕັກຂັດຕຸປະຣະມະ ທ່ອງທ່ຽວໄປໃນເທວະດາ ແລະມະນຸດຢ່າງຫຼາຍ ໗ ຄັ້ງ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ນີ້ເປັນບຸກຄົນຈຳພວກທີ ໙ ຜູ້ເປັນສະອຸປາທິເສສະ ເມື່ອຕາຍໄປ ກໍພົ້ນຈາກນະຣົກໄດ້ ພົ້ນຈາກ ກຳເນີດສັດເດຍຣັດສານໄດ້ ພົ້ນຈາກອະບາຍ ທຸກຄະຕິ ແລະວິນິບາດໄດ້

ສາຣີບຸດ ພວກອັນຍະເດຍຣະຖີປະຣິພາຊົກຜູ້ຈົ໊າ ບໍ່ສຽບແຫຼມ ເປັນພວກໃດ ແລະພວກໃດຈັກຮູ້ຈັກບຸກຄົນຜູ້ເປັນສະອຸປາທິເສສະວ່າເປັນສະອຸປາທິເສສະ ຫຼື ຈັກຮູ້ຈັກບຸກຄົນ ຜູ້ເປັນອະນຸປາທິເສສະ ວ່າເປັນອະນຸປາທິເສສະ ສາຣີບຸດ ບຸກຄົນ ໙ ຈຳພວກນີ້ແລ ເປັນສະອຸປາທິເສສະ ເມື່ອຕາຍໄປ ກໍພົ້ນຈາກນະຣົກໄດ້ ພົ້ນຈາກກຳເນີດສັດເດຍຣັດສານໄດ້ ພົ້ນຈາກເຜດວິໄສໄດ້ ພົ້ນຈາກອະບາຍ ທຸກຄະຕິ ແລະວິນິບາດໄດ້

ສາຣີບຸດ ທຳບັນລະຍາຍນີ້ຍັງບໍ່ແຈ້ງຊັດແກ່ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ກ່ອນ ຂໍ້ນັ້ນເພາະເຫດໃດ ເພາະປະສົງວ່າ ຊົນທັງຫຼາຍຟັງທຳບັນລະຍາຍນີ້ແລ້ວ ຢ່ານຳມາເຊິ່ງຄວາມຜະໝາດ ອີກຢ່າງໜຶ່ງ ເຮົາກ່າວທຳບັນລະຍາຍນີ້ໂດຍມຸ້ງເຖິງບັນຫາ

**ສະອຸປາທິເສສະສູດທີ ໒ ຈົບ**

# ໓. ໂກດຖິຕະສູດ

## ວ່າດ້ວຍພຣະມະຫາໂກດຖິຕະ

[໑໓] ຄັ້ງນັ້ນແລ ທ່ານພຣະມະຫາໂກດຖິຕະເຂົ້າໄປຫາທ່ານພຣະສາຣີບຸດເຖິງທີ່ຢູ່ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

“ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ “ກຳໃດໃຫ້ຜົນໃນປັດຈຸບັນ ຂໍກຳນັ້ນຈົ່ງໃຫ້ຜົນໃນອະນາຄົດແກ່ເຮົາດ້ວຍເທີ້ນ” ໄດ້ບໍ?”

ທ່ານພຣະສາຣີບຸດກ່າວວ່າ “ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ”

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດ ນີ້ວ່າ "ກຳໃດໃຫ້ຜົນໃນອະນາຄົດ ຂໍກຳນັ້ນຈົ່ງໃຫ້ຜົນໃນປັດຈຸບັນແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດ ນີ້ວ່າ "ກຳໃດໃຫ້ຜົນເປັນສຸກ ຂໍກຳນັ້ນຈົ່ງໃຫ້ຜົນເປັນທຸກແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດ ນີ້ວ່າ "ກຳໃດໃຫ້ຜົນເປັນທຸກ ຂໍກຳນັ້ນຈົ່ງໃຫ້ຜົນເປັນສຸກແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດ ນີ້ວ່າ "ກຳໃດໃຫ້ຜົນສຳເລັດແລ້ວ ຂໍກຳນັ້ນຈົ່ງບໍ່ໃຫ້ຜົນສຳເລັດແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດ ນີ້ວ່າ "ກຳໃດຍັງບໍ່ໃຫ້ຜົນສຳເລັດ ຂໍກຳນັ້ນຈົ່ງໃຫ້ຜົນສຳເລັດແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ "ກຳໃດໃຫ້ຜົນຫຼາຍ ຂໍກຳນັ້ນຈົ່ງໃຫ້ຜົນໜ້ອຍແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ "ກຳໃດໃຫ້ຜົນໜອຍ ຂໍກຳນັ້ນຈົ່ງໃຫ້ຜົນຫຼາຍແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ "ກຳໃດໃຫ້ຜົນ ຂໍກຳນັ້ນຈົ່ງບໍ່ໃຫ້ຜົນແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ "ກຳໃດບໍ່ໃຫ້ຜົນ ຂໍກຳນັ້ນຈົ່ງໃຫ້ຜົນແກ່ເຮົາເທີ້ນ" ໄດ້ບໍ?"

"ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

"ທ່ານສາຣີບຸດ ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນໃນປັດຈຸບັນ ຂໍກຳ ນັ້ນຈົ່ງໃຫ້ຜົນໃນອະນາຄົດແກ່ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນໃນອະນາຄົດ ຂໍກຳນັ້ນຈົ່ງໃຫ້ຜົນໃນປັດຈຸບັນແກ່ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນເປັນສຸກ ຂໍກຳນັ້ນຈົ່ງໃຫ້ຜົນເປັນທຸກແກ່ ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນເປັນທຸກ ຂໍກຳນັ້ນຈົ່ງໃຫ້ຜົນເປັນສຸກແກ່ ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນສຳເລັດແລ້ວ ຂໍກຳນັ້ນຈົ່ງບໍ່ໃຫ້ຜົນສຳເລັດແກ່ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດຍັງບໍ່ໃຫ້ຜົນສຳເລັດ ຂໍກຳນັ້ນຈົ່ງໃຫ້ຜົນສຳເລັດແກ່ ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນຫຼາຍ ຂໍກຳນັ້ນຈົ່ງໃຫ້ຜົນນ້ອຍແກ່ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນນ້ອຍ ຂໍກຳນັ້ນຈົ່ງໃຫ້ຜົນຫຼາຍແກ່ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດໃຫ້ຜົນ ຂໍກຳນັ້ນຈົ່ງບໍ່ໃຫ້ຜົນແກ່ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສາຣີບຸດ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດນີ້ວ່າ ກຳໃດບໍ່ໃຫ້ຜົນ ຂໍກຳນັ້ນຈົ່ງໃຫ້ຜົນແກ່ເຮົາເທີ້ນ ໄດ້ບໍ" ທ່ານກໍຕອບວ່າ "ຜູ້ມີອາຍຸ ຂໍ້ນີ້ບໍ່ໄດ້ເລີຍ" ເມື່ອເປັນເຊັ່ນນັ້ນ ບຸກຄົນຈະຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອປະໂຫຍດອັນໃດ?"

ທ່ານພຣະສາຣີບຸດກ່າວວ່າ "ຜູ້ມີອາຍຸ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອເຫັນສິ່ງທີ່ຍັງບໍ່ເຫັນ ເພື່ອບັນລຸສິ່ງທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງສິ່ງທີ່ຍັງບໍ່ເຮັດໃຫ້ແຈ້ງ ເພື່ອຕັດສະຣູ້ສິ່ງທີ່ຍັງບໍ່ຕັດສະຣູ້

ຄື ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອຮູ້ສິ່ງທີ່ຍັງບໍ່ຮູ້ ເພື່ອເຫັນສິ່ງທີ່ຍັງບໍ່ເຫັນ ເພື່ອບັນລຸສິ່ງທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງສິ່ງທີ່ຍັງບໍ່ເຮັດໃຫ້ແຈ້ງ ເພື່ອຕັດສະຣູ້ສິ່ງທີ່ຍັງບໍ່ຕັດສະຣູ້ວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິທາ"

ຜູ້ມີອາຍຸ ບຸກຄົນຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າກໍເພື່ອຮູ້ສິ່ງທີ່ຍັງບໍ່ຮູ້ ເພື່ອເຫັນສິ່ງທີ່ຍັງບໍ່ເຫັນ ເພື່ອບັນລຸສິ່ງທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງສິ່ງທີ່ຍັງບໍ່ເຮັດໃຫ້ແຈ້ງ ເພື່ອຕັດສະຣູ້ສິ່ງທີ່ຍັງບໍ່ໄດ້ຕັດຮູ້ນີ້ແລ"

**ໂກດຖິຕະສູດທີ ໓ ຈົບ**

# ໔. ສະມິດທິສູດ

## ວ່າດ້ວຍເລື້ອງວິຕົກ

[໑໔] ຄັ້ງນັ້ນແລ ທ່ານພຣະສະມິດທິເຂົ້າໄປຫາທ່ານພຣະສາຣີບຸດເຖິງທີ່ຢູ່ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະສະມິດທິດັ່ງນີ້ວ່າ

"ທ່ານສະມິດທິ ສັງກັບປະວິຕົກ (ວິຕົກອັນເປັນຄວາມດຳຣິ) ຂອງບຸຣຸດມີອັນໃດເປັນອາລົມເກີດຂຶ້ນ"

"ມີນາມຮູບເປັນອາລົມ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນຕ່າງກັນທີ່ໃດ"
"ທີ່ທາດ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນເຫດເກີດ"
"ມີຜັດສະເປັນເຫດເກີດ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນທີ່ປະຊຸມ"
"ມີເວທະນາເປັນທີ່ປະຊຸມ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນປະມຸກ"
"ມີສະມາທິເປັນປະມຸກ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນໃຫຍ່"
"ມີສະຕິເປັນໃຫຍ່ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນຍິ່ງ"
"ມີປັນຍາເປັນຍິ່ງ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນແກ່ນ"
"ມີວິມຸດຕິເປັນແກ່ນ ຂ້ານ້ອຍ"
"ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນທີ່ຢັ່ງລົງ"
"ມີນິບພານເປັນທີ່ຢັ່ງລົງ ຂ້ານ້ອຍ"

ທ່ານພຣະສາຣີບຸດກ່າວວ່າ "ທ່ານສະມິດທິ ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນອາລົມເກີດຂຶ້ນ" ທ່ານກໍຕອບວ່າ "ມີນາມຮູບເປັນອາລົມ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນ ຕ່າງກັນທີ່ໃດ" ທ່ານກໍ ຕອບວ່າ "ທີ່ທາດ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນ ມີອັນໃດເປັນເຫດເກີດ" ທ່ານກໍ ຕອບວ່າ "ມີຜັດສະເປັນເຫດເກີດ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນ ມີອັນໃດເປັນທີ່ປະຊຸມ" ທ່ານກໍຕອບວ່າ "ມີເວທະນາເປັນທີ່ປະຊຸມ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນ ມີອັນໃດເປັນປະມຸກ" ທ່ານກໍຕອບວ່າ "ມີສະມາທິເປັນປະມຸກ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນ ມີອັນໃດເປັນໃຫຍ່" ທ່ານກໍ ຕອບວ່າ "ມີສະຕິເປັນໃຫຍ່ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນ ມີອັນໃດເປັນຍິ່ງ" ທ່ານກໍ ຕອບວ່າ "ມີປັນຍາເປັນຍິ່ງ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນ ມີອັນໃດເປັນແກ່ນ" ທ່ານກໍຕອບວ່າ "ມີວິມຸດຕິເປັນແກ່ນ ຂ້ານ້ອຍ"

ເມື່ອຂ້ານ້ອຍຖາມທ່ານວ່າ "ທ່ານສະມິດທິ ສັງກັບປະວິຕົກເຫຼົ່ານັ້ນມີອັນໃດເປັນທີ່ ຢັ່ງລົງ" ທ່ານກໍຕອບວ່າ "ມີນິບພານເປັນທີ່ຢັ່ງລົງ ຂ້ານ້ອຍ"

ດີແລ້ວ ດີແລ້ວ ທ່ານສະມິດທິ ດີຫຼາຍ ທ່ານສະມິດທິ ທ່ານຖືກຂ້ານ້ອຍຖາມບັນຫາແລ້ວກໍແກ້ໄດ້ ແຕ່ທ່ານຢ່າທະນົງຕົນດ້ວຍການແກ້ບັນຫານັ້ນ"

**ສະມິດທິສູດທີ ໔ ຈົບ**

# ໕. ຄັນຖະສູດ

## ວ່າດ້ວຍຝີມີປາກບາດ ໙ ແຫ່ງ

[໑໕] ພິກຂຸທັງຫຼາຍ ຝີທີ່ເກີດມາໄດ້ຫຼາຍປີ ມີປາກບາດທີ່ບໍ່ແຕກ ໙ ປາກ ເປັນແດນໄຫຼອອກແຫ່ງທຸກສິ່ງ ໄຫຼອອກແຕ່ສິ່ງທີ່ບໍ່ສະອາດ ໄຫຼອອກແຕ່ສິ່ງທີ່ມີກິ່ນເໝັນ ໄຫຼອອກແຕ່ສິ່ງທີ່ໜ້າຣັງກຽດ ເປັນແດນໄຫຼເຂົ້າແຫ່ງທຸກສິ່ງ ໄຫຼເຂົ້າແຕ່ສິ່ງທີ່ບໍ່ສະອາດ ໄຫຼເຂົ້າແຕ່ສິ່ງທີ່ມີກິ່ນເໝັນ ໄຫຼເຂົ້າແຕ່ສິ່ງທີ່ ໜ້າຣັງກຽດ ແມ່ນສັນໃດ

ພິກຂຸທັງຫຼາຍ ຄຳວ່າ "ຝີ" ນີ້ເປັນຊື່ຂອງກາຍທີ່ສຳເລັດມາຈາກມະຫາພູຕະຮູບ ໔ ນີ້ ທີ່ມີມານດາບິດາເປັນແດນເກີດ ເຕີບໂຕມາດ້ວຍເຂົ້າສຸກແລະເຂົ້າໜົມ ມີຄວາມບໍ່ທ່ຽງ ມີການ ໄລ້ທາບີບນວດແຕກສະຫຼາຍແລະກະຈັດກະຈາຍໄປເປັນທຳມະດາ ກາຍນັ້ນມີປາກບາດທີ ບໍ່ແຕກ ໙ ປາກ ເປັນແດນໄຫຼອອກແຫ່ງທຸກສິ່ງ ໄຫຼອອກແຕ່ສິ່ງທີ່ບໍ່ສະອາດ ໄຫຼອອກແຕ່ສິ່ງທີ່ມີກິ່ນເໝັນ ໄຫຼອອກແຕ່ສິ່ງທີ່ໜ້າຣັງກຽດ ເປັນແດນໄຫຼເຂົ້າແຫ່ງທຸກສິ່ງ ໄຫຼເຂົ້າແຕ່ສິ່ງທີ່ບໍ່ສະອາດ ໄຫຼເຂົ້າແຕ່ສິ່ງທີ່ມີກິ່ນເໝັນ ໄຫຼເຂົ້າແຕ່ສິ່ງທີ່ໜ້າຣັງກຽດ ສັນນັ້ນ

ພິກຂຸທັງຫຼາຍ ເພາະເຫດນັ້ນ ທ່ານທັງຫຼາຍຄວນເບື່ອໜ່າຍໃນກາຍນີ້

**ຄັນຖະສູດທີ ໕ ຈົບ**

# ໖. ສັນຍາສູດ

## ວ່າດ້ວຍສັນຍາ

[໑໖] ພິກຂຸທັງຫຼາຍ ສັນຍາ ໙ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

ສັນຍາ ໙ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)
໒. ມໍຣະນະສັນຍາ (ໝາຍຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)
໓. ອາຫາເຣ ປະຕິກູນສັນຍາ (ໝາຍຄວາມປະຕິກູນໃນອາຫານ)
໔. ສັບພະໂລເກ ອະນະພິຣະຕະສັນຍາ (ໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ)
໕. ອະນິດຈະສັນຍາ (ໝາຍຄວາມບໍ່ທ່ຽງແຫ່ງສັງຂານ)
໖. ອະນິດເຈ ທຸກຂະສັນຍາ (ໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແຫ່ງສັງຂານ)
໗. ທຸກເຂ ອະນັດຕະສັນຍາ (ໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)
໘. ປະຫານະສັນຍາ (ໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໙. ວິຣາຄະສັນຍາ (ໝາຍວິຣາຄະວ່າເປັນທຳລະອຽດປະນີດ)

ພິກຂຸທັງຫຼາຍ ສັນຍາ ໙ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອຳມະຕະ ມີອຳມະຕະເປັນທີ່ສຸດ

**ສັນຍາສູດທີ ໖ ຈົບ**

# ໗. ກຸລະສູດ

## ວ່າດ້ວຍຕະກູນ

[໑໗] ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໙ ປະການ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ກໍບໍ່ຄວນເຂົ້າໄປຫາ ຫຼື ເຂົ້າໄປຫາແລ້ວ ກໍບໍ່ຄວນນັ່ງໃກ້ ອົງ ໙ ປະການ ອັນໃດແດ່ ຄື ຕະກູນ

໑. ຕ້ອນຮັບດ້ວຍຄວາມບໍ່ເຕັມໃຈ
໒. ໄຫວ້ດ້ວຍຄວາມບໍ່ເຕັມໃຈ
໓. ໃຫ້ອາສະນະດ້ວຍຄວາມບໍ່ເຕັມໃຈ

໔. ປົກປິດຂອງທີ່ມີຢູ່
໕. ມີຂອງຫຼາຍ ແຕ່ຖວາຍໜ້ອຍ
໖. ມີຂອງປະນີດ ແຕ່ຖວາຍຂອງເສົ້າໝອງ
໗. ຖວາຍໂດຍບໍ່ເຄົາລົບ ບໍ່ຖວາຍໂດຍເຄົາລົບ
໘. ບໍ່ນັ່ງໃກ້ເພື່ອຟັງທຳ
໙. ບໍ່ຍິນດີພາສິດຂອງພິກຂຸນັ້ນ

ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໙ ປະການນີ້ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ກໍບໍ່ຄວນເຂົ້າໄປຫາ ຫຼື ເຂົ້າໄປຫາແລ້ວ ກໍບໍ່ຄວນນັ່ງໃກ້

ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໙ ປະການ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ຄວນເຂົ້າໄປຫາ ຫຼື ເຂົ້າໄປຫາແລ້ວ ຄວນນັ່ງໃກ້ ອົງ ໙ ປະການ ອັນໃດແດ່ ຄື ຕະກູນ

໑. ຕ້ອນຮັບດ້ວຍຄວາມເຕັມໃຈ
໒. ໄຫວ້ດ້ວຍຄວາມເຕັມໃຈ
໓. ໃຫ້ອາສະນະດ້ວຍຄວາມເຕັມໃຈ
໔. ບໍ່ປົກປິດຂອງທີ່ມີຢູ່
໕. ມີຂອງຫຼາຍ ກໍຖວາຍຫຼາຍ
໖. ມີຂອງປະນີດ ກໍຖວາຍຂອງປະນີດ
໗. ຖວາຍໂດຍຄວາມເຄົາລົບ ບໍ່ຖວາຍໂດຍບໍ່ເຄົາລົບ
໘. ນັ່ງໃກ້ເພື່ອຟັງທຳ
໙. ຍິນດີພາສິດຂອງພິກຂຸນັ້ນ

ພິກຂຸທັງຫຼາຍ ຕະກູນທີ່ປະກອບດ້ວຍອົງ ໙ ປະການນີ້ແລ ພິກຂຸຍັງບໍ່ເຄີຍເຂົ້າໄປຫາ ຄວນເຂົ້າໄປຫາ ຫຼືເຂົ້າໄປຫາແລ້ວ ຄວນນັ່ງໃກ້

**ກຸລະສູດທີ ໗ ຈົບ**

# ໘. ນະວັງຄຸໂປສະຖະສູດ

## ວ່າດ້ວຍການຮັກສາອຸໂປສົດທີ່ມີອົງ ໙

[໑໘] ພິກຂຸທັງຫຼາຍ ອຸໂປສົດປະກອບດ້ວຍອົງ ໙ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮື່ອງຫຼາຍ ແຜ່ໄພສານຫຼາຍ

ອຸໂປສົດປະກອບດ້ວຍອົງ ໘ ປະການ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນແນວໃດ?

ຄື ອະຣິຍະສາວິກາໃນທຳວິໄນນີ້ເຫັນປະຈັກດັ່ງນີ້ວ່າ

໑. ພຣະອະຣະຫັນທັງຫຼາຍ ລະເວັ້ນຂາດຈາກການຂ້າສັດ ຄື ວາງທັນທາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນ ຕໍ່ສັບພະສັດຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກການຂ້າສັດ ຄື ວາງທັນທາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມເອັນດູ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອະຣະຫັນທັງຫຼາຍ ແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໑ ນີ້

ຯລຯ

໘. ພຣະອະຣະຫັນທັງຫຼາຍລະເວັ້ນຂາດຈາກທີ່ນອນສູງ ແລະທີ່ນອນໃຫຍ່ ນອນເທິງທີ່ນອນຕ່ຳ ຄື ເທິງຕຽງ ຫຼື ເທິງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດຊີວິດ ແມ່ນເຮົາກໍລະເວັ້ນຂາດຈາກທີ່ນອນສູງ ແລະທີ່ນອນໃຫຍ່ ນອນເທິງທີ່ນອນຕ່ຳ ຄື ເທິງຕຽງ ຫຼືເທິງທີ່ນອນທີ່ປູລາດດ້ວຍຫຍ້າຢູ່ຕະຫຼອດວັນໜຶ່ງ ແລະຄືນໜຶ່ງນີ້ໃນວັນນີ້ ເພາະອົງແມ່ນນີ້ ເຮົາຊື່ວ່າເຮັດຕາມພຣະອົນຫັນທັງຫຼາຍແລະຢູ່ຈຳອຸໂປສົດ ອຸໂປສົດເປັນອັນປະກອບດ້ວຍອົງທີ ໘ ນີ້

໙. ບຸກຄົນມີເມດຕາຈິດ ແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ອຸໂປສົດເປັນອັນປະກອບດ້ວຍອົງ ໙ ນີ້

ພິກຂຸທັງຫຼາຍ ອຸໂປສົດປະກອບດ້ວຍອົງ ໙ ທີ່ບຸກຄົນຢູ່ຈຳແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ມີຄວາມຮຸ່ງເຮືອງຫຼາຍ ແຜ່ໄພສານຫຼາຍ ເປັນຢ່າງນີ້

**ນະວັງຄຸໂປສະຖະສູດທີ ໘ ຈົບ**

## ໙. ເທວະຕາສູດ

### ວ່າດ້ວຍຜົນແຫ່ງການຕ້ອນຮັບຂອງເທວະດາ

[໑໙] ພິກຂຸທັງຫຼາຍ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາຈຳນວນຫຼາຍ ມີວັນນະງົດ

ງາມຍິ່ງ ເປ່ງຣັດສະໝີໃຫ້ສະຫວ່າງໄປທົ່ວພຣະເຊຕະວັນ ເຂົ້າມາຫາເຮົາເຖິງທີ່ຢູ່ ໄຫວ້ເຮົາແລ້ວ ຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບັນພະຊິດ ທັງຫຼາຍ ເຂົ້າມາຍັງເຮືອນຂອງຂ້າພຣະອົງທັງຫຼາຍຜູ້ເຄີຍເປັນມະນຸດ ຂ້າພຣະອົງເຫຼົ່ານັ້ນໄດ້ລຸກຮັບ ແຕ່ບໍ່ ຂາບໄຫວ້ ຂ້າພຣະອົງ ເຫຼົ່ານັ້ນເຮັດໜ້າທີ່ຍັງບໍ່ບໍລິບູນ ມີຄວາມຮ້ອນໃຈ ເດືອດຮ້ອນໃຈໃນພາຍ ຫຼັງ ຈຶ່ງເກີດໃນໝູ່ເທບຊັ້ນຕໍ່າ"

ເທວະດາຈຳນວນຫຼາຍອີກພວກໜຶ່ງ ເຂົ້າມາຫາເຮົາແລ້ວກ່າວດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ ຈະເລີນ ບັນພະຊິດທັງຫຼາຍເຂົ້າມາຍັງເຮືອນຂອງຂ້າພຣະອົງທັງຫຼາຍຜູ້ເຄີຍເປັນມະນຸດ ຂ້າພຣະອົງ ເຫຼົ່ານັ້ນໄດ້ລຸກຮັບ ຂາບໄຫວ້ ແຕ່ບໍ່ໃຫ້ອາສະນະແກ່ບັນພະຊິດເຫຼົ່ານັ້ນ ຂ້າພຣະອົງ ເຫຼົ່ານັ້ນເຮັດໜ້າທີ່ຍັງບໍ່ບໍລິບູນ ມີຄວາມຮ້ອນໃຈ ເດືອດຮ້ອນໃຈໃນພາຍຫຼັງ ຈຶ່ງເກີດໃນໝູ່ເທບຊັ້ນຕໍ່າ"

ເທວະດາຈຳນວນຫຼາຍອີກພວກໜຶ່ງ ເຂົ້າມາຫາເຮົາແລ້ວກ່າວດັ່ງນີ້ວ່າ "ຂ້າແດ່ພຣະອົງ ຜູ້ຈະເລີນ ບັນພະຊິດທັງຫຼາຍເຂົ້າມາຍັງເຮືອນຂອງຂ້າພຣະອົງທັງຫຼາຍຜູ້ເຄີຍເປັນມະນຸດ ຂ້າພ ຣະອົງເຫຼົ່ານັ້ນໄດ້ລຸກຮັບ ຂາບໄຫວ້ ແລະໃຫ້ອາສະນະ ແຕ່ບໍ່ໄດ້ແບ່ງປັນຂອງໃຫ້ຕາມຄວາມ ສາມາດ ຕາມກຳລັງ ຯລຯ ແບ່ງປັນຂອງໃຫ້ຕາມຄວາມສາມາດ ຕາມກຳລັງ ແຕ່ບໍ່ນັ່ງໃກ້ເພື່ອ ຟັງທຳ ຯລຯ ນັ່ງໃກ້ເພື່ອຟັງທຳ ແຕ່ບໍ່ງ່ຽງໂສຕະຟັງທຳ ຯລຯ ງ່ຽງໂສດ ຟັງທຳ ແຕ່ຟັງແລ້ວກໍ ບໍ່ຊົງຈຳທຳໄວ້ໄດ້ ຯລຯ ຟັງແລ້ວຊົງຈຳທຳໄວ້ໄດ້ ແຕ່ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳ ໄວ້ ຯລຯ ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ແຕ່ຫາຮູ້ອັດຖະຮູ້ທຳແລ້ວປະຕິບັດທຳ ສົມຄວນແກ່ທຳບໍ່ ຂ້າພຣະອົງເຫຼົ່ານັ້ນ ເຮັດໜ້າທີ່ຍັງບໍ່ບໍລິບູນ ມີຄວາມຮ້ອນໃຈ ເດືອດຮ້ອນໃຈ ໃນພາຍຫຼັງ ຈຶ່ງເກີດໃນໝູ່ເທບຊັ້ນຕໍ່າ"

ເທວະດາຈຳນວນຫຼາຍ ອີກພວກໜຶ່ງເຂົ້າມາຫາເຮົາແລ້ວກ່າວດັ່ງນີ້ວ່າ "ຂ້າແດ່ ພຣະ ອົງ ຜູ້ຈະເລີນ ບັນພະຊິດທັງຫຼາຍເຂົ້າມາຍັງເຮືອນຂອງຂ້າພຣະອົງທັງຫຼາຍຜູ້ເຄີຍເປັນມະນຸດ ຂ້າພຣະອົງເຫຼົ່ານັ້ນໄດ້ລຸກຮັບ ຂາບໄຫວ້ ໃຫ້ອາສະນະ ແບ່ງປັນຂອງໃຫ້ຕາມຄວາມສາມາດ ຕາມກຳລັງ ນັ່ງໃກ້ເພື່ອຟັງທຳ ງ່ຽງໂສຕະຟັງທຳ ຟັງແລ້ວຊົງຈຳທຳໄວ້ໄດ້ ພິຈາລະນາເນື້ອ ຄວາມແຫ່ງທຳທີ່ຊົງຈຳໄວ້ໄດ້ ແລະຮູ້ອັດຖະຮູ້ທຳແລ້ວປະຕິບັດທຳສົມຄວນແກ່ທຳ" ຂ້າພຣະອົງ ເຫຼົ່ານັ້ນເຮັດໜ້າທີ່ບໍລິບູນແລ້ວ ບໍ່ມີຄວາມຮ້ອນໃຈ ບໍ່ເດືອດຮ້ອນໃຈໃນພາຍຫຼັງ ຈຶ່ງເກີດໃນໝູ່ ເທບຊັ້ນປະນີດ"

ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງ ຢ່າຜະໝາດ ຢ່າເປັນ ຜູ້ມີວິບປະຕິສານ (ຄວາມຮ້ອນໃຈ) ໃນພາຍຫຼັງເໝືອນເທວະດາພວກທຳອິດ ໆ ເຫຼົ່ານັ້ນເລີຍ

**ເທວະຕາສູດທີ ໘ ຈົບ**

# ໑໐. ເວລາມະສູດ

## ວ່າດ້ວຍເວລາມະພາມ

[໔໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ອະນາຖະບິນທິກະເສດຖີເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານດັ່ງນີ້ວ່າ "ທ່ານຄະຫະບໍດີ ໃນຕະກູນຂອງທ່ານຍັງໃຫ້ທານຢູ່ບໍ?"

ອະນາຖະບິນທິກະຄະຫະບໍດີຂາບທູນວ່າ "ໃນຕະກູນຂອງຂ້າພຣະອົງຍັງໃຫ້ທານຢູ່ຂ້ານ້ອຍ ແຕ່ທານນັ້ນ ເປັນຂອງເສົ້າໝອງ ເປັນປາຍເຂົ້າກັບນ້ຳຜັກດອງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ບຸກຄົນໃຫ້ທານເສົ້າໝອງ ຫຼື ປະນີດກໍຕາມ ຖ້າໃຫ້ທານນັ້ນໂດຍບໍ່ເຄົາລົບ ບໍ່ທຳຄວາມນອບນ້ອມໃຫ້ທານ ບໍ່ໃຫ້ດ້ວຍມືຂອງຕົນເອງ ໃຫ້ທານເໝືອນຈະຖິ້ມ ເປັນຜູ້ບໍ່ເຫັນຜົນທີ່ຈະຕາມມາໃຫ້ທານ ໃນຕະກູນທີ່ທານນັ້ນ ໆ ບັງເກີດຜົນ ເຂົາບໍ່ນ້ອມຈິດໄປເພື່ອບໍຣິໂພກອາຫານຢ່າງດີ ບໍ່ນ້ອມຈິດໄປເພື່ອນຸ່ງຫົ່ມຜ້າຢ່າງດີ ບໍ່ນ້ອມຈິດໄປເພື່ອໃຊ້ຍານຢ່າງດີ ແລະບໍ່ນ້ອມຈິດໄປເພື່ອບໍຣິໂພກະການມະຄຸນ ໕ ຢ່າງດີ ແມ່ນແຕ່ບໍລິວານຂອງຜູ້ໃຫ້ທານນັ້ນ ຄື ບຸດ ພັນລະຍາ ທາດ ຄົນໃຊ້ ຫຼືກຳມະກອນ ກໍບໍ່ຕັ້ງໃຈຟັງດ້ວຍດີ ບໍ່ງຽງໂສດສະດັບ ບໍ່ຕັ້ງໃຈໃຝ່ຮູ້ ຂໍ້ນັ້ນເພາະເຫດໃດ ເພາະຜົນກຳ ທີ່ຕົນໄດ້ກະທຳໂດຍບໍ່ເຄົາລົບ

ຄະຫະບໍດີ ບຸກຄົນໃຫ້ທານເສົ້າໝອງ ຫຼື ປະນີດກໍຕາມ ຖ້າໃຫ້ທານນັ້ນໂດຍເຄົາລົບ ທຳຄວາມນອບນ້ອມໃຫ້ທານ ໃຫ້ທານດ້ວຍມືຂອງຕົນເອງ ໃຫ້ທານບໍ່ເໝືອນຈະຖິ້ມ ເປັນຜູ້ເຫັນຜົນທີ່ຈະຕາມມາໃຫ້ທານໃນຕະກູນທີ່ທານນັ້ນ ໆ ບັງເກີດຜົນ ເຂົານ້ອມຈິດໄປເພື່ອບໍຣິໂພກອາຫານຢ່າງດີ ນ້ອມຈິດໄປເພື່ອນຸ່ງຫົ່ມຜ້າຢ່າງດີ ນ້ອມຈິດໄປເພື່ອໃຊ້ຍານຢ່າງດີ ແລະນ້ອມຈິດໄປເພື່ອບໍຣິໂພກການມະຄຸນ ໕ ຢ່າງດີ ແມ່ນແຕ່ບໍລິວານຂອງຜູ້ໃຫ້ທານນັ້ນ ຄື ບຸດ ພັນລະຍາ ທາດ ຄົນໃຊ້ ຫຼື ກຳມະກອນກໍຕັ້ງໃຈຟັງດ້ວຍດີ ງຽງໂສດສະດັບ ຕັ້ງໃຈໃຝ່ຮູ້ ຂໍ້ນັ້ນເພາະເຫດໃດ ເພາະຜົນກຳທີ່ຕົນໄດ້ກະທຳໄວ້ໂດຍເຄົາລົບ

ຄະຫະບໍດີ ເລື້ອງເຄີຍມີມາແລ້ວ ມີພາມຊື່ເວລາມະ ເຂົາໃຫ້ທານເປັນມະຫາທານຢ່າງນີ້ ຄື ໄດ້ໃຫ້ຖາດຄຳເຕັມດ້ວຍຣູປິຍະ ໘໔,໐໐໐ ຖາດ ຖາດຣູປິຍະເຕັມດ້ວຍ ຄຳ ໘໔,໐໐໐ ຖາດ ຖາດສຳຣິດເຕັມດ້ວຍເງິນ ໘໔,໐໐໐ ຖາດ ໃຫ້ຊ້າງ ໘໔,໐໐໐ ເຊືອກ ມີເຄື່ອງປະດັບຄຳ ມີທຸງຄຳ ຄຸມດ້ວຍຂ່າຍຄຳ ໃຫ້ລົດ ໘໔,໐໐໐ ຄັນ ຫຸ້ມດ້ວຍໜັງຣາດຊະສີ ຫຸ້ມດ້ວຍໜັງເສືອໂຄ່ງ ຫຸ້ມດ້ວຍໜັງເສືອເຫຼືອງ ຫຸ້ມດ້ວຍຜ້າກຳພົນເຫຼືອງ ມີເຄື່ອງປະດັບຄຳ ມີທຸງຄຳ ຄຸມດ້ວຍຂ່າຍຄຳ ໃຫ້ແມ່

ງົວນົມ ໗໔,໐໐໐ ໂຕ ມີນໍ້ານົມທີ່ຮີດແລະໄຫຼສະດວກ ມີພາຊະນະສຳຣິດສຳລັບຮອງຮັບ ໃຫ້ຍິງສາວ ໗໔,໐໐໐ ຄົນສວມແກ້ວມະນີ ແລະແກ້ວກຸນທົນໃຫ້ບັນລັງ ໗໔,໐໐໐ ທີ່ປູລາດດ້ວຍຜ້າໂກເຊົາ ປູລາດດ້ວຍເຄື່ອງລາດເຮັດດ້ວຍຂົນແກະສີຂາວ ປູລາດດ້ວຍເຄື່ອງລາດ ເຮັດດ້ວຍຂົນແກະລາຍດອກໄມ້ ປູລາດດ້ວຍເຄື່ອງລາດຢ່າງດີເຮັດດ້ວຍໜັງຊະມົດ ຂ້າງເທິງມີເພດານ ມີໝອນສີແດງວາງໄວ້ທັງ ໔ ຂ້າງໆ ໃຫ້ຜ້າ ໗໔,໐໐໐ ພັບ ເປັນຜ້າເປືອກໄມ້ເນື້ອລະອຽດ ຜ້າປໍເນື້ອລະອຽດ ຜ້າກຳພົນເນື້ອລະອຽດ ຜ້າຝ້າຍເນື້ອລະອຽດ ບໍ່ຈຳຕ້ອງກ່າວເຖິງເຂົ້າ ນໍ້າ ຂອງຫຍໍ້າ ຂອງບໍຣິໂພກ ຂອງຊິມ ຂອງດື່ມ ໄຫຼອອກໄປເໝືອນແມ່ນໍ້າ

ຄະຫະບໍດີ ທ່ານອາດຈະມີຄວາມຄິດຢ່າງນີ້ວ່າ "ສະໄໝນັ້ນ ເວລາມະພາມຜູ້ໃຫ້ທານເປັນມະຫາທານ ເປັນຄົນອື່ນແນ່ແທ້ ແຕ່ທ່ານບໍ່ເພິ່ງເຫັນຢ່າງນັ້ນ ເພາະເວລາມະພາມ ຜູ້ໃຫ້ທານເປັນມະຫາທານ ໃນສະໄໝນັ້ນ ກໍຄືເຮົານັ້ນເອງ ແຕ່ໃນທານນັ້ນ ບໍ່ມີໃຜເປັນພຣະທັກຂິໄນຍະບຸກຄົນ ໃຜ ໆ ກໍຊຳຣະທັກຂິນານັ້ນໃຫ້ໝົດຈົດບໍ່ໄດ້

ຄະຫະບໍດີ ການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຜູ້ດຽວໃຫ້ບໍຣິໂພກ ມີຜົນຫຼາຍກວ່າການທີ່ເວລາມະພາມໄດ້ໃຫ້ທານເປັນມະຫາທານ

ການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນສະກະທາຄາມີຜູ້ດຽວໃຫ້ບໍຣິໂພກ ມີຜົນຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຕັ້ງຮ້ອຍໃຫ້ບໍຣິໂພກ

ການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະນາຄາມີຜູ້ດຽວໃຫ້ບໍຣິໂພກ ມີຜົນຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນສະກະທາຄາມີຕັ້ງຮ້ອຍໃຫ້ບໍຣິໂພກ

ການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະຣະຫັນຜູ້ດຽວໃຫ້ບໍຣິໂພກ ມີຜົນຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະນາຄາມີຕັ້ງຮ້ອຍໃຫ້ບໍຣິໂພກ

ການທີ່ບຸກຄົນເຊື້ອເຊີນພຣະປັດເຈກພຸດທະເຈົ້າອົງດຽວໃຫ້ບໍຣິໂພກ ມີຜົນຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະຣະຫັນຕັ້ງຮ້ອຍໃຫ້ບໍຣິໂພກ

ການທີ່ບຸກຄົນເຊື້ອເຊີນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າໃຫ້ບໍຣິໂພກ ມີຜົນຫຼາຍກວ່າການທີ່ບຸກຄົນເຊື້ອເຊີນພຣະປັດເຈກພຸດທະເຈົ້າຕັ້ງຮ້ອຍໃຫ້ບໍຣິໂພກ

ການທີ່ບຸກຄົນເຊື້ອເຊີນພິກຂຸສົງມີພຣະພຸດທະເຈົ້າເປັນປະທານໃຫ້ບໍຣິໂພກ ມີຜົນຫຼາຍກວ່າການທີ່ບຸກຄົນເຊື້ອເຊີນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າໃຫ້ບໍຣິໂພກ

ການທີ່ບຸກຄົນສ້າງວິຫານອຸທິດຖວາຍສົງຜູ້ມາຈາກທິດທັງ ໔ ມີຜົນຫຼາຍກວ່າການທີ່ບຸກຄົນເຊື້ອເຊີນພິກຂຸສົງມີພຣະພຸດທະເຈົ້າເປັນປະທານໃຫ້ບໍຣິໂພກ

ການທີ່ບຸກຄົນມີຈິດເຫຼື້ອມໃສເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງເປັນສະຣະນະ ມີຜົນຫຼາຍກວ່າການທີ່ບຸກຄົນສ້າງວິຫານອຸທິດຖວາຍສົງຜູ້ມາຈາກທິດທັງ ໔

ການທີ່ບຸກຄົນມີຈິດເຫຼື້ອມໃສ ສະມາທານສິກຂາບົດ ຄື ການງົດເວັ້ນຈາກການຂ້າສັດ ການງົດເວັ້ນຈາກການລັກຊັບ ການງົດເວັ້ນຈາກການປະພຶດຜິດໃນກາມ ການງົດເວັ້ນຈາກ ການເວົ້າຕົວະ ການງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ມີຜົນຫຼາຍກວ່າການທີ່ບຸກຄົນມີຈິດເຫຼື້ອມໃສເຖິງພຣະພຸດທະເຈົ້າ ພຣະທຳ ແລະ ພຣະສົງເປັນສະຣະນະ

ການທີ່ບຸກຄົນຈະເລີນເມດຕາຈິດຢ່າງໜ້ອຍຊົ່ວສູບດົມກິ່ນຫອມ ມີຜົນຫຼາຍກວ່າການທີ່ບຸກຄົນມີຈິດເຫຼື້ອມໃສສະມາທານສິກຂາບົດ ຄື ການງົດເວັ້ນຈາກການຂ້າສັດ ເປັນຕົ້ນນັ້ນ

ຄະຫະບໍດີ ການທີ່ບຸກຄົນຈະເລີນອະນິດຈະສັນຍາຊົ່ວລັດນິ້ວມືດຽວ ມີຜົນຫຼາຍກວ່າການທີ່ເວລາມະພາມໄດ້ໃຫ້ທານເປັນມະຫາທານ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເຖິງພ້ອມດ້ວຍທິດຖິໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເຖິງພ້ອມດ້ວຍທິດຖິຕັ້ງຮ້ອຍໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນສະກະທາຄາມີຜູ້ດຽວໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນສະກະທາຄາມີຕັ້ງຮ້ອຍໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະນາຄາມີຜູ້ດຽວໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະນາຄາມີຕັ້ງຮ້ອຍໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະຣະຫັນຜູ້ດຽວໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນບຸກຄົນຜູ້ເປັນອະຣະຫັນຕັ້ງຮ້ອຍໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນພຣະປັດເຈກພຸດທະເຈົ້າອົງດຽວໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນພຣະອະຣະຫັນຕັ້ງຮ້ອຍໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນເຊື້ອເຊີນພິກຂຸສົງ ມີພຣະພຸດທະເຈົ້າເປັນປະທານໃຫ້ບໍຣິໂພກ ຫຼາຍກວ່າການທີ່ບຸກຄົນສ້າງວິຫານອຸທິດຖວາຍສົງຜູ້ມາຈາກທິດ ທັງ ໔ ຫຼາຍກວ່າການທີ່ບຸກຄົນມີຈິດເຫຼື້ອມໃສເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງເປັນສະຣະນະ ຫຼາຍກວ່າການທີ່ບຸກຄົນມີຈິດເຫຼື້ອມໃສສະມາທານສິກຂາບົດ ຄື ການງົດເວັ້ນຈາກ ການຂ້າສັດ ຯລຯ ການງົດເວັ້ນຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດ ແຫ່ງຄວາມຜະໝາດ ແລະຫຼາຍກວ່າການທີ່ບຸກຄົນຈະເລີນເມດຕາຈິດຢ່າງໜ້ອຍຊົ່ວສູບດົມກິ່ນຫອມນັ້ນ”

**ເວລາມະສູດທີ ໑໐ ຈົບ**

**ສີຫະນາທະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໓. ສັດຕາວາສະວັກ

### ໝວດວ່າດ້ວຍສັດຕາວາດ

## ໑. ຕິຖານະສູດ

### ວ່າດ້ວຍຖານະ ໓ ປະການ

[໘໑] ພິກຂຸທັງຫຼາຍ ມະນຸດຊາວອຸດຕະຣະກຸຣຸທະວີບເໜືອກວ່າ ເທວະດາຊັ້ນຕາວະຕິງສາ ແລະມະນຸດຊາວຊົມພູທະວີບ ດ້ວຍຖານະ ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ບໍ່ມີຄວາມເຫັນແກ່ຕົວ
໒. ບໍ່ມີຄວາມຫວງແຫນ
໓. ມີອາຍຸແນ່ນອນ

ພິກຂຸທັງຫຼາຍ ມະນຸດຊາວອຸດຕະຣະກຸຣຸທະວີບເໜືອກວ່າເທວະດາຊັ້ນຕາວະຕິງສາ ແລະມະນຸດຊາວຊົມພູທະວີບ ດ້ວຍຖານະ ໓ ປະການນີ້ແລ

ພິກຂຸທັງຫຼາຍ ເທວະດາຊັ້ນຕາວະຕິງສາເໜືອກວ່າມະນຸດ ຊາວອຸດຕະຣະກຸຣຸທະວີບ ແລະມະນຸດຊາວຊົມພູທະວີບ ດ້ວຍຖານະ ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ອາຍຸອັນເປັນທິບ
໒. ວັນນະອັນເປັນທິບ
໓. ສຸກອັນເປັນທິບ

ພິກຂຸທັງຫຼາຍ ເທວະດາຊັ້ນຕາວະຕິງສາເໜືອກວ່າມະນຸດຊາວອຸດຕະຣະກຸຣຸທະວີບ ແລະມະນຸດຊາວຊົມພູທະວີບ ດ້ວຍຖານະ ໓ ປະການນີ້ແລ

ພິກຂຸທັງຫຼາຍ ມະນຸດຊາວຊົມພູທະວີບເໜືອກວ່າ ມະນຸດຊາວອຸດຕະຣະກຸຣຸທະວີບແລະ ເທວະດາຊັ້ນຕາວະຕິງສາ ດ້ວຍຖານະ ໓ ປະການ

ຖານະ ໓ ປະການ ອັນໃດແດ່ ຄື

໑. ເປັນຜູ້ແກ່ກ້າ
໒. ເປັນຜູ້ມີສະຕິ
໓. ເປັນຜູ້ຢູ່ປະພຶດພົມມະຈັນໃນຊົມພູທະວີບນີ້

ພິກຂຸທັງຫຼາຍ ມະນຸດຊາວຊົມພູທະວີບເໜືອກວ່າມະນຸດຊາວອຸດຕະຣະກຸຣຸທະວີບແລະ ເທວະດາຊັ້ນຕາວະຕິງສາ ດ້ວຍຖານະ ໓ ປະການນີ້ແລ

**ຕິຖານະສູດທີ ໑ ຈົບ**

# ໒. ອັດສະຂະລຸງກະສູດ

## ວ່າດ້ວຍມ້າກະຈອກແລະຄົນກະຈອກ

[໒໒] ພິກຂຸທັງຫຼາຍ ເຮົາຈັກສະແດງມ້າກະຈອກ ໓ ຈຳພວກ ຄົນກະຈອກ ໓ ຈຳພວກ ມ້າດີ ໓ ຈຳພວກ ແລະຄົນດີ ໓ ຈຳພວກ ມ້າອາຊາໄນ°ພັນດີ ໓ ຈຳພວກ ແລະບຸຣຸດອາຊາໄນ ຜູ້ຈະເລີນ ໓ ຈຳພວກ ທ່ານທັງຫຼາຍຈົ່ງຟັງເລື້ອງນັ້ນ

ມ້າກະຈອກ ໓ ຈຳພວກໃດແດ່ ຄື

໑. ມ້າກະຈອກບາງຕົວໃນໂລກນີ້ສົມບູນດ້ວຍເຊົາ ແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

໒. ມ້າກະຈອກບາງຕົວໃນໂລກນີ້ສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່

໓. ມ້າກະຈອກບາງຕົວໃນໂລກນີ້ສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ພິກຂຸທັງຫຼາຍ ມ້າກະຈອກ ໓ ຈຳພວກນີ້

ພິກຂຸທັງຫຼາຍ ຄົນກະຈອກ ໓ ຈຳພວກໃດແດ່ ຄື

໑. ຄົນກະຈອກບາງຄົນໃນໂລກນີ້ສົມບູນດ້ວຍເຊົາ ແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່

໒. ຄົນກະຈອກບາງຄົນໃນໂລກນີ້ສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່

໓. ຄົນກະຈອກບາງຄົນໃນໂລກນີ້ສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່

ຄົນກະຈອກສົມບູນດ້ວຍເຊົາ ແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ" ເຮົາກ່າວວ່າ ນີ້ເປັນເຊົາຂອງເຂົາ ແຕ່ເຂົາຖືກຖາມບັນຫາໃນ ອະພິທຳ ແລະອະພິວິໄນ ກໍຈົນປັນຍາ ຕອບບໍ່ໄດ້ ເຮົາກ່າວວ່າ ນີ້ບໍ່ແມ່ນວັນນະຂອງເຂົາ ແລະເຂົາບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈ ເພສັດຊະບໍຣິຂານ ເຮົາກ່າວວ່າ ນີ້ບໍ່ແມ່ນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນກະຈອກສົມບູນດ້ວຍເຊົາ ແຕ່ບໍ່ສົມບູນດ້ວຍວັນນະ ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນຢ່າງນີ້

ຄົນກະຈອກສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະ ຄາມິນີປະຕິປະທາ" ເຮົາກ່າວວ່າ ນີ້ເປັນເຊົາຂອງເຂົາ ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່າ ນີ້ເປັນວັນນະຂອງເຂົາ ແຕ່ເຂົາບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່າ ນີ້ບໍ່ແມ່ນຄວາມສູງແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນກະຈອກສົມບູນດ້ວຍເຊົາ ແລະສົມບູນດ້ວຍວັນນະ ແຕ່ບໍ່ສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນຢ່າງນີ້

ຄົນກະຈອກສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະ ຄາມິນີປະຕິປະທາ" ເຮົາກ່າວວ່າ ນີ້ເປັນເຊົາຂອງເຂົາ ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່າ ນີ້ເປັນວັນນະຂອງເຂົາ ແລະເຂົາໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່າ ນີ້ເປັນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນກະຈອກສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນ ດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຄົນກະຈອກ ໓ ຈຳພວກນີ້ແລ
ພິກຂຸທັງຫຼາຍ ມ້າດີ ໓ ຈຳພວກໃດແດ່ ຄື

໑. ມ້າດີບາງຕົວໃນໂລກນີ້ ຯລຯ
໒. ມ້າດີບາງຕົວໃນໂລກນີ້ ຯລຯ
໓. ມ້າດີບາງຕົວໃນໂລກນີ້ສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ພິກຂຸທັງຫຼາຍ ມ້າດີ ໓ ຈຳພວກນີ້ແລ
ພິກຂຸທັງຫຼາຍ ຄົນດີ ໓ ຈຳພວກໃດແດ່ ຄື

໑. ຄົນດີບາງຄົນໃນໂລກນີ້ ຯລຯ
໒. ຄົນດີບາງຄົນໃນໂລກນີ້ ຯລຯ
໓. ຄົນດີບາງຄົນໃນໂລກນີ້ສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ຯລຯ

ຄົນດີສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ຈັກເປັນໂອປະປາຕິກະປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນແນ່ນອນ ເຮົາກ່າວວ່າ ນີ້ເປັນເຊົາຂອງເຂົາ

ເຂົາຖືກຖາມ ບັນຫາໃນອະພິທຳ ແລະອະພິວິໄນ ກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່າ ນີ້ເປັນວັນນະຂອງເຂົາ ແລະເຂົາໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່າ ນີ້ເປັນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ຄົນດີສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຄົນດີ ໓ ຈຳພວກນີ້

ພິກຂຸທັງຫຼາຍ ມ້າອາຊາໄນພັນດີ ໓ ຈຳພວກໃດແດ່ ຄື

໑. ມ້າອາຊາໄນພັນດີບາງຕົວໃນໂລກນີ້ ຯລຯ
໒. ມ້າອາຊາໄນພັນດີບາງຕົວໃນໂລກນີ້ ຯລຯ
໓. ມ້າອາຊາໄນພັນດີບາງຕົວໃນໂລກນີ້ສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່

ພິກຂຸທັງຫຼາຍ ມ້າອາຊາໄນພັນດີ ໓ ຈຳພວກນີ້ແລ

ພິກຂຸທັງຫຼາຍ ບຸຣຸດອາຊາໄນຜູ້ຈະເລີນ ໓ ຈຳພວກໃດແດ່ ຄື

໑. ບຸຣຸດອາຊາໄນຜູ້ຈະເລີນບາງຄົນໃນໂລກນີ້ ຯລຯ
໒. ບຸຣຸດອາຊາໄນຍຜູ້ຈະເລີນບາງຄົນໃນໂລກນີ້ ຯລຯ
໓. ບຸຣຸດອາຊາໄນຜູ້ຈະເລີນບາງຄົນໃນໂລກນີ້ສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງ ແລະຄວາມໃຫຍ່

ຯລຯ

ບຸຣຸດອາຊາໄນຜູ້ຈະເລີນສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ເຮົາກ່າວວ່າ ນີ້ເປັນເຊົາຂອງເຂົາ ເຂົາຖືກຖາມບັນຫາໃນອະພິທຳ ແລະອະພິວິໄນ ກໍຕອບໄດ້ ບໍ່ຈົນປັນຍາ ເຮົາກ່າວວ່າ ນີ້ເປັນວັນນະຂອງເຂົາ ແລະເຂົາໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ ເຮົາກ່າວວ່າ ນີ້ເປັນຄວາມສູງ ແລະຄວາມໃຫຍ່ຂອງເຂົາ

ພິກຂຸທັງຫຼາຍ ບຸຣຸດອາຊາໄນຜູ້ຈະເລີນສົມບູນດ້ວຍເຊົາ ສົມບູນດ້ວຍວັນນະ ແລະ ສົມບູນດ້ວຍຄວາມສູງແລະຄວາມໃຫຍ່ ເປັນແນວນີ້ແລ

ພິກຂຸທັງຫຼາຍ ບຸຣຸດອາຊາໄນຜູ້ຈະເລີນ ໓ ຈຳພວກນີ້ແລ

**ອັດສະຂະລຸງກະສູດທີ ໒ ຈົບ**

# ໓. ຕັນຫາມູລະກະສູດ

## ວ່າດ້ວຍຕັນຫາມູລະທຳ

[໒໓] ພິກຂຸທັງຫຼາຍ ເຮົາຈັກສະແດງທຳມີຕັນຫາເປັນມູນເຫດ ໙ ປະການ ພວກທ່ານຈົ່ງຟັງທຳນັ້ນ ທຳມີຕັນຫາເປັນມູນເຫດ ໙ ປະການ ອັນໃດແດ່ ຄື

| | | |
|---|---|---|
| ໑. ເພາະອາໄສຕັນຫາ | ການສະແຫວງຫາ | ຈິ່ງເກີດຂຶ້ນ |
| ໒. ເພາະອາໄສການສະແຫວງຫາ | ການໄດ້ | ຈິ່ງເກີດຂຶ້ນ |
| ໓. ເພາະອາໄສການໄດ້ | ການພິຈາລະນາ | ຈິ່ງເກີດຂຶ້ນ |
| ໔. ເພາະອາໄສການພິຈາລະນາ | ສັນທະຣາຄະ | ຈິ່ງເກີດຂຶ້ນ |
| ໕. ເພາະອາໄສສັນທະຣາຄະ | ຄວາມຫຼົງໃຫຼ | ຈິ່ງເກີດຂຶ້ນ |
| ໖. ເພາະອາໄສຄວາມຫຼົງໃຫຼ | ຄວາມຫວງແຫນ | ຈິ່ງເກີດຂຶ້ນ |
| ໗. ເພາະອາໄສຄວາມຫວງແຫນ | ຄວາມຂີ້ຖີ່ | ຈິ່ງເກີດຂຶ້ນ |
| ໘. ເພາະອາໄສຄວາມຂີ້ຖີ່ | ການຮັກສາ | ຈິ່ງເກີດຂຶ້ນ |

໙. ເພາະອາໄສການຮັກສາ ບາບອະກຸສົນທຳຫຼາຍປະການ ຄື ການຖືທ່ອນໄມ້ ການຖືອາວຸດ ການຜິດກັນ ການແຍ່ງຊິງ ການຖຽງກັນ ການເວົ້າຂຶ້ນມຶງ ກູ ການເວົ້າສໍ່ສຽດ ການເວົ້າຕົວະ ຈິ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທຳມີຕັນຫາເປັນມູນເຫດ ໙ ປະການນີ້

**ຕັນຫາມູລະກະສູດທີ ໓ ຈົບ**

# ໔. ສັດຕາວາສະສູດ

## ວ່າດ້ວຍສັດຕາວາດ

[໒໔] ພິກຂຸທັງຫຼາຍ ສັດຕາວາດ (ພົບເປັນທີ່ຢູ່ແຫ່ງສັດ) ໙ ປະການນີ້

ສັດຕາວາດ ໙ ປະການ ອັນໃດແດ່ ຄື

໑. ມີສັດຜູ້ມີກາຍຕ່າງກັນ ມີສັນຍາຕ່າງກັນ ຄື ມະນຸດບາງພວກ ເທວະດາບາງພວກ ແລະວິນິປາຕິກະບາງພວກ ນີ້ເປັນສັດຕາວາດປະການທີ ໑

໒. ມີສັດຜູ້ມີກາຍຕ່າງກັນ ແຕ່ມີສັນຍາຢ່າງດຽວກັນ ຄື ເທວະດາຊັ້ນ ພົມກາຍິກາ (ເທວະດາຜູ້ນັບເນື່ອງໃນໝູ່ພົມ) ເກີດໃນປະຖົມຊານທີ ໑ ນີ້ເປັນສັດຕາວາດປະການທີ ໒

໓. ມີສັດຜູ້ມີກາຍຢ່າງດຽວກັນ ແຕ່ມີສັນຍາຕ່າງກັນ ຄື ເທວະດາຊັ້ນ ອາພັດສະ ນີ້ເປັນສັດຕາວາດປະການທີ ໓

໔. ມີສັດຜູ້ມີກາຍຢ່າງດຽວກັນ ມີສັນຍາຢ່າງດຽວກັນ ຄື ເທວະດາຊັ້ນສຸພະກິນຫະ (ເທວະດາຜູ້ເຕັມໄປດ້ວຍຄວາມງາມ) ນີ້ເປັນສັດຕາວາດປະການ ທີ ໔

໕. ມີສັດຜູ້ບໍ່ມີສັນຍາ ບໍ່ສະເຫວີຍເວທະນາ ຄື ເທວະດາຊັ້ນອະສັນຍີສັດຕະພົມ ນີ້ເປັນສັດຕາວາດປະການທີ ໕

໖. ມີສັດຜູ້ບັນລຸອາກາສານັນຈາຍະຕະນະຊານຢູ່ ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ນີ້ເປັນສັດຕາວາດປະການທີ ໖

໗. ມີສັດຜູ້ລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ນີ້ເປັນສັດຕາວາດປະການທີ ໗

໘. ມີສັດຜູ້ລ່ວງວິນຍານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ" ນີ້ເປັນສັດຕາວາດ ປະການທີ ໘

໙. ມີສັດຜູ້ລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນສັດຕາວາດປະການທີ ໙

ພິກຂຸທັງຫຼາຍ ສັດຕາວາດ ໙ ປະການນີ້ແລ

**ສັດຕາວາດສູດທີ ໔ ຈົບ**

# ໕. ປັນຍາສູດ

## ວ່າດ້ວຍພິກຂຸຜູ້ອົບຮົມຈິດດີດ້ວຍປັນຍາ

[໘໕] ພິກຂຸທັງຫຼາຍ ເມື່ອໃດ ພິກຂຸອົບຮົມຈິດດີດ້ວຍປັນຍາ ເມື່ອນັ້ນ ພິກຂຸນັ້ນ ຄວນກ່າວດັ່ງນີ້ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດ ສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ພິກຂຸອົບຮົມຈິດດີດ້ວຍປັນຍາ ເປັນແນວໃດ?

ຄື ພິກຂຸອົບຮົມຈິດດີດ້ວຍປັນຍາວ່າ

໑. ຈິດຂອງເຮົາປາສະຈາກ ຣາຄະແລ້ວ
໒. ຈິດຂອງເຮົາປາສະຈາກ ໂທສະແລ້ວ
໓. ຈິດຂອງເຮົາປາສະຈາກ ໂມຫະແລ້ວ
໔. ຈິດຂອງເຮົາບໍ່ມີ ຣາຄະເປັນທຳມະດາ
໕. ຈິດຂອງເຮົາບໍ່ມີ ໂທສະເປັນທຳມະດາ
໖. ຈິດຂອງເຮົາບໍ່ມີ ໂມຫະເປັນທຳມະດາ
໗. ຈິດຂອງເຮົາບໍ່ກັບມາໃນ ກາມະພົບເປັນທຳມະດາ
໘. ຈິດຂອງເຮົາບໍ່ກັບມາໃນ ຮູບພົບເປັນທຳມະດາ
໙. ຈິດຂອງເຮົາບໍ່ກັບມາໃນ ອະຮູບພົບເປັນທຳມະດາ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸອົບຮົມຈິດດີດ້ວຍປັນຍາ ເມື່ອນັ້ນ ພິກຂຸນັ້ນຄວນກ່າວ ດັ່ງນີ້ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ"

**ປັນຍາສູດທີ ໕ ຈົບ**

# ໖. ສີລາຍູປະສູດ

## ວ່າດ້ວຍຈິດປຽບດ້ວຍເສົາຫີນ

[໘໖] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານພຣະຈັນທິກາບຸດຢູ່ ໃນພຣະເວລຸວັນກະລັນທະກະນິວາປະສະຖານ ເຂດເມືອງຣາດຊະຄຶ ໃນບ່ອນນັ້ນແລ ທ່ານພຣະຈັນທິກາບຸດກ່າວກັບພິກຂຸທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ພຣະເທວະທັດສະແດງທຳແກ່ພິກຂຸທັງຫຼາຍແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ເມື່ອໃດ ພິກຂຸອົບຮົມຈິດດ້ວຍຈິດ ເມື່ອນັ້ນ ພິກຂຸນັ້ນຄວນພະຍາກອນດັ່ງນີ້

ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ"

ເມື່ອທ່ານພຣະຈັນທິກາບຸດກ່າວຢ່າງນີ້ແລ້ວ ທ່ານພຣະສາຣີບຸດໄດ້ກ່າວກັບທ່ານພຣະຈັນທິກາບຸດດັ່ງນີ້ວ່າ "ທ່ານຈັນທິກາບຸດ ພຣະເທວະທັດບໍ່ສະແດງທຳແກ່ພິກຂຸທັງຫຼາຍແນວນີ້ວ່າ ເມື່ອໃດ ພິກຂຸອົບຮົມຈິດດ້ວຍຈິດ ເມື່ອນັ້ນ ພິກຂຸນັ້ນ ຄວນພະຍາກອນ ດັ່ງນີ້ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ແຕ່ພຣະເທວະທັດສະແດງທຳແກ່ພິກຂຸ ທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ເມື່ອໃດ ພິກຂຸອົບຮົມຈິດດີດ້ວຍຈິດ ເມື່ອນັ້ນ ພິກຂຸນັ້ນ ຄວນພະຍາກອນດັ່ງນີ້ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ"

ແມ່ນຄັ້ງທີ ໒ ຯລຯ

ແມ່ນຄັ້ງທີ ໓ ທ່ານພຣະຈັນທິກາບຸດກໍກ່າວກັບພິກຂຸທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ພຣະເທວະທັດສະແດງທຳແກ່ພິກຂຸທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ເມື່ອໃດ ພິກຂຸອົບຮົມຈິດດ້ວຍຈິດ ເມື່ອນັ້ນ ພິກຂຸນັ້ນຄວນພະຍາກອນດັ່ງນີ້ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ"

ແມ່ນຄັ້ງທີ ໓ ທ່ານພຣະສາຣີບຸດກໍໄດ້ກ່າວກັບທ່ານພຣະຈັນທິກາບຸດດັ່ງນີ້ວ່າ "ທ່ານຈັນທິກາບຸດ ພຣະເທວະທັດບໍ່ສະແດງທຳແກ່ພິກຂຸທັງຫຼາຍແນວນີ້ວ່າ "ເມື່ອໃດ ພິກຂຸ ອົບຮົມຈິດດ້ວຍຈິດ ເມື່ອນັ້ນ ພິກຂຸນັ້ນຄວນພະຍາກອນດັ່ງນີ້ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນຢ່າງນີ້ອີກຕໍ່ໄປ" ແຕ່ພຣະເທວະທັດສະແດງທຳແກ່ພິກຂຸທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ເມື່ອໃດ ພິກຂຸອົບຮົມຈິດດີດ້ວຍຈິດ ເມື່ອນັ້ນ ພິກຂຸນັ້ນຄວນພະຍາກອນດັ່ງນີ້ວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອ ຄວາມເປັນຢ່າງນີ້ອີກຕໍ່ໄປ" ພິກຂຸອົບຮົມຈິດດີດ້ວຍຈິດ ເປັນແນວໃດ?

ຄື ພິກຂຸອົບຮົມຈິດດີດ້ວຍຈິດວ່າ

໑. ຈິດຂອງເຮົາປາສະຈາກ ຣາຄະແລ້ວ
໒. ຈິດຂອງເຮົາປາສະຈາກ ໂທສະແລ້ວ
໓. ຈິດຂອງເຮົາປາສະຈາກ ໂມຫະແລ້ວ
໔. ຈິດຂອງເຮົາບໍ່ມີ ຣາຄະເປັນທຳມະດາ

໕. ຈິດຂອງເຮົາບໍ່ມີ ໂທສະເປັນທໍາມະດາ
໖. ຈິດຂອງເຮົາບໍ່ມີ ໂມຫະເປັນທໍາມະດາ
໗. ຈິດຂອງເຮົາບໍ່ກັບມາໃນ ກາມະພົບເປັນທໍາມະດາ
໘. ຈິດຂອງເຮົາບໍ່ກັບມາໃນ ຮູບພົບເປັນທໍາມະດາ

໙. ຈິດຂອງເຮົາບໍ່ກັບມາໃນອະຮູບພົບເປັນທໍາມະດາ

ຜູ້ມີອາຍຸ ແມ່ນຫາກຮູບຢ່າງຫຍາບທີ່ເພິ່ງຮູ້ແຈ້ງທາງຕາ ຜ່ານມາທາງຄອງຈັກສຸຂອງພິກຂຸຜູ້ມີຈິດລຸດພົ້ນໂດຍຊອບແລ້ວຢ່າງນີ້ ຮູບເຫຼົ່ານັ້ນກໍຄອບງໍາຈິດຂອງທ່ານບໍ່ໄດ້ ຈິດຂອງທ່ານບໍ່ຣະຄົນກັບຮູບເຫຼົ່ານັ້ນເລີຍ ເປັນຈິດຕັ້ງໝັ້ນ ບໍ່ຫວັ່ນໄຫວ ແລະທ່ານຍ່ອມພິຈາລະນາເຫັນຄວາມເສື່ອມແຫ່ງ ຮູບນັ້ນ

ຜູ້ມີອາຍຸ ເສົາຫີນຍາວ ໑໖ ສອກຍັ່ງລົງໄປໃນຂຸມ ໘ ສອກ ຢູ່ເທິງຂຸມ ໘ ສອກ ແມ່ນລົມພາຍຸຢ່າງແຮງພັດມາທາງທິດບູຣະພາກໍບໍ່ເພິ່ງເຮັດໃຫ້ເສົາຫີນນັ້ນສັ່ນຄອນ ສະເທືອນ ຫວັ່ນໄຫວໄດ້ ແມ່ນລົມພາຍຸຢ່າງແຮງພັດມາທາງທິດຕາເວັນຕົກ ຯລຯ ທາງທິດເໜືອ ຯລຯ ທາງທິດໃຕ້ ກໍບໍ່ເພິ່ງເຮັດໃຫ້ເສົາຫີນນັ້ນສັ່ນຄອນ ສະເທືອນ ຫວັ່ນໄຫວໄດ້ ຂໍ້ນັ້ນເພາະເຫດໃດ ເພາະຂຸມເລິກແລະເສົາຫີນຝັງໄວ້ດີ ສັນໃດ

ແມ່ນຫາກຮູບຢ່າງຫຍາບທີ່ເພິ່ງຮູ້ແຈ້ງທາງຕາ ຜ່ານມາທາງຄອງຈັກຂຸຂອງພິກຂຸຜູ້ມີຈິດລຸດພົ້ນໂດຍຊອບແລ້ວຢ່າງນີ້ ຮູບເຫຼົ່ານັ້ນກໍຄອບງໍາຈິດຂອງທ່ານບໍ່ໄດ້ ຈິດຂອງທ່ານບໍ່ຣະຄົນກັບຮູບເຫຼົ່ານັ້ນເລີຍ ເປັນຈິດຕັ້ງໝັ້ນ ບໍ່ຫວັ່ນໄຫວ ແລະທ່ານຍ່ອມພິຈາລະນາເຫັນຄວາມເສື່ອມແຫ່ງຮູບນັ້ນ ສັນນັ້ນ ຄືກັນ

ແມ່ນຫາກ ສຽງ ຢ່າງຫຍາບທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
ແມ່ນຫາກ ກິ່ນ ຢ່າງຫຍາບທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
ແມ່ນຫາກ ຣົດ ຢ່າງຫຍາບທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
ແມ່ນຫາກ ໂຜດຖັບພະຢ່າງຫຍາບທີ່ເພິ່ງຮູ້ແຈ້ງທາງກາຍ ຯລຯ

ແມ່ນຫາກທໍາມາຣົມຢ່າງຫຍາບທີ່ເພິ່ງຮູ້ແຈ້ງທາງໃຈ ຜ່ານມາທາງຄອງໃຈຂອງພິກຂຸຜູ້ມີຈິດລຸດພົ້ນໂດຍຊອບແລ້ວຢ່າງນີ້ ທໍາມາຣົມເຫຼົ່ານັ້ນກໍຄອບງໍາຈິດຂອງທ່ານບໍ່ໄດ້ ຈິດຂອງທ່ານບໍ່ຣະຄົນກັບທໍາມາຣົມເຫຼົ່ານັ້ນເລີຍ ເປັນຈິດຕັ້ງໝັ້ນ ບໍ່ຫວັ່ນໄຫວ ແລະທ່ານຍ່ອມພິຈາລະນາເຫັນຄວາມເສື່ອມແຫ່ງທໍາມາຣົມນັ້ນ ສັນນັ້ນຄືກັນ

**ສີລາຍູປະສູດທີ ໖ ຈົບ**

# ໗. ປະຖະມະເວຣະສູດ

## ວ່າດ້ວຍໄພເວນ ສູດທີ ໑

[໔໗] ຄັ້ງນັ້ນແລ ອະນາຖະບິນທິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບອະນາຖະບິນທິກະຄະຫະບໍດີດັ່ງນີ້ວ່າ "ຄະຫະບໍດີ ເມື່ອໃດ ອະຣິຍະສາວົກຣະງັບໄພເວນ ໕ ປະການ ໄດ້ແລ້ວ ແລະປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ເມື່ອນັ້ນ ອະຣິຍະສາວົກນັ້ນ ເມື່ອຫວັງຢູ່ ເພິ່ງພະຍາກອນ ຕົນເອງວ່າ "ເຮົາມີນະຣົກສິ້ນແລ້ວ ມີກຳເນີດສັດເດຍຣັດສານສິ້ນແລ້ວ ມີພູມແຫ່ງເຜດສິ້ນແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດສິ້ນແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ"

ອະຣິຍະສາວົກຣະງັບໄພເວນ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ຂ້າສັດ ເພາະການຂ້າສັດເປັນປັດໄຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ຕ້ອງສະເຫວີຍທຸກຂະໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດ ຍ່ອມບໍ່ປະສົບໄພເວນທີ່ເປັນໄປໃນປັດຈຸບັນ ທີ່ເປັນໄປໃນສຳປະຣາຍະພົບ ທັງບໍ່ຕ້ອງສະເຫວີຍທຸກຂະ ໂທມະນັດທາງໃຈ ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດແລ້ວ ຍ່ອມຣະງັບໄພເວນ ນັ້ນໄດ້ ຢ່າງນີ້

໒. ບຸກຄົນຜູ້ລັກຊັບ ຯລຯ
໓. ບຸກຄົນຜູ້ປະພຶດຜິດໃນກາມ ຯລຯ
໔. ບຸກຄົນຜູ້ເວົ້າຕົວະ ຯລຯ

໕. ບຸກຄົນຜູ້ເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເພາະການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນປັດໄຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ຕ້ອງສະເຫວີຍທຸກຂະໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ຍ່ອມບໍ່ປະສົບໄພເວນທີ່ເປັນໄປໃນປັດຈຸບັນທີ່ເປັນໄປໃນ ສຳປະຣາຍະພົບ ທັງບໍ່ຕ້ອງສະເຫວີຍທຸກຂະໂທມະນັດທາງໃຈ ບຸກຄົນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ແລ້ວຍ່ອມຣະງັບໄພເວນນັ້ນໄດ້ ຢ່າງນີ້

ອະຣິຍະສາວົກຣະງັບໄພເວນ ໕ ປະການ ເປັນຢ່າງນີ້

ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ອັນໃດແດ່ ຄື

ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງ ປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີ ພຣະພາກເຈົ້າ"

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ "ພຣະທຳ ເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ເປັນນາບຸນອັນປະເສີດຂອງໂລກ"

໔. ເປັນຜູ້ປະກອບດ້ວຍສີນທີ່ພຣະອະຣິຍະຕ້ອງການ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາ ແລະທິດຖິຄອບງຳ ເປັນໄປເພື່ອສະມາທິ

ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ເປັນແນວນີ້ແລ

ຄະຫະບໍດີ ເມື່ອໃດ ອະຣິຍະສາວົກຣະງັບໄພເວນ ໕ ປະການນີ້ໄດ້ແລ້ວ ແລະປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການນີ້ ເມື່ອນັ້ນ ອະຣິຍະສາວົກນັ້ນເມື່ອຫວັງຢູ່ ເພິ່ງພະຍາກອນຕົນເອງວ່າ "ເຮົາມີນະຣົກສິ້ນແລ້ວ ມີກຳເນີດສັດເດຍຣັດສານສິ້ນແລ້ວ ມີພູມແຫ່ງເຜດສິ້ນແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດສິ້ນແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ"

**ປະຖະມະເວຣະສູດທີ ໗ ຈົບ**

# ໗. ທຸຕິຍະເວຣະສູດ

## ວ່າດ້ວຍໄພເວນ ສູດທີ ໘

[໘໗] ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຣະງັບໄພເວນ ໕ ປະການໄດ້ແລ້ວ ແລະປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ເມື່ອນັ້ນ ອະຣິຍະສາວົກນັ້ນ ເມື່ອຫວັງຢູ່ ເພິ່ງພະຍາກອນຕົນເອງວ່າ "ເຮົາມີນະຣົກສິ້ນແລ້ວ ມີກຳເນີດສັດເດຍຣັດສານສິ້ນແລ້ວ ມີພູມແຫ່ງເຜດສິ້ນແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດສິ້ນແລ້ວ ເປັນໂສດາບັນ ບໍ່ມີທາງ ຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ"

ອະຣິຍະສາວົກຣະງັບໄພເວນ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ຂ້າສັດ ເພາະການຂ້າສັດເປັນປັດໄຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ຕ້ອງສະເຫວີຍທຸກຂະໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດ ຍ່ອມບໍ່ປະສົບໄພເວນທີ່ເປັນໄປໃນປັດຈຸບັນ ທີ່ເປັນໄປໃນສຳປະຣາຍະພົບ ທັງບໍ່ຕ້ອງສະເຫວີຍທຸກຂະ ໂທມະນັດທາງໃຈ ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດແລ້ວ ຍ່ອມຣະງັບໄພເວນນັ້ນໄດ້ ຢ່າງນີ້

໒. ບຸກຄົນຜູ້ລັກຊັບ ฯລฯ
໓. ບຸກຄົນຜູ້ປະພຶດຜິດໃນກາມ ฯລฯ
໔. ບຸກຄົນຜູ້ເວົ້າຕົວະ ฯລฯ

໕. ບຸກຄົນຜູ້ເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ເພາະການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນປັດໄຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ຕ້ອງສະເຫວີຍທຸກຂະໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ຍ່ອມບໍ່ປະສົບໄພເວນທີ່ເປັນໄປໃນປັດຈຸບັນ ທີ່ເປັນໄປໃນສຳປະຣາຍະພົບ ທັງບໍ່ຕ້ອງສະເຫວີຍທຸກຂະໂທມະນັດທາງໃຈ ບຸກຄົນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລ້ວຍ່ອມຣະງັບ ໄພເວນນັ້ນໄດ້ ຢ່າງນີ້

ອະຣິຍະສາວົກຣະງັບໄພເວນ ໕ ປະການນີ້ ເປັນແນວນີ້ແລ
ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ອັນໃດແດ່ ຄື
ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ"

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສີນທີ່ພຣະອະຣິຍະຕ້ອງການ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາ ແລະທິດຖິຄອບງຳ ເປັນໄປເພື່ອສະມາທິ

ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ເປັນຢ່າງນີ້

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຣະງັບໄພເວນ ໕ ປະການນີ້ໄດ້ແລ້ວ ແລະປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການນີ້ ເມື່ອນັ້ນ ອະຣິຍະສາວົກນັ້ນເມື່ອຫວັງຢູ່ ເພິ່ງພະຍາກອນຕົນເອງວ່າ "ເຮົາມີນະຣົກສິ້ນແລ້ວ ມີກຳເນີດສັດເດຍຣັດສານສິ້ນແລ້ວ ມີພູມແຫ່ງເຜດສິ້ນແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດສິ້ນແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນວັນຂ້າງໜ້າ"

**ທຸຕິຍະເວຣະສູດທີ ໗ ຈົບ**

## ໘. ອາຄາຕະວັດຖຸສູດ

### ວ່າດ້ວຍອາຄາຕະວັດຖຸ

[໔໘] ພິກຂຸທັງຫຼາຍ ອາຄາຕະວັດຖຸ (ເຫດຜູກອາຄາດ) ໘ ປະການນີ້

ອາຄາຕະວັດຖຸ ໘ ປະການ ອັນໃດແດ່ ຄື

ບຸກຄົນຍ່ອມຜູກອາຄາດວ່າ

໑. ຜູ້ນີ້ ໄດ້ເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົາ
໒. ຜູ້ນີ້ ກຳລັງ ເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົາ

໓. ຜູ້ນີ້ ຈັກເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົາ
໔. ຜູ້ນີ້ ໄດ້ເຮັດ ສິ່ງທີ່ ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ
໕. ຜູ້ນີ້ ກໍາລັງ ເຮັດສິ່ງທີ່ ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ
໖. ຜູ້ນີ້ ຈັກເຮັດ ສິ່ງທີ່ ບໍ່ເປັນປະໂຫຍດ ແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ
໗. ຜູ້ນີ້ ໄດ້ເຮັດ ສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ
໘. ຜູ້ນີ້ ກໍາລັງ ເຮັດສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ ພໍໃຈຂອງເຮົາ
໙. ຜູ້ນີ້ ຈັກເຮັດສິ່ງທີ່ເປັນປະໂຫຍດ ແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ

ພິກຂຸທັງຫຼາຍ ອາຄາຕະວັດຖຸ ໙ ປະການນີ້ແລ

**ອາຄາຕະວັດຖຸສູດທີ ໙ ຈົບ**

# ໑໐. ອາຄາຕະປະຕິວິນຍະສູດ

## ວ່າດ້ວຍອຸບາຍກໍາຈັດອາຄາດ

[໓໐] ພິກຂຸທັງຫຼາຍ ອຸບາຍເປັນເຄື່ອງກໍາຈັດອາຄາດ ໙ ປະການນີ້

"ອຸບາຍເປັນເຄື່ອງກໍາຈັດອາຄາດ ໙ ປະການ ອັນໃດແດ່ ຄື

ບຸກຄົນຍ່ອມກໍາຈັດອາຄາດວ່າ

໑. ຜູ້ນີ້ ໄດ້ເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົານັ້ນຫາບໍ່ໄດ້ໃນຜູ້ນີ້

໒. ຜູ້ນີ້ ກໍາລັງເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

໓. ຜູ້ນີ້ ຈັກເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

໔. ຜູ້ນີ້ໄດ້ເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ພໍໃຈຂອງເຮົາ ການເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ພໍໃຈຂອງເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

໕. ຜູ້ນີ້ກຳລັງເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ພໍໃຈຂອງເຮົາ ການເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ພໍໃຈຂອງເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

໖. ຜູ້ນີ້ຈັກເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ພໍໃຈຂອງເຮົາ ການເຮັດສິ່ງທີ່ ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ ພໍໃຈຂອງເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

໗. ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

໘. ຜູ້ນີ້ກຳລັງເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

໙. ຜູ້ນີ້ຈັກເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນ ຫາບໍ່ໄດ້ໃນຜູ້ນີ້

ພິກຂຸທັງຫຼາຍ ອຸບາຍເປັນເຄື່ອງກຳຈັດອາຄາດ ໙ ປະການນີ້ແລ

**ອາຄາຕະປະຕິວິນຍະສູດທີ່ ໑໐ ຈົບ**

# ໑໑. ອະນຸປຸບພະນິໂຣທະສູດ

## ວ່າດ້ວຍອະນຸປຸບພະນິໂຣດ

[໓໑] ພິກຂຸທັງຫຼາຍ ອະນຸປຸບພະນິໂຣດ (ຄວາມດັບໄປຕາມລຳດັບ) ໙ ປະການນີ້

ອະນຸປຸບພະນິໂຣດ ໙ ປະການ ອັນໃດແດ່ ຄື

໑. ການສັນຍາຂອງຜູ້ເຂົ້າປະຖົມຊານດັບໄປ
໒. ວິຕົກວິຈານຂອງຜູ້ເຂົ້າທຸຕິຍະຊານດັບໄປ
໓. ປີຕິ ຂອງຜູ້ເຂົ້າຕະຕິຍະຊານດັບໄປ

໔. ລົມຫາຍໃຈເຂົ້າ ລົມຫາຍໃຈອອກຂອງຜູ້ເຂົ້າຈະຕຸດຖະຊານດັບໄປ
໕. ຮູບສັນຍາຂອງຜູ້ເຂົ້າອາກາສານັນຈາຍະຕະນະຊານດັບໄປ
໖. ອາກາສານັນຈາຍະຕະນະສັນຍາຂອງຜູ້ເຂົ້າວິນຍານັນຈາຍະຕະນະຊານດັບໄປ
໗. ວິນຍານັນຈາຍະຕະນະສັນຍາຂອງຜູ້ເຂົ້າ ອາກິນຈັນຍາຍະຕະນະຊານດັບໄປ
໘. ອາກິນຈັນຍາຍະຕະນະສັນຍາຂອງຜູ້ເຂົ້າເນວະສັນຍານາສັນຍາຍະຕະນະຊານດັບໄປ
໙. ສັນຍາແລະເວທະນາຂອງຜູ້ເຂົ້າສັນຍາເວທະຍິຕະນິໂຣດ ດັບໄປ

ພິກຂຸທັງຫຼາຍ ອະນຸປຸບພະນິໂຣດ ໙ ປະການນີ້ແລ

**ອະນຸປຸບພະນິໂຣທະສູດທີ ໑໑ ຈົບ**

**ສັດຕາວາດວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ມະຫາວັກ

## ໝວດວ່າດ້ວຍເລື້ອງໃຫຍ່

# ໑. ອະນຸປຸບພະວິຫາຣະສູດ

## ວ່າດ້ວຍອະນຸປຸບພະວິຫານທຳ

[໓໘] ພິກຂຸທັງຫຼາຍ ອະນຸປຸບພະວິຫານທຳ໌ ໙ ປະການນີ້

ອະນຸປຸບພະວິຫານທຳ ໙ ປະການ ອັນໃດແດ່ ຄື

໑. ປະຖະມະຊານ

໒. ທຸຕິຍະຊານ

໓. ຕະຕິຍະຊານ

໔. ຈະຕຸດຖະຊານ

໕. ອາກາສານັນຈາຍະຕະນະຊານ

໖. ວິນຍານັນຈາຍະຕະນະຊານ

໗. ອາກິນຈັນຍາຍະຕະນະຊານ

໘. ເນວະສັນຍານາສັນຍາຍະຕະນະຊານ

໙. ສັນຍາເວທະຍິຕະນິໂຣດ

ພິກຂຸທັງຫຼາຍ ອະນຸປຸບພະວິຫານທຳ ໙ ປະການນີ້ແລ

**ອະນຸປຸບພະວິຫານສູດທີ ໑ ຈົບ**

# ໒. ອະນຸປຸບພະວິຫານສະມາປັດຕິສູດ

## ວ່າດ້ວຍອະນຸປຸບພະວິຫານສະມາບັດ

[໓໓] ພິກຂຸທັງຫຼາຍ ເຮົາຈັກສະແດງອະນຸປຸບພະວິຫານສະມາບັດ ໙ ປະການນີ້ ທ່ານທັງຫຼາຍຈົ່ງຟັງທຳນັ້ນ ຯລຯ

ອະນຸປຸບພະວິຫານສະມາບັດ ໙ ປະການ ອັນໃດແດ່ ຄື

໑. ເຮົາກ່າວວ່າ ກາມທັງຫຼາຍຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບກາມທັງຫຼາຍໄດ້ສະນິດຢູ່ ທ່ານເຫຼົ່ານັ້ນບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວດ້ວຍອົງຊານນັ້ນໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງ ກ່າວຢ່າງນີ້ວ່າ “ກາມທັງຫຼາຍດັບທີ່ໃດ ແລະຄົນເຫຼົ່າໃດນໍດັບ

ກາມໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບຜູ້ນັ້ນຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ກາມທັງຫຼາຍຍ່ອມດັບໃນປະຖົມຊານນີ້ ແລະທ່ານ ເຫຼົ່ານັ້ນກໍດັບກາມໄດ້ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມ ຍິນດີ ພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການ ປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

໔. ເຮົາກ່າວວ່າ ວິຕົກແລະວິຈານຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບວິຕົກ ແລະວິ ຈານໄດ້ສະນິດຢູ່ ທ່ານເຫຼົ່ານັ້ນບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວດ້ວຍ ອົງຊານນັ້ນໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ວິຕົກ ແລະວິຈານດັບໃນທີ່ໃດ ແລະຄົນ ເຫຼົ່າໃດນໍ ດັບວິຕົກແລະວິຈານໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບ ຜູ້ນັ້ນຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ ເພາະວິຕົກວິຈານສະງົບຣະງັບໄປ ບັນລຸທຸຕິຍະ ຊານ ຯລຯ ວິຕົກແລະວິຈານຍ່ອມດັບໃນທຸຕິຍະຊານນີ້ ແລະທ່ານເຫຼົ່ານັ້ນດັບວິຕົກ ແລະວິຈານ ໄດ້ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມຍິນດີພາສິດວ່າ "ດີ ແລ້ວ" ເມື່ອແລ້ວ ເພິ່ງນະມັດສະການ ປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

໓. ເຮົາກ່າວວ່າ ປີຕິຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບປີຕິໄດ້ສະນິດຢູ່ ທ່ານເຫຼົ່າ ນັ້ນບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວ ດ້ວຍອົງຊານນັ້ນໃນທີ່ນັ້ນເປັນ ແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ປີຕິຍ່ອມດັບໃນທີ່ໃດ ແລະຄົນເຫຼົ່າໃດນໍດັບປີຕິໄດ້ສະນິດຢູ່ ເຮົາບໍ່ ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບຜູ້ນັ້ນຢ່າງນີ້ວ່າ ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ ເພາະປີຕິຈາງຄາຍອອກ ຯລຯ ບັນລຸຕະຕິຍະຊານ ຯລຯ ປີຕິຍ່ອມດັບໃນຕະຕິຍະຊານນີ້ ແລະ ທ່ານເຫຼົ່ານັ້ນດັບປີຕິໄດ້ສະນິດຢູ່ "ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມຍິນ ດີພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການ ປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

໔. ເຮົາກ່າວວ່າ ອຸເປກຂາ ແລະສຸກຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດ ດັບອຸເປກຂາແລະ ສຸກໄດ້ສະນິດຢູ່ ທ່ານເຫຼົ່ານັ້ນ ບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວດ້ວຍອົງ ຊານນັ້ນໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ອຸເປກຂາ ແລະສຸກຍ່ອມດັບໃນທີ່ໃດ ແລະຄົນ ເຫຼົ່າໃດນໍດັບອຸເປກຂາ ແລະສຸກໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບຜູ້ ນັ້ນຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ ເພາະລະສຸກ ແລະທຸກໄດ້ ຯລຯ ບັນລຸຈະຕຸດຖະຊານ ຯລຯ ອຸເປກຂາ ແລະສຸກຍ່ອມດັບໃນຈະຕຸດຖະຊານນີ້ ແລະທ່ານເຫຼົ່ານັ້ນດັບອຸເປກຂາແລະສຸກໄດ້ ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມ ຍິນດີພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການ ປະຄອງອັນຊະລີເຂົ້າໄປ ນັ່ງໃກ້ເປັນແນ່

໕. ເຮົາກ່າວວ່າ ຮູບສັນຍາຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບຮູບສັນຍາ ໄດ້ສະນິດ

ຢູ່ ທ່ານເຫຼົ່ານັ້ນ ບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວດ້ວຍອົງຊານນັ້ນ ໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ຮູບສັນຍາຍ່ອມດັບໃນທີ່ໃດ ແລະຄົນເຫຼົ່າໃດນໍດັບຮູບສັນຍາໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບຜູ້ນັ້ນຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ ຮູບສັນຍາຍ່ອມດັບໃນອາກາສານັນຈາຍະຕະນະຊານນີ້ ແລະທ່ານເຫຼົ່ານັ້ນດັບຮູບສັນຍາໄດ້ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມຍິນດີພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການ ປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

໖. ເຮົາກ່າວວ່າ ອາກາສານັນຈາຍະຕະນະສັນຍາຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບອາກາສານັນຈາຍະຕະນະສັນຍາໄດ້ສະນິດຢູ່ ທ່ານເຫຼົ່ານັ້ນບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວດ້ວຍອົງຊານນັ້ນ ໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ອາກາສານັນຈາຍະຕະນະສັນຍາ ຍ່ອມດັບໃນທີ່ໃດ ແລະຄົນເຫຼົ່າໃດນໍ ດັບອາກາສານັນຈາຍະຕະນະສັນຍາ ໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້ "ທ່ານທັງຫຼາຍເພິ່ງຕອບຜູ້ນັ້ນ ຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່ ອາກາສານັນຈາຍະຕະນະສັນຍາຍ່ອມດັບໃນວິນຍານັນຈາຍະຕະນະຊານນີ້ ແລະທ່ານເຫຼົ່ານັ້ນ ດັບອາກາສານັນຈາຍະຕະນະສັນຍາໄດ້ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມຍິນດີພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

໗. ເຮົາກ່າວວ່າ ວິນຍານັນຈາຍະຕະນະສັນຍາຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບວິນຍານັນຈາຍະຕະນະສັນຍາໄດ້ສະນິດຢູ່ ທ່ານເຫຼົ່ານັ້ນບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວດ້ວຍອົງຊານນັ້ນ ໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ວິນຍານັນຈາຍະຕະນະສັນຍາຍ່ອມດັບໃນທີ່ໃດ ແລະຄົນເຫຼົ່າໃດນໍ ດັບວິນຍານັນຈາຍະຕະນະສັນຍາໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບຜູ້ນັ້ນຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ວິນຍານັນຈາຍະຕະນະສັນຍາ ຍ່ອມດັບໃນອາກິນຈັນຍາຍະຕະນະຊານນີ້ ແລະທ່ານເຫຼົ່ານັ້ນດັບວິນຍານັນຈາຍະຕະນະສັນຍາໄດ້ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມຍິນດີພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

໘. ເຮົາກ່າວວ່າ ອາກິນຈັນຍາຍະຕະນະສັນຍາຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບອາກິນຈັນຍາຍະຕະນະສັນຍາໄດ້ສະນິດຢູ່ ທ່ານເຫຼົ່ານັ້ນບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມ

ໄດ້ແລ້ວ ເຖິງຝັ່ງແລ້ວດ້ວຍອົງຊານນັ້ນ ໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ອາກິນຈັນຍາຍະຕະນະສັນຍາຍ່ອມດັບໃນທີ່ໃດ ແລະຄົນເຫຼົ່າໃດນໍດັບອາກິນຈັນຍາຍະຕະນະສັນຍາໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບຜູ້ນັ້ນຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ອາກິນຈັນຍາຍະຕະນະສັນຍາຍ່ອມດັບໃນເນວະສັນຍານາສັນຍາຍະຕະນະຊານນີ້ ແລະທ່ານເຫຼົ່ານັ້ນ ດັບອາກິນຈັນຍາຍະຕະນະສັນຍາໄດ້ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມຍິນດີພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການ ປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

໗. ເຮົາກ່າວວ່າ ເນວະສັນຍານາສັນຍາຍະຕະນະສັນຍາຍ່ອມດັບໃນທີ່ໃດ ແລະທ່ານເຫຼົ່າໃດດັບເນວະສັນຍານາສັນຍາຍະຕະນະສັນຍາໄດ້ສະນິດຢູ່ ທ່ານເຫຼົ່ານັ້ນບໍ່ມີຄວາມຢາກ ດັບສະນິດແລ້ວ ຂ້າມໄດ້ແລ້ວ ເຖິງຝັ່ງແລ້ວ ດ້ວຍອົງຊານນັ້ນໃນທີ່ນັ້ນເປັນແນ່ ຜູ້ໃດເພິ່ງກ່າວຢ່າງນີ້ວ່າ "ເນວະສັນຍານາສັນຍາຍະຕະນະສັນຍາຍ່ອມດັບໃນທີ່ໃດ ແລະຄົນເຫຼົ່າໃດນໍດັບ ເນວະສັນຍານາສັນຍາຍະຕະນະສັນຍາໄດ້ສະນິດຢູ່ ເຮົາບໍ່ຮູ້ຜູ້ນີ້ ເຮົາບໍ່ເຫັນຜູ້ນີ້" ທ່ານທັງຫຼາຍເພິ່ງຕອບຜູ້ນັ້ນຢ່າງນີ້ວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ເນວະສັນຍານາສັນຍາຍະຕະນະສັນຍາຍ່ອມດັບໃນສັນຍາເວທະຍິຕະນິໂຣດນີ້ ແລະທ່ານເຫຼົ່ານັ້ນ ດັບເນວະສັນຍານາສັນຍາຍະຕະນະສັນຍາໄດ້ສະນິດຢູ່" ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມາຍາ ເພິ່ງຊື່ນຊົມຍິນດີພາສິດວ່າ "ດີແລ້ວ" ເມື່ອແລ້ວ ເພິ່ງນະມັດສະການປະຄອງອັນຊະລີເຂົ້າໄປນັ່ງໃກ້ເປັນແນ່

ພິກຂຸທັງຫຼາຍ ອະນຸປຸບພະວິຫານສະມາບັດ ໗ ປະການນີ້ແລ

**ອະນຸປຸບພະວິຫານສະມາປັດຕິສູດທີ ໘ ຈົບ**

# ໙. ນິບພານະສຸຂະສູດ

## ວ່າດ້ວຍນິບພານເປັນສຸກ

[໙໔] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ໃນພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດເມືອງຣາດຊະຄຶ ໃນທີ່ນັ້ນ ທ່ານພຣະສາຣີບຸດກ່າວກັບພິກຂຸທັງຫຼາຍວ່າ "ຜູ້ມີອາຍຸທັງຫຼາຍ ນິບພານນີ້ເປັນສຸກ ນິບພານນີ້ເປັນສຸກ"

ເມື່ອທ່ານພຣະສາຣີບຸດກ່າວຢ່າງນີ້ແລ້ວ ທ່ານພຣະອຸທາຍີໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ "ທ່ານສາຣີບຸດ ກໍນິບພານນີ້ບໍ່ມີເວທະນາ ຈະເປັນສຸກໄດ້ຢ່າງໃດ"

ທ່ານພຣະສາຣີບຸດກ່າວວ່າ ຜູ້ມີອາຍຸ ນິບພານທີ່ບໍ່ມີເວທະນານັ້ນເປັນສຸກ

ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ

໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ

໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ຜູ້ມີອາຍຸ ກາມມະຄຸນ ໕ ປະການນີ້

ຜູ້ມີອາຍຸ ສຸກໂສມະນັດທີ່ອາໄສກາມມະຄຸນ ໕ ປະການເກີດຂຶ້ນ ຮຽກວ່າ ກາມສຸກ

ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ຯລຯ ຖ້າເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍກາມຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍກາມເຫຼົ່ານັ້ນ ກໍສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸບັນລຸທຸຕິຍະຊານ ຯລຯ ຖ້າເມື່ອພິກຂຸນັ້ນ ຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍວິຕົກຍັງຟຸ້ງຂຶ້ນ ຂໍ້ນັ້ນ ເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນ ແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍວິຕົກເຫຼົ່ານັ້ນກໍສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸບັນລຸຕະຕິຍະຊານ ຯລຯ ຖ້າເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍປີຕິຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີ

ສຸກ ພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍປີຕິເຫຼົ່ານັ້ນ ກໍ ສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸບັນລຸຈະຕຸດຖະຊານ ໗ລ໗ ຖ້າເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການ ທີ່ປະກອບດ້ວຍອຸເປກຂາຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍອຸເປກຂາເຫຼົ່ານັ້ນ ກໍສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ຖ້າເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍຮູບຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍຮູບເຫຼົ່ານັ້ນ ກໍສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະ-ຊານ ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່ ຖ້າເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍອາກາສານັນຈາຍະຕະນະຊານເຫຼົ່ານັ້ນຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍອາກາສານັນຈາຍະຕະນະຊານເຫຼົ່ານັ້ນ ກໍສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ຖ້າເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍວິນຍານັນຈາຍະຕະນະຊານຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍວິນຍານັນຈາຍະຕະນະຊານເຫຼົ່ານັ້ນ ກໍສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້

ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ຖ້າເມື່ອພິກຂຸນັ້ນຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍອາກິນຈັນຍາຍະຕະນະຊານຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ແມ່ນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍ ອາກິນຈັນຍາຍະຕະນະຊານ ເຫຼົ່ານັ້ນ ກໍສັນນັ້ນຄືກັນ ຍ່ອມຟຸ້ງຂຶ້ນແກ່ພິກຂຸນັ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ພິກຂຸນັ້ນ ຄວາມກົດດັນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າທຸກ ໂດຍປະຣິຍາຍນີ້ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ແລະອາສະວະທັງຫຼາຍຂອງທ່ານໝົດສິ້ນໄປແລ້ວ ເພາະເຫັນດ້ວຍປັນຍາ ໂດຍປະຣິຍາຍນີ້ແລ ເພິ່ງຮູ້ວ່າ ນິບພານເປັນສຸກໄດ້ຢ່າງໃດ

**ນິບພານະສຸຂະສູດທີ ໓ ຈົບ**

# ໔. ຄາວີອຸປະມາສູດ

## ວ່າດ້ວຍການອຸປະມາດ້ວຍແມ່ງົວ

[໓໕] ພິກຂຸທັງຫຼາຍ ແມ່ງົວທີ່ທ່ຽວໄປຕາມພູ ໂງ່ ບໍ່ສຽບແຫຼມ ບໍ່ຮູ້ຈັກເຂດ ບໍ່ສະຫຼາດທີ່ຈະທ່ຽວໄປເທິງພູທີ່ຂຸຂະ ມັນເພິ່ງມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນໄປສູ່ທິດທີ່ຍັງບໍ່ເຄີຍໄປ ກິນຫຍ້າທີ່ຍັງບໍ່ເຄີຍກິນ ແລະດື່ມນ້ຳທີ່ຍັງບໍ່ເຄີຍດື່ມ" ມັນຢັນຕີນໜ້າຂຶ້ນບໍ່ໄດ້ ແລ້ວຍົກຕີນຫຼັງຂຶ້ນ ຈະໄປສູ່ທິດທາງທີ່ຍັງບໍ່ເຄີຍໄປບໍ່ໄດ້ ກິນຫຍ້າທີ່ຍັງບໍ່ເຄີຍກິນບໍ່ໄດ້ ແລະດື່ມນ້ຳທີ່ຍັງບໍ່ເຄີຍດື່ມກໍບໍ່ໄດ້

ເມື່ອມັນຢືນຢູ່ໃນທີ່ໃດ ເພິ່ງມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນໄປສູ່ທິດທີ່ຍັງບໍ່ເຄີຍໄປ ກິນຫຍ້າທີ່ຍັງບໍ່ເຄີຍກິນ ແລະດື່ມນ້ຳທີ່ຍັງບໍ່ເຄີຍດື່ມ" ເພິ່ງກັບມາຍັງຖິ່ນນັ້ນ ໂດຍສະຫວັດສະດີບໍ່ໄດ້ ຂໍ້ນັ້ນເພາະເຫດໃດ ເພາະແມ່ງົວນັ້ນເປັນສັດທີ່ທ່ຽວໄປຕາມພູ ໂງ່ ບໍ່ສຽບແຫຼມ ບໍ່ຮູ້ຈັກເຂດ ບໍ່ສະຫຼາດທີ່ຈະທ່ຽວໄປເທິງພູທີ່ຂຸຂະ ສັນໃດ

ພິກຂຸທັງຫຼາຍ ພິກຂຸບາງອົງໃນທຳວິໄນນີ້ກໍສັນນັ້ນຄືກັນ ເປັນຜູ້ຈ້ຳ ບໍ່ສຽບແຫຼມ ບໍ່ຮູ້ຈັກເຂດ ບໍ່ສະຫຼາດທີ່ຈະສະຫງັດຈາກການ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີ

ວິຕົກແລະວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ທ່ານບໍ່ເສບ ບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ບໍ່ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ເພາະວິຕົກ ແລະວິຈານສະງົບ ຣະງັບໄປ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່" ທ່ານບໍ່ອາດຈະບັນລຸທຸຕິຍະຊານ ໆລໆ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນສະຫງັດຈາກກາມ ແລະອະກຸສົນທຳແລ້ວ ບັນລຸປະຖົມຊານທີ່ມີວິຕົກແລະວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່" ທ່ານບໍ່ອາດຈະສະຫງັດ ຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ໆລໆ ພິກຂຸນີ້ເຮົາຮຽກວ່າເປັນຜູ້ພາດ ເປັນຜູ້ເສື່ອມຈາກຜົນທັງ ໔ ຝ່າຍ ປຽບເໝືອນແມ່ງົວທີ່ທ່ຽວໄປເທິງພູ ໂງ່ ບໍ່ສຽບແຫຼມ ບໍ່ຮູ້ຈັກເຂດ ບໍ່ສະຫຼາດທີ່ຈະທ່ຽວໄປເທິງພູທີ່ຂຸຂະ ສະນັ້ນ

ພິກຂຸທັງຫຼາຍ ແມ່ງົວທີ່ທ່ຽວໄປຕາມພູ ສະຫຼາດ ສຽບແຫຼມ ຮູ້ຈັກເຂດ ສະຫຼາດທີ່ຈະທ່ຽວໄປເທິງພູທີ່ຂຸຂະ ມັນເພິ່ງມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນໄປສູ່ທິດທີ່ຍັງບໍ່ເຄີຍໄປກິນຫຍ້າທີ່ຍັງບໍ່ເຄີຍກິນ ແລະດື່ມນ້ຳທີ່ຍັງບໍ່ເຄີຍດື່ມ" ມັນຢັນຕີນໜ້າໄວ້ດີແລ້ວ ຍົກຕີນຫຼັງຂຶ້ນເພິ່ງໄປສູ່ທິດທີ່ຍັງບໍ່ເຄີຍໄປ ກິນຫຍ້າທີ່ຍັງບໍ່ເຄີຍກິນ ແລະດື່ມນ້ຳທີ່ຍັງບໍ່ເຄີຍດື່ມໄດ້ ເມື່ອມັນຢືນຢູ່ໃນທີ່ໃດ ເພິ່ງມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນໄປສູ່ທິດທີ່ຍັງບໍ່ເຄີຍໄປ ກິນຫຍ້າທີ່ຍັງບໍ່ເຄີຍກິນ ແລະດື່ມນ້ຳທີ່ຍັງບໍ່ເຄີຍດື່ມ" ເພິ່ງກັບມາຍັງ ຖິ່ນນັ້ນໂດຍສະຫວັດສະດີໄດ້ ຂໍ້ນັ້ນເພາະເຫດໃດ ເພາະແມ່ງົວນັ້ນເປັນສັດທີ່ທ່ຽວໄປຕາມພູ ສະຫຼາດ ສຽບແຫຼມ ຮູ້ຈັກເຂດ ສະຫຼາດທີ່ຈະທ່ຽວໄປເທິງພູທີ່ຂຸຂະ ສັນໃດ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ກໍສັນນັ້ນຄືກັນ ສະຫຼາດ ສຽບແຫຼມ ຮູ້ຈັກເຂດສະຫຼາດທີ່ຈະສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ແລະວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ເພາະວິຕົກ ແລະວິຈານສະງົບ ຣະງັບໄປ ມີປີຕິແລະສຸກອັນເກີດຈາກສະມາທິຢູ່" ທ່ານບໍ່ຕິດໃຈທຸຕິຍະຊານ ບັນລຸທຸຕິຍະຊານ ໆລໆ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ເພາະປີຕິຈາງຄາຍອອກ ບັນລຸຕະຕິຍະຊານທີ່ ພຣະອະຣິຍະ

ທັງຫຼາຍກ່າວສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ທ່ານບໍ່ຕິດໃຈຕະຕິຍະຊານ ບັນລຸຕະຕິຍະຊານ ຯລຯ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເພາະລະສຸກ ແລະທຸກໄດ້ ເພາະໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ເຮົາຄວນບັນລຸຈະຕຸດຖະຊານທີ່ບໍ່ມີທຸກແລະບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາ ຢູ່" ທ່ານບໍ່ຕິດໃຈຈະຕຸດຖະຊານ ບັນລຸຈະຕຸດຖະຊານ ຯລຯ ທ່ານເສບຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນບັນລຸອາກາສານັນຈາຍະຕະນະຊານໂດຍ ກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ" ທ່ານບໍ່ຕິດໃຈອາກາສານັນຈາຍະຕະນະຊານ ບັນລຸອາກາສານັນຈາຍະຕະນະຊານ ຯລຯ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່" ທ່ານບໍ່ຕິດໃຈວິນຍານັນຈາຍະຕະນະຊານ ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່" ທ່ານເສບຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່" ທ່ານບໍ່ຕິດໃຈອາກິນຈັນຍາຍະຕະນະຊານ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່" ທ່ານບໍ່ຕິດໃຈເນວະສັນຍານາສັນຍາຍະຕະ ນະຊານ ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ທ່ານເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງນິມິດນັ້ນ ອະທິຖານນິມິດນັ້ນໃຫ້ດີ

ທ່ານມີຄວາມຄິດຢ່າງນີ້ວ່າ "ທາງທີ່ດີ ເຮົາຄວນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່" ທ່ານບໍ່ຕິດໃຈສັນຍາເວທະຍິຕະ

ນິໂຣດ ລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະ ນິໂຣດຢູ່

ພິກຂຸທັງຫຼາຍ ເມື່ອໃດ ສະມາບັດນັ້ນ ໆ ພິກຂຸເຂົ້າກໍໄດ້ ອອກກໍໄດ້ ເມື່ອນັ້ນ ຈິດຂອງທ່ານຍ່ອມອ່ອນ ເໝາະແກ່ການໃຊ້ງານ ດ້ວຍຈິດທີ່ອ່ອນ ເໝາະແກ່ການໃຊ້ງານ ທ່ານຈຶ່ງຈະເລີນອັບປະມານະສະມາທິ ດ້ວຍອັບປະມານະສະມາທິທີ່ຈະເລີນດີແລ້ວ ທ່ານຈຶ່ງນ້ອມຈິດໄປເພື່ອເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຊິ່ງທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງໃດ ໆ ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້" ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນ ທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ" ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງກຳນົດຮູ້ຈິດຂອງສັດແລະບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະ ກໍຮູ້ວ່າ ມີຣາຄະ ຫຼືປາສະຈາກຣາຄະ ກໍຮູ້ວ່າ ປາສະຈາກຣາຄະ ຈິດມີໂທສະ ກໍຮູ້ວ່າ ມີໂທສະ ຫຼື ປາສະຈາກໂທສະ ກໍຮູ້ວ່າ ປາສະຈາກໂທສະ ຈິດມີໂມຫະ ກໍຮູ້ວ່າ ມີໂມຫະ ຫຼື ປາສະຈາກໂມຫະ ກໍຮູ້ວ່າ ປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າ ຫົດຫູ່ ຫຼື ຟຸ້ງຊ່ານ ກໍຮູ້ວ່າ ຟຸ້ງຊ່ານ ຈິດເປັນມະຫັກຄະຕະ ກໍຮູ້ວ່າ ເປັນມະຫັກຄະຕະ ຫຼື ບໍ່ເປັນມະຫັກຄະຕະ ກໍຮູ້ວ່າ ບໍ່ເປັນມະຫັກຄະຕະ ຈິດມີຈິດອື່ນຍິ່ງກວ່າ ກໍຮູ້ວ່າ ມີຈິດອື່ນຍິ່ງກວ່າ ຫຼື ບໍ່ມີຈິດອື່ນຍິ່ງກວ່າ ກໍຮູ້ວ່າ ບໍ່ມີຈິດອື່ນຍິ່ງກວ່າ ຈິດເປັນສະມາທິ ກໍຮູ້ວ່າ ເປັນສະມາທິ ຫຼື ບໍ່ເປັນສະມາທິ ກໍຮູ້ວ່າ ບໍ່ເປັນສະມາທິ ຈິດລຸດພົ້ນ ກໍຮູ້ວ່າ ລຸດພົ້ນ ຫຼື ບໍ່ລຸດພົ້ນ ກໍຮູ້ວ່າ ບໍ່ລຸດພົ້ນ" ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດຢ່າງນີ້" ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງຢູ່ວ່າ "ເຮົາເພິ່ງເຫັນໝູ່ສັດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ເພິ່ງຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳຢ່າງນີ້ແລ" ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

ຖ້າພິກຂຸນັ້ນ ຫວັງວ່າ "ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ເພາະອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ເມື່ອມີເຫດ ທ່ານຍ່ອມບັນລຸຄວາມເປັນຜູ້ເໝາະສົມທີ່ຈະປະຈັກແຈ້ງໃນທຳນັ້ນ ໆ

**ຄາວີອຸປະມາສູດທີ ໔ ຈົບ**

# ໕. ຊານະສູດ

## ວ່າດ້ວຍຊານ

[໓໖] ພິກຂຸທັງຫຼາຍ ເຮົາກ່າວວ່າ

໑. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສປະຖົມຊານ
໒. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສທຸຕິຍະຊານ
໓. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສຕະຕິຍະຊານ
໔. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສຈະຕຸດຖະຊານ
໕. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສອາກາສານັນຈາຍະຕະນະຊານ
໖. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສວິນຍານັນຈາຍະຕະນະຊານ
໗. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສອາກິນຈັນຍາຍະຕະນະຊານ
໘. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສເນວະສັນຍານາສັນຍາຍະຕະນະຊານ
໙. ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສສັນຍາເວທະຍິຕະນິໂຣດ

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສປະຖົມຊານ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ຯລຯ ທ່ານຍ່ອມພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນປະຖົມຊານນັ້ນ ໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນດັ່ງໂຣກ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄອຍຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນດັ່ງຄົນຝ່າຍອື່ນ ເປັນສິ່ງທີ່ ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມທຳຈິດໃຫ້ກັບຈາກທຳເຫຼົ່ານັ້ນ ເມື່ອແລ້ວ ຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ "ພາວະ ທີ່ສະງົບປະນີດ ຄື ຄວາມຣະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບນິບພານ" ທ່ານດຳຣົງຢູ່ໃນປະຖົມຊານນັ້ນ ຍ່ອມບັນ

ລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ພິກຂຸທັງຫຼາຍ ນາຍຂະມັງທະນູ ຫຼື ລູກມືຂອງນາຍຂະມັງທະນູ ພະຍາຍາມຍິງລູກສອນໄປທີ່ຫຸ່ນຫຍ້າ ຫຼື ກອງດິນ ສະໄໝຕໍ່ມາ ເຂົາເປັນຜູ້ຍິງລູກສອນໄດ້ໄກ ຍິງບໍ່ພາດ ແລະທຳລາຍກາຍ ຂະໜາດໃຫຍ່ໄດ້ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ຯລຯ ທ່ານຍ່ອມພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນປະຖົມຊານນັ້ນ ໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນດັ່ງໂຣກ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄອຍຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນດັ່ງຄົນຝ່າຍອື່ນ ເປັນສິ່ງທີ່ ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມທຳຈິດໃຫ້ກັບຈາກທຳເຫຼົ່ານັ້ນ ເມື່ອແລ້ວ ຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ "ພາວະທີ່ສະຫງົບປະນີດ ຄື ຄວາມຣະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບນິບພານ" ທ່ານດຳຣົງຢູ່ໃນປະຖົມຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສປະຖົມຊານ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສທຸຕິຍະຊານ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຯລຯ

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສຕະຕິຍະຊານ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຯລຯ

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສຈະຕຸດຖະຊານ" ເພາະອາ ໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ແລະບໍ່ມີສຸກ ມີສະຕິບໍລິສຸດເພາະອຸເປກຂາຢູ່ ເພາະລະສຸກ ແລະທຸກໄດ້ ເພາະໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ທ່ານຍ່ອມພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນຈະຕຸດຖະຊານນັ້ນ ໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນດັ່ງໂຣກ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄອຍຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນດັ່ງຄົນຝ່າຍ

ອື່ນ ເປັນສິ່ງທີ່ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມທຳຈິດໃຫ້ກັບຈາກທຳເຫຼົ່ານັ້ນ ເມື່ອແລ້ວຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ "ພາວະທີ່ສະຫງົບ ປະນີດ ຄື ຄວາມຣະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບນິບພານ" ທ່ານດຳຣົງຢູ່ໃນຈະຕຸດຖະຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ພິກຂຸທັງຫຼາຍ ນາຍຂະມັງທະນູ ຫຼື ລູກມືຂອງນາຍຂະມັງທະນູ ພະຍາຍາມຍິງລູກສອນໄປທີ່ ຫຸ່ນຫຍ້າ ຫຼື ກອງດິນ ສະໄໝຕໍ່ມາ ເຂົາເປັນຜູ້ຍິງລູກສອນໄດ້ໄກ ຍິງບໍ່ພາດ ແລະທຳລາຍກາຍຂະ ໜາດໃຫຍ່ໄດ້ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ບັນລຸຈະຕຸດຖະຊານ ຯລຯ ທ່ານຍ່ອມ ພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ຯລຯ ທີ່ມີຢູ່ໃນຈະຕຸດຖະຊານນັ້ນ ຯລຯ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສຈະຕຸດຖະຊານ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສອາກາສານັນຈາຍະຕະນະຊານ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດ ນານັດຕະສັນຍາ ທ່ານຍ່ອມພິຈາລະນາເຫັນທຳທັງຫຼາຍ ຄື ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນອາກາສານັນຈາຍະຕະນະຊານນັ້ນ ໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນດັ່ງໂຣກ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄອຍຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນດັ່ງຄົນຝ່າຍອື່ນ ເປັນສິ່ງທີ່ ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມທຳຈິດໃຫ້ກັບຈາກທຳເຫຼົ່ານັ້ນ ເມື່ອແລ້ວ ຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ "ພາວະທີ່ສະຫງົບ ປະນີດ ຄື ຄວາມຣະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ" ທ່ານດຳຣົງຢູ່ໃນ ອາກາສານັນຈາຍະຕະນະຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ເພາະສັງ ໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ພິກຂຸທັງຫຼາຍ ນາຍຂະມັງທະນູ ຫຼື ລູກມືຂອງນາຍຂະມັງທະນູ ພະຍາຍາມຍິງລູກສອນໄປທີ່ ຫຸ່ນຫຍ້າ ຫຼື ກອງດິນ ສະໄໝຕໍ່ມາ ເຂົາເປັນຜູ້ຍິງລູກສອນໄດ້ໄກ ຍິງບໍ່ພາດ ແລະ

ທຳລາຍກາຍຂະ ໝາດໃຫຍ່ໄດ້ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ທ່ານຍ່ອມພິຈາລະນາເຫັນທຳທັງຫຼາຍ ຄື ຮູບ ເວທະນາ ຯລຯ ທີ່ມີຢູ່ໃນອາກາສານັນຈາຍະຕະນະຊານນັ້ນ ຯລຯ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສອາກາສານັນຈາຍະຕະນະຊານ"

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສວິນຍານັນຈາຍະຕະນະຊານ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ຯລຯ

ເຮົາກ່າວໄວ້ເຊັ່ນນີ້ວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສອາກິນຈັນຍາຍະຕະນະຊານ" ເພາະອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເພາະອາໄສເຫດນີ້ວ່າ ພິກຂຸໃນທຳວິໄນນີ້ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ທ່ານຍ່ອມພິຈາລະນາເຫັນທຳທັງຫຼາຍ ຄື ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນ ອາກິນຈັນຍາຍະຕະນະຊານນັ້ນ ໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນດັ່ງໂຣກ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄອຍຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນດັ່ງຄົນຝ່າຍອື່ນ ເປັນສິ່ງທີ່ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມທຳຈິດໃຫ້ກັບຈາກທຳເຫຼົ່ານັ້ນ ເມື່ອແລ້ວ ຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ "ພາວະທີ່ສະງົບ ປະນີດ ຄື ຄວາມຣະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບນິບພານ" ທ່ານດຳຣົງຢູ່ໃນອາກິນຈັນຍາຍະຕະນະຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ພິກຂຸທັງຫຼາຍ ນາຍຂະມັງທະນູ ຫຼື ລູກມືຂອງນາຍຂະມັງທະນູ ພະຍາຍາມຍິງລູກສອນໄປທີ່ ຫຸ່ນຫຍ້າ ຫຼື ກອງດິນ ສະໄໝຕໍ່ມາ ເຂົາເປັນຜູ້ຍິງລູກສອນໄດ້ໄກ ຍິງບໍ່ພາດ ແລະທຳລາຍກາຍຂະ ໝາດໃຫຍ່ໄດ້ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ທ່ານ ຍ່ອມພິຈາລະນາເຫັນທຳທັງຫຼາຍ ຄື ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນ ອາກິນຈັນຍາຍະຕະນະຊານນັ້ນໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນດັ່ງໂຣກ ເປັນດັ່ງຫົວຝີ ເປັນດັ່ງລູກສອນ ເປັນສິ່ງຄອຍຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງເປັນດັ່ງຄົນຝ່າຍອື່ນ

ເປັນສິ່ງທີ່ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມທຳຈິດໃຫ້ກັບຈາກທຳເຫຼົ່ານັ້ນ ເມື່ອແລ້ວ ຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ "ພາວະທີ່ສະງົບ ປະນີດ ຄື ຄວາມຣະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ" ທ່ານດຳຣົງຢູ່ໃນອາກິນຈັນຍາຍະຕະນະຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ເພາະສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນວ່າ "ອາສະວະທັງຫຼາຍສິ້ນໄປໄດ້ ເພາະອາໄສອາກິນຈັນຍາຍະຕະນະຊານ"

ພິກຂຸທັງຫຼາຍ ດັ່ງພັນນາມານີ້ ສັນຍາສະມາບັດ ມີຢູ່ເທົ່າໃດ ສັນຍາປະຕິເວດ ກໍມີຢູ່ເທົ່ານັ້ນ ພິກຂຸທັງຫຼາຍ ອາຍະຕະນະ ໒ ປະການນີ້ ຄື ເນວະສັນຍານາສັນຍາຍະຕະນະສະມາບັດ ແລະສັນຍາເວທະຍິຕະນິໂຣດ ຕ່າງກໍອາໄສກັນແລະກັນ ເຮົາກ່າວວ່າ ພິກຂຸຜູ້ໄດ້ຊານ ສະຫຼາດໃນການເຂົ້າສະມາບັດ ສະຫຼາດໃນການອອກຈາກສະມາບັດ ເຂົ້າອອກແລ້ວ ເພິ່ງກ່າວອາຍະຕະນະ ໒ ປະການນີ້ໄວ້ໂດຍຊອບ

**ຊານະສູດທີ ໕ ຈົບ**

# ໖. ອານັນທະສູດ

## ວ່າດ້ວຍພຣະອານົນ

[໓໗] ສະໄໝໜຶ່ງ ທ່ານພຣະອານົນຢູ່ໃນໂຄສິຕາຣາມ ເຂດເມືອງໂກສຳພີ ໃນທີ່ນັ້ນທ່ານພຣະອານົນຮຽກພິກຂຸທັງຫຼາຍມາກ່າວວ່າ "ຜູ້ມີອາຍຸທັງຫຼາຍ" ພິກຂຸເຫຼົ່ານັ້ນຮັບຄຳແລ້ວທ່ານພຣະອານົນຈຶ່ງໄດ້ກ່າວດັ່ງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຊອບ ໄດ້ຕັດສະຮູ້ວິທີບັນລຸຊ່ອງວ່າງໃນທີ່ຄັບແຄບ ເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ (ຄວາມເສົ້າໂສກ) ແລະປະຣິເທວະ (ຄວາມຮ່ຳໄຮ) ເພື່ອດັບທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງນິບພານ

ຄື ຈັກຂຸ (ຕາ) ຊື່ວ່າຈັກເປັນຈັກຂຸນັ້ນເອງ ຄື ຮູບເຫຼົ່ານັ້ນກໍຈັກບໍ່ຮັບຮູ້ ອາຍະຕະນະນັ້ນແລະອາຍະຕະນະນັ້ນກໍຈັກບໍ່ຮັບຮູ້ຮູບເຫຼົ່ານັ້ນ

ໂສຕະ (ຫູ) ຊື່ວ່າຈັກເປັນໂສຕະນັ້ນ ໆ ເອງ ຄື ສຽງເຫຼົ່ານັ້ນ ຈັກບໍ່ຮັບຮູ້ອາຍະຕະນະນັ້ນ ແລະອາຍະຕະນະນັ້ນກໍຈັກບໍ່ຮັບຮູ້ສຽງເຫຼົ່ານັ້ນ

ຄານະ (ດັງ) ຊື່ວ່າ ຈັກເປັນຄານະນັ້ນ ໆ ເອງ ຄື ກິ່ນເຫຼົ່ານັ້ນ ຈັກບໍ່ຮັບຮູ້ອາຍະຕະນະນັ້ນ ແລະອາຍະຕະນະນັ້ນກໍຈັກບໍ່ຮັບຮູ້ກິ່ນເຫຼົ່ານັ້ນ

ຊິວຫາ (ລີ້ນ) ຊື່ວ່າຈັກເປັນຊິວຫານັ້ນ ໆ ເອງ ຄື ຣົດເຫຼົ່ານັ້ນ ຈັກບໍ່ຮັບຮູ້ອາຍະຕະນະນັ້ນ ແລະອາຍະຕະນະນັ້ນ ກໍຈັກບໍ່ຮັບຣົດເຫຼົ່ານັ້ນ

ກາຍ ຊື່ວ່າຈັກເປັນກາຍນັ້ນ ໆ ເອງ ຄື ໂຜດຖັບພະເຫຼົ່ານັ້ນ ຈັກບໍ່ຮັບຮູ້ອາຍະຕະນະນັ້ນ ແລະອາຍະຕະນະນັ້ນກໍຈັກບໍ່ຮັບຮູ້ໂຜດຖັບພະເຫຼົ່ານັ້ນ

ເມື່ອທ່ານພຣະອານົນກ່າວຢ່າງນີ້ແລ້ວ ທ່ານພຣະອຸທາຍີໄດ້ຖາມທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ຄົນຜູ້ມີສັນຍາເທົ່ານັ້ນ ຫຼື ວ່າຄົນບໍ່ມີສັນຍາ ບໍ່ຮັບຮູ້ ອາຍະຕະນະນັ້ນ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ຄົນມີສັນຍານັ້ນ ກໍບໍ່ຮັບຮູ້ອາຍະຕະນະໄດ້ ຫຼື ຄົນບໍ່ມີສັນຍາກໍບໍ່ຮັບຮູ້ອາຍະຕະນະນັ້ນໄດ້"

ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ຄົນຜູ້ມີສັນຍາຢ່າງໃດ ຈຶ່ງບໍ່ຮັບຮູ້ອາຍະຕະນະນັ້ນ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນທຳວິໄນນີ້ບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ພິກຂຸຜູ້ມີສັນຍາຢ່າງນີ້ ຍ່ອມບໍ່ຮັບຮູ້ອາຍະຕະນະນັ້ນ

ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່ ພິກຂຸຜູ້ມີສັນຍາຢ່າງນີ້ແລ ຍ່ອມບໍ່ຮັບຮູ້ອາຍະຕະ ນະນັ້ນ

ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ພິກຂຸຜູ້ມີສັນຍາຢ່າງນີ້ ຍ່ອມບໍ່ຮັບຮູ້ອາຍະຕະນະນັ້ນ

ຜູ້ມີອາຍຸ ຄັ້ງໜຶ່ງ ເຮົາພັກຢູ່ໃນ ອັນຊະນະມິຄະທາຍະວັນ ເມືອງສາເກດ ຄັ້ງນັ້ນ ພິກຂຸນີຊື່ຊະຕິລະພາຄິກາເຂົ້າໄປຫາເຮົາຈົນເຖິງທີ່ຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ເມື່ອແລ້ວ ໄດ້ກ່າວກັບເຮົາດັ່ງນີ້ວ່າ "ທ່ານອານົນຜູ້ຈະເລີນ ສະມາທິໃດອັນກິເລດນ້ອມໄປບໍ່ໄດ້ ນຳໄປບໍ່ໄດ້ ບໍ່ມີການຂົ່ມຫ້າມກິເລດດ້ວຍທຳເຄື່ອງປຸງແຕ່ງ ຊື່ວ່າຕັ້ງໝັ້ນແລ້ວເພາະລຸດພົ້ນ ຊື່ວ່າຍິນດີເພາະຕັ້ງໝັ້ນ ຊື່ວ່າບໍ່ສະດຸ້ງເພາະຍິນດີ ສະມາທິນີ້ພຣະຜູ້ມີພຣະພາກເຈົ້າ ຕັດວ່າ ມີອັນໃດເປັນຜົນ" ເມື່ອຊະຕິລະພາຄິ

ກາພິກຂຸນີກ່າວຢ່າງນີ້ແລ້ວ ເຮົາໄດ້ກ່າວກັບພິກຂຸນີນັ້ນວ່າ "ນາງ ສະມາທິໃດອັນກິເລດນ້ອມໄປບໍ່ໄດ້ ນຳໄປບໍ່ໄດ້ ບໍ່ມີການຂົ່ມຫ້າມກິເລດດ້ວຍທຳເຄື່ອງປຸງແຕ່ງ ຊື່ວ່າຕັ້ງໝັ້ນແລ້ວເພາະລຸດພົ້ນ ຊື່ວ່າຍິນດີເພາະຕັ້ງໝັ້ນ ຊື່ວ່າບໍ່ສະດຸ້ງເພາະຍິນດີ ສະມາທິນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ມີອະຣະຫັດ ເປັນຜົນ" ຜູ້ມີອາຍຸ ພິກຂຸຜູ້ມີສັນຍາຢ່າງນີ້ ຍ່ອມບໍ່ຮັບຮູ້ອາຍະຕະນະນັ້ນ

**ອານັນທະສູດທີ ໖ ຈົບ**

# ໗. ໂລກາຍະຕິກະສູດ

## ວ່າດ້ວຍພາມຜູ້ຊຳນານຄຳພີໂລກາຍັດ[1]

[໓໗] ຄັ້ງນັ້ນ ພາມຜູ້ຊຳນານໃນຄຳພີໂລກາຍັດ ໒ ຄົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ທ່ານພຣະໂຄດົມ ທ່ານປູຣະນະ ກັດສະປະ ເປັນສັບພັນຍູ ເຫັນສິ່ງທັງປວງປະຕິນຍາຍານທັດສະນະຢ່າງເບັດເສັດວ່າ "ເມື່ອເຮົາຍ່າງ ຢືນ ຫຼັບ ແລະຕື່ນຢູ່ ຍານທັດສະນະໄດ້ຜາກົດຕໍ່ເນື່ອງຕະຫຼອດໄປ" ທ່ານກ່າວຢ່າງນີ້ວ່າ "ເຮົາຮູ້ເຫັນໂລກອັນບໍ່ມີທີ່ສຸດດ້ວຍຍານອັນບໍ່ມີທີ່ສຸດ" ທ່ານພຣະໂຄດົມ ແມ່ນແຕ່ທ່ານນິຄົນ ນາດຕະບຸດນີ້ກໍເປັນສັບພັນຍູ ເຫັນສິ່ງທັງປວງ ປະຕິນຍາຍານທັດສະນະຢ່າງເບັດສຳເລັດວ່າ "ເມື່ອເຮົາຍ່າງ ຢືນ ຫຼັບ ແລະຕື່ນຢູ່ ຍານທັດສະນະໄດ້ຜາກົດຕໍ່ເນື່ອງຕະຫຼອດໄປ" ທ່ານກ່າວຢ່າງນີ້ວ່າ "ເຮົາຮູ້ເຫັນໂລກອັນບໍ່ມີທີ່ສຸດດ້ວຍຍານອັນບໍ່ມີທີ່ສຸດ" ທ່ານພຣະໂຄດົມ ທັງ ໒ ຄົນນີ້ຕ່າງເວົ້າ ອວດຄວາມຮູ້ກັນ ຕ່າງເວົ້າຂັດແຍ້ງກັນ ໃຜເວົ້າຈິງ ໃຜເວົ້າຕົວະ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຢ່າເລີຍ ພາມ ເລື້ອງທີ່ ຄົນທັງ ໒ ຄົນນີ້ຕ່າງເວົ້າອວດຄວາມຮູ້ກັນ ຕ່າງເວົ້າຂັດແຍ້ງກັນ ໃຜເວົ້າຈິງ ໃຜເວົ້າຕົວະນີ້ຈົ່ງພັກໄວ້ກ່ອນ ເຮົາຈັກສະແດງທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພາມ ເຫຼົ່ານັ້ນທູນຮັບສະໜອງພຣະພຸດທະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ວ່າ

ພາມ ປຽບເໝືອນບຸຣຸດ ໔ ຄົນ ຢືນຢູ່ ໔ ທິດ ຕ່າງມີຕີນແລ່ນໄດ້ໄວ ແລະກ້າວໄດ້ໄວ ພວກເຂົາຕ່າງມີຕີນແລ່ນໄດ້ໄວເຊັ່ນນີ້ ປຽບເໝືອນນາຍຂະມັງທະນູຖືທະນູໄວ້ໝັ້ນ ສຶກສາມາເຈນຈົບ ສີມືຊ່ຳຊອງ ຜ່ານການປະລອງສີມືມາແລ້ວ ເພິ່ງໃຊ້ລູກທະນູຊະນິດເບົາ ໆ ຍິງເງົາຕານດ້ານຂວາງໃຫ້ຜ່ານໄປໄດ້ໂດຍບໍ່ຍາກ ແລະຍິງໄດ້ວ່ອງໄວກວ່າການກ້າວຕີນດັ່ງທີ່ກ່າວມາ ປຽບເ

ໝືອນຈາກມະຫາສະມຸດໃນທິດຕາເວັນອອກເຖິງມະຫາສະມຸດໃນທິດຕາເວັນຕົກ ຖ້າບຸຣຸດຜູ້ຢືນຢູ່ທາງທິດຕາເວັນອອກ ເພິ່ງກ່າວຢ່າງນີ້ວ່າ "ເຮົາຈະຍ່າງໄປເຖິງທີ່ສຸດໂລກ" ເຂົາງົດການກິນ ດື່ມ ຫຍໍ້າ ແລະຊີມ ງົດກາຍຖ່າຍອຸດຈາຣະແລະປັດສາວະ ງົດການຫຼັບແລະພັກຜ່ອນ ເຂົາມີອາຍຸ ໑໐໐ ປີ ມີຊີວິດຢູ່ ໑໐໐ ປີ ຍ່າງໄປໄດ້ຕະຫຼອດ ໑໐໐ ປີ ແຕ່ຍັງບໍ່ສາມາດໄປເຖິງທີ່ສຸດໂລກໄດ້ເລີຍ ຈະເພິ່ງຕາຍສາກ່ອນໃນລະຫວ່າງ ຖ້າບຸຣຸດຜູ້ຢືນຢູ່ທາງທິດຕາເວັນຕົກ ຯລຯ ທາງທິດເໜືອ ຯລຯ ຖ້າບຸຣຸດຜູ້ຢືນຢູ່ທາງທິດໃຕ້ເພິ່ງກ່າວຢ່າງນີ້ວ່າ "ເຮົາຈະຍ່າງໄປເຖິງທີ່ສຸດຂອງໂລກ" ເຂົາງົດການກິນ ດື່ມ ຫຍໍ້າ ແລະຊີມ ງົດການຖ່າຍອຸດຈາຣະແລະປັດສາວະ ງົດການຫຼັບແລະພັກຜ່ອນ ເຂົາມີອາຍຸ ໑໐໐ ປີ ມີຊີວິດຢູ່ ໑໐໐ ປີ ຍ່າງໄປໄດ້ຕະຫຼອດ ໑໐໐ ປີ ຍັງໄປບໍ່ເຖິງທີ່ສຸດໂລກໄດ້ເລີຍ ກໍຈະເພິ່ງຕາຍສາກ່ອນໃນລະຫວ່າງ ຂໍ້ນັ້ນເພາະເຫດໃດ ເພາະເຮົາຈະບໍ່ກ່າວວ່າ "ບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງທີ່ສຸດໂລກໄດ້ດ້ວຍການແລ່ນໄປເຊັ່ນນີ້" ແຕ່ເຮົາກໍບໍ່ກ່າວວ່າ "ບຸກຄົນຍັງບໍ່ເຖິງທີ່ສຸດໂລກຈະເຮັດທີ່ສຸດທຸກໄດ້"

ພາມ ກາມມະຄຸນ ໕ ປະການນີ້ ຮຽກວ່າ "ໂລກ" ໃນອະຣິຍະວິໄນ

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ

໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ

໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພາມ ກາມມະຄຸນ ໕ ປະການນີ້ ຮຽກວ່າ "ໂລກ" ໃນອະຣິຍະວິໄນ

ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ເຮົາຮຽກວ່າ ພິກຂຸນີ້ເຖິງທີ່ສຸດໂລກແລ້ວ ຢູ່ໃນທີ່ສຸດໂລກ ຄົນພວກອື່ນກ່າວເຖິງພິກຂຸນັ້ນຢ່າງນີ້ວ່າ "ແມ່ນພິກຂຸນີ້ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້" ແມ່ນເຮົາເອງກໍກ່າວຢ່າງນີ້ວ່າ "ແມ່ນພິກຂຸນີ້ ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້"

ພິກຂຸບັນລຸທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ຯລຯ ເຮົາກໍຮຽກວ່າ ພິກຂຸນີ້ເຖິງທີ່ສຸດໂລກແລ້ວ ຢູ່ໃນທີ່ສຸດໂລກ ຄົນພວກອື່ນກ່າວເຖິງພິກຂຸນັ້ນຢ່າງນີ້ວ່າ "ແມ່ນພິກຂຸນີ້ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້" ແມ່ນເຮົາເອງກໍກ່າວຢ່າງນີ້ວ່າ "ແມ່ນພິກຂຸນີ້ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້"

ພິກຂຸບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ເຮົາກໍຮຽກວ່າ ພິກຂຸນີ້ເຖິງທີ່ສຸດໂລກແລ້ວ ຢູ່ໃນທີ່ສຸດໂລກ ຄົນພວກອື່ນກ່າວເຖິງພິກຂຸນັ້ນຢ່າງນີ້ວ່າ "ແມ່ນພິກຂຸນີ້ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້" ແມ່ນເຮົາກໍກ່າວຢ່າງນີ້ວ່າ "ແມ່ນພິກຂຸນີ້ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້"

ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່ ຯລຯ ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ຯລຯ ພິກຂຸລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ເຮົາກໍຮຽກວ່າ ພິກຂຸນີ້ເຖິງທີ່ສຸດໂລກແລ້ວ ຢູ່ໃນທີ່ສຸດໂລກ ຄົນພວກອື່ນກ່າວເຖິງພິກຂຸນັ້ນຢ່າງນີ້ວ່າ "ແມ່ນພິກຂຸນີ້ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້" ແມ່ນເຮົາກໍກ່າວຢ່າງນີ້ວ່າ "ແມ່ນພິກຂຸນີ້ກໍກ່ຽວຂ້ອງກັບໂລກ ສະລັດຕົນອອກຈາກໂລກບໍ່ໄດ້"

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະ ນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ເຮົາຮຽກວ່າ ພິກຂຸນີ້ເຖິງທີ່ສຸດໂລກແລ້ວ ຢູ່ໃນທີ່ສຸດໂລກ ຂ້າມພົ້ນຕັນຫາເຄື່ອງຂ້ອງໃນໂລກໄດ້

**ໂລກາຍະຕິກະສູດທີ ໗ ຈົບ**

# ໘. ເທວາສຸຣະສັງຄາມະສູດ

## ວ່າດ້ວຍສົງຄາມລະຫວ່າງເທວະດາກັບອະສູນ

[໒໙] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທວະດາກັບອະສູນໄດ້ປະຈັນໜ້າກັນແລ້ວ ໃນສົງຄາມຄັ້ງນັ້ນ ພວກອະສູນຊະນະ ພວກເທວະດາພ່າຍແພ້ ພວກເທວະດາທີ່ພ່າຍແພ້ໄດ້ພາກັນຫຼົບໜີມຸ້ງໜ້າໄປທາງທິດເໜືອ ພວກອະສູນໄດ້ໄລ່ຕາມໄປ ຄັ້ງນັ້ນ ພວກເທວະດາໄດ້ມີຄວາມຄິດດັ່ງນີ້ວ່າ "ພວກອະສູນກຳລັງໄລ່ຕາມມາ ທາງທີ່ດີເຮົາຄວນກັບ ພວກອະ

ສູນເປັນຄັ້ງທີ ໔" ພວກເທວະດາໄດ້ຮົບກັບພວກອະສູນເປັນຄັ້ງທີ ໔ ແລ້ວ ແມ່ນຄັ້ງທີ ໔ ພວກອະສູນກໍຊະນະອີກ ພວກເທວະດາພ່າຍແພ້ ແລະພວກເທວະດາທີ່ພ່າຍແພ້ໄດ້ພາກັນຫຼົບໜີມຸ້ງໜ້າໄປທາງທິດເໜືອ ພວກອະສູນໄດ້ໄລ່ຕາມໄປ

ພິກຂຸທັງຫຼາຍ ຄັ້ງນັ້ນແລ ພວກເທວະດາໄດ້ມີຄວາມຄິດດັ່ງນີ້ວ່າ "ພວກອະສູນກຳລັງໄລ່ຕາມມາ ທາງທີ່ດີ ເຮົາຄວນກັບພວກອະສູນເປັນຄັ້ງທີ ໕" ພວກເທວະດາໄດ້ຮົບກັບພວກອະສູນເປັນຄັ້ງທີ ໕ ແລ້ວ ແມ່ນຄັ້ງທີ ໕ ພວກອະສູນກໍຊະນະອີກ ພວກເທວະດາພ່າຍແພ້ ພວກເທວະດາທີ່ພ່າຍແພ້ຕ່າງກໍຢ້ານພາກັນເຂົ້າໄປສູ່ເທບບຸຣີ ພວກເທວະດາທີ່ຢູ່ໃນເທບບຸຣີໄດ້ມີຄວາມຄິດດັ່ງນີ້ວ່າ "ບັດນີ້ ພວກເຮົາໄດ້ເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າ ຄວາມຢ້ານຢູ່ ພວກອະສູນຈະເຮັດຫຍັງເຮົາບໍ່ໄດ້" ແມ່ນພວກອະສູນກໍໄດ້ມີຄວາມຄິດດັ່ງນີ້ວ່າ "ບັດນີ້ ພວກເທວະດາໄດ້ມີເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າ ຄວາມຢ້ານຢູ່ ພວກເຮົາຈະເຮັດຫຍັງພວກເທວະດາບໍ່ໄດ້"

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທວະດາກັບອະສູນໄດ້ ປະຈັນໜ້າກັນແລ້ວ ໃນສົງຄາມຄັ້ງນັ້ນ ພວກເທວະດາຊະນະ ພວກອະສູນພ່າຍແພ້ ພວກອະສູນທີ່ພ່າຍແພ້ໄດ້ພາກັນຫຼົບໜີມຸ້ງໜ້າໄປທາງທິດໃຕ້ ພວກເທວະດາໄດ້ໄລ່ຕາມໄປ ຄັ້ງນັ້ນແລ ພວກອະສູນໄດ້ມີຄວາມຄິດດັ່ງນີ້ວ່າ "ພວກເທວະດາກຳລັງໄລ່ຕາມມາ ທາງທີ່ດີ ເຮົາຄວນກັບພວກເທວະດາເປັນຄັ້ງທີ ໔" ພວກອະສູນໄດ້ຮົບກັບພວກເທວະດາເປັນຄັ້ງທີ ໔ ແລ້ວ ແມ່ນຄັ້ງທີ ໔ ເທວະດາກໍ ຊະນະອີກ ພວກອະສູນພ່າຍແພ້ ພວກອະສູນທີ່ພ່າຍແພ້ໄດ້ພາກັນຫຼົບໜີມຸ້ງໜ້າໄປທາງທິດໃຕ້ ພວກເທວະດາໄດ້ໄລ່ຕາມໄປ

ພິກຂຸທັງຫຼາຍ ຄັ້ງນັ້ນແລ ພວກອະສູນໄດ້ມີຄວາມຄິດດັ່ງນີ້ວ່າ "ພວກເທວະດາກຳລັງໄລ່ຕາມມາ ທາງທີ່ດີ ເຮົາຄວນກັບພວກເທວະດາເປັນຄັ້ງທີ ໕" ພວກອະສູນໄດ້ຮົບກັບພວກເທວະດາ ເປັນຄັ້ງທີ ໕ ແລ້ວ ແມ່ນຄັ້ງທີ ໕ ພວກເທວະດາກໍຊະນະອີກ ພວກອະສູນພ່າຍແພ້ ພວກອະສູນທີ່ພ່າຍແພ້ຕ່າງກໍຢ້ານພາກັນເຂົ້າໄປສູ່ອະສູນບຸຣີ ກໍພວກອະສູນທີ່ຢູ່ໃນອະສູນບຸຣີໄດ້ມີຄວາມຄິດດັ່ງນີ້ວ່າ "ບັດນີ້ ເຮົາໄດ້ເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າຢ້ານຢູ່ ພວກເທວະດາເຮັດຫຍັງເຮົາບໍ່ໄດ້" ແມ່ນພວກເທວະດາກໍໄດ້ມີຄວາມຄິດດັ່ງນີ້ວ່າ "ບັດນີ້ ພວກອະສູນໄດ້ເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າຢ້ານຢູ່ ພວກເຮົາຈະເຮັດຫຍັງພວກອະສູນບໍ່ໄດ້"

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ສະໄໝໃດ ພິກຂຸສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ສະໄໝນັ້ນ ພິກຂຸມີຄວາມຄິດຢ່າງນີ້ວ່າ "ບັດນີ້ ເຮົາໄດ້ເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າຢ້ານຢູ່ ມານຈະເຮັດຫຍັງເຮົາບໍ່ໄດ້" ແມ່ນມານຜູ້ມີບາບກໍໄດ້ມີຄວາມຄິດຢ່າງນີ້ວ່າ "ບັດນີ້ ພິກຂຸໄດ້ເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າຢ້ານຢູ່ ເຮົາຈະເຮັດຫຍັງພິກຂຸບໍ່ໄດ້"

ພິກຂຸທັງຫຼາຍ ສະໄໝໃດ ພິກຂຸບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ສະໄໝນັ້ນ ພິກຂຸໄດ້ມີຄວາມຄິດຢ່າງນີ້ວ່າ "ບັດນີ້ ເຮົາໄດ້ເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າຢ້ານຢູ່ ມານຈະເຮັດຫຍັງເຮົາບໍ່ໄດ້" ແມ່ນມານຜູ້ມີບາບກໍໄດ້ມີຄວາມຄິດຢ່າງນີ້ວ່າ "ບັດນີ້ ພິກຂຸໄດ້ເຄື່ອງປ້ອງກັນຕົນຈາກຄວາມບໍ່ກ້າຢ້ານຢູ່ ເຮົາຈະເຮັດຫຍັງພິກຂຸບໍ່ໄດ້"

ພິກຂຸທັງຫຼາຍ ສະໄໝໃດ ພິກຂຸບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ພິກຂຸນີ້ເຮົາຮຽກວ່າ ເຮັດໃຫ້ມານສິ້ນສຸດ ຂາດຮ່ອງຮອຍ ປິດຕາມານຜູ້ມີບາບຈົນແນມບໍ່ເຫັນ ຂ້າມພົ້ນຕັນຫາເຄື່ອງຂ້ອງໃນໂລກໄດ້ແລ້ວ

ພິກຂຸທັງຫຼາຍ ສະໄໝໃດ ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່ ຯລຯ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ຯລຯ ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ຯລຯ ລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ເຮົາຮຽກວ່າ ພິກຂຸນີ້ເຮັດໃຫ້ມານສິ້ນສຸດ ຂາດຮ່ອງຮອຍ ປິດຕາມານຜູ້ມີບາບຈົນເບິ່ງບໍ່ເຫັນ ຂ້າມພົ້ນຕັນຫາເຄື່ອງຂ້ອງໃນໂລກໄດ້ແລ້ວ

**ເທວາສຸຣະສັງຄາມະສູດທີ ໗ ຈົບ**

## ໘. ນາຄະສູດ

### ວ່າດ້ວຍການຫາຄວາມສະງົບຂອງພະຍາຊ້າງ

[໔໐] ພິກຂຸທັງຫຼາຍ ສະໄໝໃດ ເມື່ອພະຍາຊ້າງທີ່ຢູ່ໃນປ່າຂວນຂວາຍທ່ຽວຫາກິນຢູ່ ເຫຼົ່າຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍ ຍ່າງໄປຂ້າງໜ້າ ໆ ທຳລາຍ ຍອດຫຍ້າ ພະຍາຊ້າງທີ່ຢູ່ໃນປ່າຍ່ອມອຶດອັດ ຣະອາຣັງກຽດ ເພາະການກະທຳນັ້ນ ພິກຂຸທັງຫຼາຍ ສະໄໝໃດ ເມື່ອພະຍາຊ້າງທີ່ຢູ່ໃນປ່າ ຂວນຂວາຍທ່ຽວຫາກິນຢູ່ ເຫຼົ່າຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍຕ່າງກໍພາກັນກິນງ່າໄມ້ທີ່ຫັກລົງມາ ພະຍາຊ້າງທີ່ຢູ່ໃນປ່າຍ່ອມອຶດອັດ ຣະອາ ຣັງກຽດ ເພາະການກະທຳນັ້ນ ພິກຂຸທັງຫຼາຍ ສະໄໝໃດ ເມື່ອພະຍາຊ້າງທີ່ຢູ່ໃນປ່າລົງສູ່ທ່ານ້ຳ ເຫຼົ່າຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍຕ່າງກໍຍ່າງໄປຂ້າງໜ້າໆ

ໃຊ້ງວງກວນນໍ້າໃຫ້ຂຸ່ນ ພະຍາຊ້າງທີ່ຢູ່ໃນປ່າ ຍ່ອມ ອຶດອັດ ຣະອາ ຣັງກຽດ ເພາະການກະທຳນັ້ນ ພິກຂຸທັງຫຼາຍ ສະໄໝໃດ ເມື່ອພະຍາຊ້າງ ທີ່ຢູ່ໃນປ່າ ຂຶ້ນຈາກທ່ານໍ້າແລ້ວ ຊ້າງພັງຍ່ອມຍ່າງສຽດສີກາຍໄປ ພະຍາຊ້າງທີ່ຢູ່ໃນປ່າ ຍ່ອມອຶດອັດ ຣະອາ ຣັງກຽດ ເພາະການກະທຳນັ້ນ

ພິກຂຸທັງຫຼາຍ ສະໄໝນັ້ນ ພະຍາຊ້າງທີ່ຢູ່ໃນປ່າໄດ້ມີຄວາມຄິດຢ່າງນີ້ວ່າ "ບັດນີ້ ເຮົາຢູ່ກັນພຸກພ່ານໄປດ້ວຍຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍ ກິນຫຍ້າ ຍອດດ້ວນ ຖືກຊ້າງເຫຼົ່ານັ້ນ ແຍ່ງກິນງ່າໄມ້ທີ່ເຮົາຫັກລົງມາ ດື່ມນໍ້າທີ່ຂຸ່ນ ແລະເມື່ອເຮົາ ຂຶ້ນຈາກທ່ານໍ້າ ຊ້າງພັງກໍຍ່າງສຽດສີກາຍໄປ ທາງທີ່ດີ ເຮົາຄວນຫຼີກອອກຈາກຝູງໄປຢູ່ ຜູ້ດຽວ" ຕໍ່ມາ ພະຍາຊ້າງນັ້ນໄດ້ຫຼີກອອກຈາກຝູງໄປຢູ່ຜູ້ດຽວ ກິນຫຍ້າຍອດບໍ່ດ້ວນ ບໍ່ຖືກຊ້າງເຫຼົ່ານັ້ນແຍ່ງກິນງ່າໄມ້ທີ່ຕົນຫັກລົງມາ ດື່ມນໍ້າທີ່ບໍ່ຂຸ່ນ ແລະເມື່ອພະຍາຊ້າງນັ້ນ ຂຶ້ນຈາກທ່ານໍ້າກໍບໍ່ຖືກຊ້າງພັງຍ່າງສຽດສີກາຍໄປ

ພິກຂຸທັງຫຼາຍ ສະໄໝນັ້ນ ພະຍາຊ້າງທີ່ຢູ່ໃນປ່າມີຄວາມຄິດຢ່າງນີ້ວ່າ "ເມື່ອກ່ອນ ເຮົາຢູ່ພຸກພ່ານໄປດ້ວຍຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍ ກິນຫຍ້າ ຍອດດ້ວນ ຖືກຊ້າງເຫຼົ່ານັ້ນແຍ່ງກິນງ່າໄມ້ທີ່ເຮົາຫັກລົງມາ ດື່ມນໍ້າທີ່ຂຸ່ນ ແລະເມື່ອເຮົາຂຶ້ນຈາກທ່ານໍ້າ ກໍຖືກຊ້າງພັງຍ່າງສຽດສີກາຍໄປ ບັດນີ້ ເຮົານັ້ນໄດ້ຫຼີກອອກຈາກຝູງມາຢູ່ຜູ້ດຽວ ກິນຫຍ້າຍອດບໍ່ດ້ວນ ບໍ່ຖືກຊ້າງເຫຼົ່ານັ້ນແຍ່ງກິນງ່າໄມ້ທີ່ເຮົາຫັກລົງມາ ດື່ມນໍ້າທີ່ບໍ່ຂຸ່ນ ແລະເມື່ອເຮົາຂຶ້ນຈາກທ່ານໍ້າກໍບໍ່ຖືກຊ້າງພັງຍ່າງສຽດສີກາຍໄປ" ພະຍາຊ້າງນັ້ນໃຊ້ງວງຫັກງ່າໄມ້ ໃຊ້ງ່າໄມ້ປັດກາຍ ມີໃຈເບີກບານ ບຳບັດໂຮກຄັນ

ພິກຂຸທັງຫຼາຍ ໃນທຳນອງດຽວກັນ ສະໄໝໃດ ພິກຂຸຢູ່ພຸກພ່ານໄປດ້ວຍພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ແລະພວກສາວົກຂອງເດຍຣະຖີ ສະໄໝນັ້ນ ພິກຂຸມີຄວາມຄິດຢ່າງນີ້ວ່າ "ບັດນີ້ ເຮົາຢູ່ພຸກພ່ານ ໄປດ້ວຍພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ແລະພວກສາວົກຂອງເດຍຣະຖີ ທາງທີ່ດີ ເຮົາຄວນຫຼີກອອກຈາກໝູ່ໄປຢູ່ຜູ້ດຽວ" ທ່ານໃຊ້ສອຍເສນາສະນະອັນສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຮ່ອມພູ ຖໍ້າ ປ່າຊ້າ ປ່າທຶບ ທີ່ກາງແຈ້ງ ກອງເຟືອງ" ທ່ານໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ຫຼື ໄປສູ່ເຮືອນວ່າງກໍດີ ຍ່ອມນັ່ງຄູ້ບັນລັງ ຕັ້ງກາຍກົງດຳຣົງສະຕິໄວ້ສະເພາະໜ້າ

ທ່ານລະອະພິດຊາໃນໂລກໄດ້ ມີໃຈປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດໄດ້ແລ້ວ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະ ປາສະຈາກຖີນະມິດທະ ມີອາໂລກະສັນຍາ (ກຳນົດໝາຍແສງສະຫວ່າງ) ມີສະຕິສຳປະຊັນຍະຢູ່ ຊຳຣະຈິດ

ໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບ ພາຍໃນຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີ ວິຈິກິດສາໃນກຸສົນທໍາທັງຫຼາຍຢູ່ ຊໍາຣະຈິດໃຫ້ບໍລິສຸດຈາກວິຈິກິດສາ ທ່ານລະນິວອນ ໕ ປະການນີ້ທີ່ເປັນເຄື່ອງເສົ້າໝອງໃຈ ທອນກໍາລັງປັນຍາ ສະຫງັດຈາກກາມ ແລະອະກຸສົນທໍາ ທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ທ່ານມີໃຈ ເບີກບານ ບໍາບັດກິເລດດັ່ງໂຮກຄັນໄດ້ ບັນລຸທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະ ຊານ ຯລຯ ທ່ານມີໃຈເບີກບານບໍາບັດກິເລດດັ່ງໂຮກຄັນໄດ້

ພິກຂຸບັນລຸອາກາສານັນຈາຍະຕະນະຊານ ໂດຍກໍານົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກໍານົດນານັດຕະສັນຍາ ທ່ານມີໃຈເບີກບານ ບໍາບັດ ກິເລດດັ່ງ ໂຮກຄັນໄດ້ ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນ ຍານັນຈາຍະຕະນະຊານ ໂດຍກໍານົດວ່າ "ວິນຍານຫາທີ່ສຸດບໍ່ໄດ້" ຢູ່ ຯລຯ ພິກຂຸລ່ວງວິນຍາ ນັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກໍານົດ ວ່າ "ບໍ່ມີອັນໃດ" ຢູ່ ຯລຯ ພິກຂຸລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະ ສັນຍານາສັນຍາຍະຕະນະຊານຢູ່ ຯລຯ ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍ ປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາທ່ານເປັນຜູ້ມີໃຈເບີກບານບໍາບັດກິເລດດັ່ງໂຮກຄັນໄດ້

**ນາຄະສູດທີ ໗ ຈົບ**

# ໑໐. ຕະປຸດສະສູດ

## ວ່າດ້ວຍຕະປຸດສະຄະຫະບໍດີ

[໔໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນິຄົມຂອງຊາວມັນລະ ຊື່ວ່າອຸຣຸເວ ລະກັບປະ ແຄວັນມັນລະ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣາວາສົກ ຊົງຖື ບາດ ແລະຈີວອນສະເດັດເຂົ້າໄປສູ່ນິຄົມຊື່ ອຸຣຸເວລະກັບປະເພື່ອບິນທະບາດ ເມື່ອແລ້ວ ສະເດັດ ກັບຈາກບິນທະບາດ ຫຼັງຈາກສະເຫວີຍພຣະກະຍາຫານສໍາເລັດແລ້ວ ຮັບສັ່ງຮຽກທ່ານພຣະ ອານົນມາຕັດວ່າ "ອານົນ ທ່ານຈົ່ງຖ້າຢູ່ທີ່ນີ້ກ່ອນ ຈົນກວ່າເຮົາຈະໄປເຖິງປ່າມະຫາວັນ ເພື່ອພັກ ຜ່ອນກາງເວັນ" ທ່ານພຣະອານົນທູນຮັບສະໜອງພຣະດໍາຣັດແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດດໍາເນີນໄປເຖິງປ່າມະຫາວັນແລ້ວ ຈຶ່ງປະທັບນັ່ງ ພັກຜ່ອນກາງເວັນທີ່ເຫງົ້າໄມ້ແຫ່ງໜຶ່ງ

ລຳດັບນັ້ນ ຕະປຸດສະຄະຫະບໍດີເຂົ້າໄປຫາທ່ານພຣະອານົນເຖິງທີ່ຢູ່ ອະພິວາດທ່ານພຣະອານົນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານພຣະອານົນຜູ້ຈະເລີນ ພວກຂ້ານ້ອຍເປັນຄະລິຫັດ ເປັນກາມໂພຄີ ມີກາມເປັນທີ່ຍິນດີ ຣື່ນຣົມໃນກາມ ບັນເທີງໃນກາມ ເນກຂຳມະຈຶ່ງຜາກົດເໝືອນເຫວແກ່ພວກຂ້ານ້ອຍຜູ້ເປັນຄະລິຫັດ ເປັນກາມໂພຄີ ມີກາມເປັນທີ່ຍິນດີ ຣື່ນຣົມໃນກາມ ບັນເທີງໃນກາມ ທ່ານພຣະອານົນຜູ້ຈະເລີນ ຂ້ານ້ອຍໄດ້ຮູ້ມາດັ່ງນີ້ວ່າ "ຈິດຂອງພິກຂຸໜຸ່ມ ໆ ໃນພຣະທຳວິໄນນີ້ ຍ່ອມແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນເນກຂຳມະລຸດພົ້ນ ເມື່ອພິຈາລະນາ ເຫັນວ່າ "ເນກຂຳມະນັ້ນສະງົບ" ທ່ານຜູ້ຈະເລີນ ພິກຂຸໃນພຣະທຳວິໄນນີ້ ມີສ່ວນຕ່າງກັບຄົນສ່ວນຫຼາຍ ຄື ເນກຂຳມະບໍ?"

ທ່ານພຣະອານົນກ່າວວ່າ "ຄະຫະບໍດີ ມີເຫດແຫ່ງຖ້ອຍຄຳທີ່ຈະເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ ມາເທີ້ນ ຄະຫະບໍດີ ເຮົາຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອແລ້ວຈັກຂາບທູນ ເນື້ອຄວາມນີ້ແດ່ ພຣະຜູ້ມີພຣະພາກເຈົ້າ ຈັກຊົງຈຳເນື້ອຄວາມຕາມທີ່ ພຣະຜູ້ມີພຣະພາກເຈົ້າ ຈະຊົງຕອບແກ່ພວກເຮົາ" ຕະປຸດສະຄະຫະບໍດີ ຮັບຄຳທ່ານພຣະອານົນແລ້ວ

ລຳດັບນັ້ນ ທ່ານພຣະອານົນ ພ້ອມດ້ວຍຕະປຸດສະຄະຫະບໍດີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຕະປຸດສະຄະຫະບໍດີ ນີ້ໄດ້ກ່າວຢ່າງນີ້ວ່າ "ທ່ານພຣະອານົນຜູ້ຈະເລີນ ພວກຂ້ານ້ອຍຜູ້ເປັນຄະລິຫັດເປັນກາມໂພຄີ ມີກາມເປັນທີ່ ຍິນດີ ຣື່ນຣົມໃນກາມ ບັນເທີງໃນກາມ ເນກຂຳມະຈຶ່ງຜາກົດເໝືອນເຫວແກ່ພວກຂ້ານ້ອຍຜູ້ເປັນຄະລິຫັດ ເປັນກາມໂພຄີ ມີກາມ ເປັນທີ່ຍິນດີ ຣື່ນຣົມໃນກາມ ບັນເທີງໃນກາມ ທ່ານພຣະອານົນຜູ້ຈະເລີນ ຂ້ານ້ອຍໄດ້ຮູ້ມາດັ່ງນີ້ວ່າ "ຈິດຂອງພິກຂຸໜຸ່ມ ໆ ໃນພຣະທຳວິໄນນີ້ ຍ່ອມແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນເນກຂຳມະ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນກຂຳມະນັ້ນສະງົບ" ທ່ານຜູ້ຈະເລີນ ພິກຂຸໃນພຣະທຳວິໄນນີ້ ມີສ່ວນຕ່າງກັບຄົນສ່ວນຫຼາຍ ຄື ເນກຂຳມະບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ນີ້ເປັນຢ່າງນັ້ນ ອານົນ ຂໍ້ນີ້ເປັນຢ່າງນັ້ນ ອານົນ ແມ່ນເຮົາເອງກ່ອນຈະຕັດສະຮູ້ ຍັງບໍ່ໄດ້ຕັດສະຮູ້ ຍັງເປັນໂພທິສັດຢູ່ນັ້ນ ໄດ້ມີຄວາມດຳຣິດັ່ງນີ້ວ່າ "ເນກຂຳມະເປັນຄວາມດີ ຄວາມສະງົບເປັນຄວາມດີ" ຈິດຂອງເຮົານັ້ນ ບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນເນກຂຳມະ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນກຂຳມະນັ້ນສະງົບ" ເຮົານັ້ນຈຶ່ງມີຄວາມດຳຣິດັ່ງນີ້ວ່າ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນເນກຂຳມະ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນກຂຳມະນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ໂທດໃນກາມທັງຫຼາຍ ເຮົາຍັງບໍ່ໄດ້ເຫັນ ແລະບໍ່ໄດ້ເຮັດໃຫ້ຫຼາຍ ແລະອານິສົງ ໃນເນກຂຳມະເຮົາຍັງບໍ່ໄດ້ບັນລຸແລະບໍ່ໄດ້ເສບ ເພາະເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນເນກຂຳມະ ບໍ່ລຸດພົ້ນ" ເມື່ອພິຈາລະນາເຫັນວ່າ "ເນກຂຳມະ ນັ້ນສະງົບ"

ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ຖ້າເຮົາເຫັນໂທດໃນກາມທັງຫຼາຍແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນເນກຂຳມະແລ້ວ ເສບອານິສົງນັ້ນ ເປັນໄປໄດ້ທີ່ ຈິດຂອງເຮົາຈະເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນເນກຂຳມະລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນກຂຳມະນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນກາມທັງຫຼາຍແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນເນກຂຳມະແລ້ວເສບອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນເນກຂຳມະ ລຸດພົ້ນ ເມື່ອພິຈາລະນາ ເຫັນວ່າ "ເນກຂຳມະນັ້ນສະງົບ" ອານົນ ເຮົາສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍກາມຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກກໍພຽງເພື່ອຄວາມກົດດັນ ສັນໃດ ສັນຍາແລະມະນະສິການທີ່ປະກອບດ້ວຍກາມຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນບັນລຸທຸຕິຍະຊານ ຯລຯ ຈິດຂອງເຮົານັ້ນບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນທຸຕິຍະຊານທີ່ບໍ່ມີວິຕົກ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ທຸຕິຍະຊານນັ້ນສະງົບ" ເຮົານັ້ນຈຶ່ງມີຄວາມດຳຣິດັ່ງນີ້ວ່າ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນທຸຕິຍະຊານທີ່ບໍ່ມີວິຕົກ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ທຸຕິຍະຊານນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ໂທດໃນວິຕົກເຮົາຍັງບໍ່ໄດ້ເຫັນແລະບໍ່ໄດ້ເຮັດໃຫ້ຫຼາຍ ອານິສົງໃນທຸຕິຍະຊານທີ່ບໍ່ມີວິຕົກເຮົາຍັງບໍ່ໄດ້ບັນລຸແລະບໍ່ໄດ້ເສບ ເພາະເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນ ທຸຕິຍະຊານທີ່ບໍ່ມີວິຕົກ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ທຸຕິຍະຊານນັ້ນສະງົບ" ເຮົາຈຶ່ງມີຄວາມຄິດດັ່ງນີ້ວ່າ ຖ້າເຮົາເຫັນໂທດໃນວິຕົກແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນທຸຕິຍະຊານທີ່ບໍ່ມີວິຕົກແລ້ວເສບອານິສົງນັ້ນ ເປັນໄປໄດ້ທີ່ຈິດຂອງເຮົາຈະເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ໃນທຸຕິຍະຊານທີ່ບໍ່ມີວິຕົກ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ທຸຕິຍະຊານນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນວິຕົກແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນທຸຕິຍະຊານທີ່ບໍ່ມີວິຕົກແລ້ວເສບອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນທຸຕິຍະຊານທີ່ບໍ່ມີວິຕົກ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ທຸຕິຍະຊານນັ້ນສະງົບ" ອານົນ ເຮົາບັນລຸທຸຕິຍະຊານ ຯລຯ ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍວິຕົກຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກ ພຽງເພື່ອຄວາມກົດດັນ ສັນໃດ ສັນຍາມະນະສິການທີ່ປະກອບດ້ວຍວິຕົກຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ເພາະປີຕິຈາງຄາຍອອກ ບັນລຸຕະຕິຍະຊານທີ່ພຣະອະຣິຍະ ທັງຫຼາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມ

ໃສ ບໍ່ຕັ້ງໝັ້ນໃນຕະຕິຍະຊານທີ່ບໍ່ມີປິຕິ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຕະຕິຍະຊານນັ້ນສະ ງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ອັນໃດນໍ? ເປັນເຫດເປັນປັດໄຈ ໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນຕະຕິຍະຊານທີ່ບໍ່ມີປິຕິ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຕະຕິຍະ ຊານນັ້ນສະງົບ" ເຮົາມີຄວາມດຳຣິດັ່ງນີ້ວ່າ ໂທດໃນປິຕິເຮົາຍັງບໍ່ໄດ້ເຫັນ ແລະບໍ່ໄດ້ເຮັດໃຫ້ຫຼາຍ ອານິສົງໃນຕະຕິຍະຊານທີ່ບໍ່ມີປິຕິ "ເຮົາຍັງບໍ່ໄດ້ບັນລຸ ແລະບໍ່ໄດ້ເສບ ເພາະເຫດນັ້ນ ຈິດຂອງ ເຮົາ ຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນຕະຕິຍະຊານທີ່ບໍ່ມີປິຕິ ບໍ່ລຸດພົ້ນ ເມື່ອພິຈາລະນາ ເຫັນວ່າ "ຕະຕິຍະຊານນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ຖ້າເຮົາເຫັນໂທດໃນປິຕິແລ້ວ ເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນຕະຕິຍະຊານທີ່ບໍ່ມີປິຕິ ແລ້ວເສບອານິສົງນັ້ນ ເປັນໄປໄດ້ ທີ່ ຈິດຂອງເຮົາຈະເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນຕະຕິຍະຊານທີ່ບໍ່ມີປິຕິ ລຸດພົ້ນ ເມື່ອ ພິຈາລະນາ ເຫັນວ່າ "ຕະຕິຍະຊານນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນປິຕິ ແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງ ໃນຕະຕິຍະຊານທີ່ບໍ່ມີປິຕິແລ້ວເສບອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນ ຕະຕິຍະຊານທີ່ບໍ່ມີປິຕິ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຕະຕິຍະຊານ ນັ້ນສະງົບ" ອານົນ ເພາະປິຕິຈາງຄາຍອອກ ເຮົາຈຶ່ງບັນລຸຕະຕິຍະຊານ ຯລຯ ເມື່ອເຮົາຢູ່ດ້ວຍວິ ຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍປິຕິຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ສັນໃດ ສັນຍາມະນະສິການທີ່ປະກອບ ດ້ວຍປິຕິ ຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ແລະບໍ່ມີສຸກ ເພາະລະສຸກແລະທຸກໄດ້ ເພາະໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ມີສະ ຕິບໍລິສຸດເພາະອຸເປກຂາຢູ່ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນຈະຕຸດຖະຊານທີ່ບໍ່ມີ ທຸກແລະບໍ່ມີສຸກ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຈະຕຸດຖະຊານນັ້ນສະງົບ" ເຮົາຈຶ່ງມີຄວາມ ຄິດດັ່ງນີ້ວ່າ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນ ຈະຕຸດຖະຊານທີ່ບໍ່ມີທຸກ ແລະບໍ່ມີສຸກ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຈະຕຸດຖະຊານນັ້ນສະ ງົບ" ເຮົາມີຄວາມດຳຣິດັ່ງນີ້ວ່າ ໂທດໃນອຸເປກຂາ ແລະສຸກ ເຮົາຍັງບໍ່ໄດ້ເຫັນແລະບໍ່ໄດ້ເຮັດໃຫ້ ຫຼາຍ ອານິສົງໃນຈະຕຸດຖະຊານທີ່ບໍ່ມີທຸກ ແລະບໍ່ມີສຸກ ເຮົາຍັງບໍ່ໄດ້ບັນລຸ ແລະບໍ່ໄດ້ເສບ ເພາະ ເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນຈະຕຸດຖະຊານທີ່ບໍ່ມີທຸກ ແລະບໍ່ມີ ສຸກ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຈະຕຸດຖະຊານ ນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ ວ່າ ຖ້າເຮົາເຫັນໂທດໃນອຸເປກຂາແລະສຸກແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນຈະຕຸດຖະຊານ ທີ່ບໍ່ມີທຸກ ແລະບໍ່ມີສຸກແລ້ວເສບອານິ ສົງນັ້ນ ເປັນໄປໄດ້ທີ່ຈິດຂອງເຮົາເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນຈະຕຸດຖະຊານທີ່ບໍ່ມີທຸກແລະບໍ່ມີສຸກ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຈະຕຸດຖະ ຊານນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນອຸເປກຂາແລະສຸກແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງ ໃນຈະຕຸດຖະຊານທີ່ບໍ່ມີທຸກ ແລະບໍ່ມີສຸກແລ້ວເສບອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມ

ໃສ ຕັ້ງໝັ້ນໃນຈະຕຸດຖະຊານທີ່ບໍ່ມີທຸກແລະບໍ່ມີສຸກ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ຈະຕຸດຖະຊານນັ້ນສະງົບ" ອານົນ ເຮົາບັນຈະຕຸດຖະຊານທີ່ບໍ່ມີທຸກ ແລະບໍ່ມີສຸກ ເພາະລະສຸກ ແລະທຸກໄດ້ ຯລຯ ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍອຸເປກຂາຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນສັນໃດ ສັນຍາມະນະສິການທີ່ປະກອບດ້ວຍ ອຸເປກຂາຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດ ນານັດຕະສັນຍາ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນອາກາສານັນຈາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ອາກາສານັນຈາຍະຕະນະຊານນັ້ນສະງົບ" ເຮົາຈຶ່ງມີຄວາມ ດຳຣິດັ່ງນີ້ວ່າ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ໃນອາກາສານັນຈາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ອາກາສານັນຈາຍະຕະນະຊານນັ້ນສະງົບ" ເຮົາມີຄວາມດຳຣິດັ່ງນີ້ວ່າ ໂທດໃນຮູບທັງຫຼາຍເຮົາຍັງບໍ່ໄດ້ເຫັນແລະບໍ່ໄດ້ ເຮັດໃຫ້ຫຼາຍ ອານິສົງໃນອາກາສານັນຈາຍະຕະນະຊານ ເຮົາຍັງບໍ່ໄດ້ບັນລຸແລະບໍ່ໄດ້ເສບ ເພາະເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນອາກາສານັນຈາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ອາກາສານັນຈາຍະຕະນະຊານນັ້ນສະງົບ" ເຮົາຈຶ່ງມີ ຄວາມດຳຣິດັ່ງນີ້ວ່າ ຖ້າເຮົາໄດ້ເຫັນໂທດໃນຮູບທັງຫຼາຍແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນອາກາສານັນຈາຍະຕະນະຊານ ແລ້ວເສບອານິສົງນັ້ນ ເປັນໄປໄດ້ທີ່ຈິດຂອງເຮົາຈະເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນອາກາສານັນຈາຍະຕະນະຊານ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ອາກາສານັນຈາຍະຕະນະຊານນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນຮູບທັງຫຼາຍແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນອາກາສານັນຈາຍະຕະນະຊານແລ້ວເສບອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ໃນອາກາສານັນຈາຍະຕະນະຊານລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ອາກາສານັນຈາຍະຕະນະຊານ ນັ້ນສະງົບ" ອານົນ ເຮົາບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດ ນານັດຕະສັນຍາ ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍຮູບຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ສັນໃດ ສັນຍາມະນະສິການ ທີ່ປະກອບດ້ວຍຮູບ ຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນລ່ວງອາກາສານັນຈາຍະຕະນະຊານ ໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານ ຫາທີ່ສຸດບໍ່ໄດ້" ຢູ່ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນວິນຍານັນຈາຍະຕະນະຊານ ບໍ່

ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ວິນຍານັນຈາຍະຕະນະຊານນັ້ນສະງົບ” ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ໃນວິນຍານັນຈາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ວິນຍານັນຈາຍະຕະນະຊານນັ້ນສະງົບ” ເຮົາມີຄວາມດຳຣິດັ່ງນີ້ວ່າ ໂທດໃນອາກາສານັນຈາຍະຕະນະຊານເຮົາຍັງບໍ່ໄດ້ເຫັນ ແລະບໍ່ໄດ້ເຮັດໃຫ້ຫຼາຍ ອານິສົງໃນວິນຍານັນຈາຍະຕະນະຊານເຮົາຍັງບໍ່ໄດ້ບັນລຸ ແລະບໍ່ໄດ້ເສບ ເພາະເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ໃນວິນຍານັນຈາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ວິນຍານັນຈາຍະຕະນະຊານນັ້ນສະງົບ” ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ຖ້າເຮົາເຫັນໂທດໃນອາກາສານັນຈາຍະຕະນະຊານແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນວິນຍານັນຈາຍະຕະນະຊານແລ້ວເສບອານິສົງນັ້ນ ເປັນໄປໄດ້ທີ່ຈິດຂອງເຮົາຈະເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນວິນຍານັນຈາຍະຕະນະຊານ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ວິນຍານັນຈາຍະຕະນະຊານນັ້ນສະງົບ” ຕໍ່ມາເຮົາໄດ້ເຫັນໂທດໃນອາກາສານັນຈາຍະຕະນະຊານແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນວິນຍານັນຈາຍະຕະນະຊານແລ້ວເສບອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນວິນຍານັນຈາຍະຕະນະຊານ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ວິນຍານັນຈາຍະຕະນະຊານນັ້ນສະງົບ” ອານົນ ເຮົາລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ “ວິນຍານ ຫາທີ່ສຸດບໍ່ໄດ້” ຢູ່ ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍ ອາກາສານັນຈາຍະຕະນະຊານຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນ ແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ສັນໃດ ສັນຍາມະນະສິການທີ່ປະກອບດ້ວຍ ອາກາສານັນຈາຍະຕະນະຊານຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ “ບໍ່ມີອັນໃດ” ຢູ່ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນອາກິນຈັນຍາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ອາກິນຈັນຍາຍະຕະນະຊານນັ້ນສະງົບ” ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນອາກິນຈັນຍາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ອາກິນຈັນຍາຍະຕະນະຊານ ນັ້ນສະງົບ” ເຮົາມີຄວາມດຳຣິດັ່ງນີ້ວ່າ ໂທດໃນວິນຍານັນຈາຍະຕະນະຊານ ເຮົາຍັງບໍ່ໄດ້ເຫັນແລະ ບໍ່ໄດ້ເຮັດໃຫ້ຫຼາຍ ອານິສົງໃນອາກິນຈັນຍາຍະຕະນະຊານ ເຮົາຍັງບໍ່ໄດ້ບັນລຸແລະບໍ່ໄດ້ເສບ ເພາະເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສບໍ່ຕັ້ງໝັ້ນໃນອາກິນຈັນຍາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ “ອາກິນຈັນຍາຍະຕະນະຊານນັ້ນສະງົບ” ເຮົາຈຶ່ງມີຄວາມດຳຣິ ດັ່ງນີ້ວ່າ ຖ້າເຮົາເຫັນໂທດໃນວິນຍານັນຈາຍະຕະນະຊານແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນ ອາກິນຈັນຍາຍະຕະນະຊານແລ້ວເສບອານິສົງນັ້ນ ເປັນໄປໄດ້ທີ່ຈິດຂອງເຮົາຈະເພິ່ງແລ່ນໄປ ເຫຼື້ອມໃສ

ຕັ້ງໝັ້ນໃນອາກິນຈັນຍາຍະຕະນະຊານ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ອາກິນຈັນຍາຍະຕະນະຊານນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນວິນຍານັນຈາຍະຕະນະຊານແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນອາກິນຈັນຍາຍະຕະນະຊານແລ້ວ ເສບອານິ ສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນອາກິນຈັນຍາຍະຕະນະຊານ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ອາກິນຈັນຍາຍະຕະນະຊານນັ້ນສະງົບ" ອານົນ ເຮົາລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍວິນຍານັນຈາຍະຕະນະຊານຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມກົດດັນ ສັນໃດ ສັນຍາມະນະສິການທີ່ປະກອບດ້ວຍວິນຍານັນຈາຍະຕະນະຊານຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນລ່ວງອາກິນຈັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນເນວະສັນຍານາສັນຍາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນວະສັນຍານາສັນຍາຍະຕະນະຊານນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ອັນໃດນໍແລ ເປັນເຫດເປັນປັດໄຈໃຫ້ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນເນວະສັນຍານາສັນຍາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນວະສັນຍານາສັນຍາຍະຕະນະຊານນັ້ນສະງົບ" ເຮົາມີຄວາມດຳຣິດັ່ງນີ້ວ່າ ໂທດໃນອາກິນຈັນຍາຍະຕະນະຊານ ເຮົາຍັງບໍ່ໄດ້ເຫັນ ແລະບໍ່ໄດ້ເຮັດໃຫ້ຫຼາຍ ອານິສົງໃນເນວະສັນຍານາສັນຍາຍະຕະນະຊານ ເຮົາຍັງບໍ່ໄດ້ບັນລຸ ແລະບໍ່ໄດ້ ເສບ ເພາະເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນເນວະສັນຍານາສັນຍາຍະຕະນະຊານ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນວະສັນຍານາສັນຍາຍະຕະນະຊານ ນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ຖ້າເຮົາເຫັນໂທດໃນອາກິນຈັນຍາຍະຕະນະຊານແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນເນວະສັນຍານາສັນຍາຍະຕະນະຊານແລ້ວເສບອານິສົງນັ້ນ ເປັນໄປໄດ້ທີ່ຈິດຂອງເຮົາເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນເນວະສັນຍານາສັນຍາຍະຕະນະຊານ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນວະສັນຍານາສັນຍາຍະຕະນະຊານນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນອາກິນຈັນຍາຍະຕະນະຊານແລ້ວ ເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນເນວະສັນຍານາສັນຍາຍະຕະນະຊານ ແລ້ວເສບອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນເນວະສັນຍານາສັນຍາຍະຕະນະຊານ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ເນວະສັນຍານາສັນຍາຍະຕະນະຊານນັ້ນສະງົບ" ອານົນ ເຮົາລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານ ຢູ່ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການທີ່ປະກອບດ້ວຍອາກິນຈັນຍາຍະຕະນະຊານ ຍັງຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ທຸກເພິ່ງເກີດຂຶ້ນແກ່ຄົນຜູ້ມີສຸກພຽງເພື່ອຄວາມ ກົດດັນ ສັນໃດ ສັນຍາມະນະສິການທີ່ປະກອບດ້ວຍອາກິນຈັນຍາຍະຕະນະຊານຍ່ອມຟຸ້ງຂຶ້ນ ຂໍ້ນັ້ນເປັນຄວາມກົດດັນແກ່ເຮົາ ສັນນັ້ນ

ອານົນ ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ທາງທີ່ດີ ເຮົາຄວນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນສັນຍາເວທະຍິຕະນິໂຣດ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ສັນຍາເວທະຍິຕະນິໂຣດນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ອັນໃດນໍ? ເປັນເຫດ ເປັນປັດໄຈໃຫ້ຈິດຂອງເຮົາ ບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນສັນຍາເວທະຍິຕະນິໂຣດ ບໍ່ລຸດພົ້ນ ເມື່ອພິຈາລະນາ ເຫັນວ່າ "ສັນຍາເວທະ ຍິຕນິໂຣທນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ໂທດໃນເນວະສັນຍານາສັນຍາຍະຕະນະຊານເຮົາຍັງບໍ່ໄດ້ເຫັນ ແລະບໍ່ໄດ້ເຮັດໃຫ້ຫຼາຍ ອານິສົງໃນສັນຍາເວທະຍິຕະນິໂຣດ ເຮົາຍັງບໍ່ໄດ້ບັນລຸແລະບໍ່ໄດ້ເສບ ເພາະເຫດນັ້ນ ຈິດຂອງເຮົາຈຶ່ງບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນໃນສັນຍາເວທະຍິຕະນິໂຣດ ບໍ່ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ສັນຍາເວທະຍິຕະນິໂຣດ ນັ້ນສະງົບ" ເຮົາຈຶ່ງມີຄວາມດຳຣິດັ່ງນີ້ວ່າ ຖ້າເຮົາເຫັນໂທດໃນເນວະສັນຍານາສັນຍາ ຍະຕະນະຊານແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນສັນຍາເວທະຍິຕະນິໂຣດແລ້ວເສບອານິສົງນັ້ນ ເປັນໄປໄດ້ທີ່ຈິດຂອງເຮົາຈະເພິ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນສັນຍາເວທະຍິຕະນິໂຣດ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ສັນຍາເວທະຍິຕະນິໂຣດນັ້ນສະງົບ" ຕໍ່ມາເຮົາໄດ້ເຫັນໂທດໃນເນວະສັນຍາ ນາສັນຍາຍະຕະນະຊານແລ້ວເຮັດໃຫ້ຫຼາຍ ໄດ້ບັນລຸອານິສົງໃນສັນຍາເວທະຍິຕະນິໂຣດແລ້ວເສບ ອານິສົງນັ້ນ ຈິດຂອງເຮົາຈຶ່ງແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນໃນສັນຍາເວທະຍິຕະນິໂຣດ ລຸດພົ້ນ ເມື່ອພິຈາລະນາເຫັນວ່າ "ສັນຍາເວທະຍິຕະນິໂຣດນັ້ນສະງົບ" ອານົນ ເຮົາລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິ ໂຣດຢູ່ ອາສະວະທັງຫຼາຍຂອງເຮົາໄດ້ເຖິງຄວາມໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ

ອານົນ ເມື່ອໃດ ອະນຸປຸບພະວິຫານສະມາບັດ ໙ ປະການນີ້ ເຮົາຍັງເຂົ້າບໍ່ໄດ້ ອອກບໍ່ໄດ້ ທັງໂດຍອະນຸໂລມ ແລະປະຕິໂລມຢ່າງນີ້ ເມື່ອນັ້ນ ເຮົາກໍຍັງບໍ່ຢືນຢັນວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະ ນະພາມ ເທວະດາແລະມະນຸດ

ແຕ່ເມື່ອໃດ ອະນຸປຸບພະວິຫານສະມາບັດ ໙ ປະການນີ້ ເຮົາເຂົ້າກໍໄດ້ ອອກກໍໄດ້ ທັງໂດຍອະນຸໂລມ ແລະປະຕິໂລມຢ່າງນີ້ ເມື່ອນັ້ນ ເຮົາຈຶ່ງຢືນຢັນໄດ້ວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານ ອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ກໍຍານທັດສະນະໄດ້ເກີດຂຶ້ນແກ່ເຮົາວ່າ "ເຈໂຕວິມຸດຕິຂອງເຮົາບໍ່ກຳເຣິບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ ພົບໃໝ່ບໍ່ມີອີກ"

**ຕະປຸດສະສູດທີ ໑໐ ຈົບ**

**ມະຫາວັກທີ ໔ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



# ໕. ສາມັນຍະວັກ

## ໝວດວ່າດ້ວຍສາມັນຍະທຳ

## ໑. ສຳພາທະສູດ

### ວ່າດ້ວຍວິທີບັນລຸຊ່ອງວ່າງໃນທີ່ຄັບແຄບ

[໔໘] ສະໄໝໜຶ່ງ ທ່ານພຣະອານົນຢູ່ໃນໂຄສິຕາຣາມ ເຂດເມືອງໂກສຳພີ ຄັ້ງນັ້ນ ທ່ານພຣະອຸທາຍີເຂົ້າໄປຫາທ່ານພຣະອານົນເຖິງທີ່ຢູ່ ສົນທະນາປາໄສກັບທ່ານພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ຜູ້ມີອາຍຸປັນຈາລະຈັນທະ ເທບພະບຸດໄດ້ກ່າວໄວ້ດັ່ງນີ້ວ່າ

ພຣະພຸດທະເຈົ້າພຣະອົງໃດ ຜູ້ຊົງຫຼົບຫຼີກຢູ່
ຊົງເປັນພຣະມຸນີຜູ້ປະເສີດ ໄດ້ຕັດສະຣູ້ຊານແລ້ວ
ພຣະພຸດທະເຈົ້າພຣະອົງນັ້ນ ມີພຣະປັນຍາກວ້າງຂວາງ
ໄດ້ຊົງຮູ້ວິທີບັນລຸຊ່ອງວ່າງໃນທີ່ຄັບແຄບ

ຜູ້ມີອາຍຸທີ່ຄັບແຄບ ເປັນແນວໃດ? ວິທີບັນລຸຊ່ອງວ່າງໃນທີ່ຄັບແຄບ ພຣະຜູ້ມີພຣະພາກເຈົ້າຕັດໄວ້ຢ່າງໃດ"

ທ່ານພຣະອານົນກ່າວວ່າ "ຜູ້ມີອາຍຸ ກາມມະຄຸນ ໕ ປະການນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ທີ່ຄັບແຄບ

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ຜູ້ມີອາຍຸ ກາມມະຄຸນ ໕ ປະການນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ທີ່ຄັບແຄບ

ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ພຣະຜູ້ມີພຣະພາກເຈົ້າຕັດວິທີບັນລຸຊ່ອງວ່າງໃນທີ່ຄັບແຄບໂດຍປະຣິຍາຍໜຶ່ງດ້ວຍເຫດ ພຽງເທົ່ານີ້ ແມ່ນໃນປະຖົມຊານນັ້ນກໍຍັງມີທີ່ຄັບແຄບ ອັນໃດຊື່ວ່າທີ່ຄັບແຄບໃນປະຖົມຊານນັ້ນ ວິຕົກແລະວິຈານທີ່ຍັງບໍ່ດັບໃນປະຖົມຊານນັ້ນ ຊື່ວ່າທີ່ຄັບແຄບໃນປະຖົມຊານນີ້

ພິກຂຸ ເພາະວິຕົກວິຈານສະງົບຣະງັບໄປ ບັນລຸທຸຕິຍະຊານ ຯລຯ ຢູ່ ພຣະຜູ້ມີພຣະພາກເຈົ້າຕັດວິທີບັນລຸຊ່ອງວ່າງໃນທີ່ຄັບແຄບໂດຍປະຣິຍາຍໜຶ່ງ ດ້ວຍເຫດພຽງເທົ່ານີ້ ແມ່ນໃນທຸຕິຍະຊານນັ້ນ ກໍຍັງມີທີ່ຄັບແຄບ ອັນໃດຊື່ວ່າທີ່ຄັບແຄບໃນທຸຕິຍະຊານນັ້ນ ປີຕິທີ່ຍັງບໍ່ດັບໃນທຸຕິຍະຊານນັ້ນ ຊື່ວ່າທີ່ຄັບແຄບໃນທຸຕິຍະຊານນີ້

ພິກຂຸ ເພາະປີຕິຈາງຄາຍອອກ ເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍ ນາມກາຍ ບັນລຸຕະຕິຍະຊານ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວິທີບັນລຸຊ່ອງວ່າງໃນທີ່ຄັບແຄບໂດຍປະຣິຍາຍໜຶ່ງ ດ້ວຍເຫດພຽງເທົ່ານີ້ ແມ່ນໃນຕະຕິຍະຊານນັ້ນກໍຍັງມີທີ່ຄັບແຄບ ອັນໃດຊື່ວ່າທີ່ຄັບແຄບ ໃນຕະຕິຍະຊານນັ້ນ ອຸເປກຂາ ແລະສຸກທີ່ຍັງບໍ່ດັບໃນຕະຕິຍະຊານນັ້ນ ຊື່ວ່າທີ່ຄັບແຄບ ໃນຕະຕິຍະຊານນີ້

ພິກຂຸ ເພາະລະສຸກແລະທຸກໄດ້ ເພາະໂສມະນັດໂທມະນັດດັບໄປກ່ອນແລ້ວບັນລຸຈະຕຸດຖະຊານ ຯລຯ ຢູ່ ພຣະຜູ້ມີພຣະພາກເຈົ້າຕັດວິທີບັນລຸເຖິງຊ່ອງວ່າງໃນທີ່ຄັບແຄບໂດຍປະຣິຍາຍໜຶ່ງ ດ້ວຍເຫດພຽງເທົ່ານີ້ ແມ່ນໃນຈະຕຸດຖະຊານນັ້ນກໍຍັງມີທີ່ຄັບແຄບ ອັນໃດຊື່ວ່າທີ່ຄັບແຄບໃນ ຈະຕຸດຖະຊານນັ້ນ ຮູບສັນຍາທີ່ຍັງບໍ່ດັບໃນຈະຕຸດຖະຊານນັ້ນ ຊື່ວ່າທີ່ຄັບແຄບໃນຈະຕຸດຖະຊານນີ້

ພິກຂຸບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ “ອາກາດຫາທີ່ສຸດບໍ່ໄດ້” ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ພຣະຜູ້ມີພຣະພາກເຈົ້າຕັດ ວິທີບັນລຸຊ່ອງວ່າງໃນທີ່ຄັບແຄບໂດຍປະຣິຍາຍໜຶ່ງ ດ້ວຍເຫດພຽງເທົ່ານີ້ ແມ່ນໃນອາກາສານັນ ຈາຍະຕະນະຊານນັ້ນກໍຍັງມີທີ່ຄັບແຄບ ອັນໃດຊື່ວ່າທີ ຄັບແຄບໃນອາກາສານັນຈາຍະຕະນະ ຊານນັ້ນ ອາກາສານັນຈາ ຍະຕະນະສັນຍາທີ່ຍັງບໍ່ດັບໃນອາກາສານັນຈາຍະຕະນະຊານນັ້ນ ຊື່ວ່າທີ່ຄັບແຄບໃນອາກາສານັນຈາຍະຕະນະຊານນີ້

ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາ ຍະຕະນະ-ຊານ ໂດຍກຳນົດວ່າ “ວິນຍານຫາທີ່ສຸດບໍ່ໄດ້” ຢູ່ ພຣະຜູ້ມີພຣະພາກເຈົ້າຕັດວິທີບັນລຸ ຊ່ອງວ່າງ ໃນທີ່ຄັບແຄບໂດຍປະຣິຍາຍໜຶ່ງ ດ້ວຍເຫດພຽງເທົ່ານີ້ ແມ່ນໃນວິນຍານັນຈາຍະຕະ ນະຊານກໍຍັງມີທີ່ຄັບແຄບ ອັນໃດຊື່ວ່າທີ່ຄັບແຄບໃນວິນຍານັນຈາຍະຕະນະຊານນັ້ນ ວິນຍານັນ ຈາຍະຕະນະສັນຍາທີ່ຍັງບໍ່ດັບໃນວິນຍານັນຈາຍະຕະນະຊານນັ້ນ ຊື່ວ່າທີ່ຄັບແຄບໃນວິນຍານັນ ຈາຍະຕະນະຊານນີ້

ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະ ນະຊານ ໂດຍກຳນົດວ່າ “ບໍ່ມີອັນໃດ” ຢູ່ ພຣະຜູ້ມີພຣະພາກເຈົ້າຕັດວິທີບັນລຸຊ່ອງວ່າງໃນທີ່ ຄັບແຄບໂດຍປະຣິຍາຍໜຶ່ງດ້ວຍເຫດພຽງເທົ່ານີ້ ແມ່ນໃນອາກິນຈັນຍາຍະຕະນະຊານກໍຍັງມີທີ່ ຄັບແຄບອັນໃດ ຊື່ວ່າທີ່ຄັບແຄບໃນອາກິນຈັນຍາຍະຕະນະຊານນັ້ນ ອາກິນຈັນຍາຍະຕະນະ ສັນຍາທີ່ຍັງບໍ່ດັບໃນອາກິນຈັນຍາຍະຕະນະຊານນັ້ນ ຊື່ວ່າທີ່ຄັບແຄບໃນອາກິນຈັນຍາຍະຕະນະ ຊານນີ້

ພິກຂຸລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນ ຍາຍະຕະນະຊານຢູ່ ພຣະຜູ້ມີພຣະພາກເຈົ້າຕັດວິທີບັນລຸຊ່ອງວ່າງໃນທີ່ຄັບແຄບໂດຍປະຣິຍາຍໜຶ່ ງ ດ້ວຍເຫດພຽງເທົ່ານີ້ ແມ່ນໃນເນວະສັນຍານາສັນຍາຍະຕະນະຊານກໍຍັງມີທີ່ຄັບແຄບ ອັນໃດ ຊື່ວ່າ ທີ່ຄັບແຄບໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ເນວະສັນຍານາສັນຍາຍະຕະນະ ສັນຍາ ທີ່ຍັງບໍ່ດັບໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ຊື່ວ່າທີ່ຄັບແຄບໃນເນວະສັນຍາ ນາສັນຍາຍະຕະນະຊານນີ້

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະ ຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ຜູ້ມີອາຍຸ ພຣະ ຜູ້ມີພຣະ ພາກເຈົ້າຕັດວິທີບັນລຸຊ່ອງວ່າງໃນທີ່ຄັບແຄບໂດຍນິບປະຣິຍາຍແລ້ວ ດ້ວຍເຫດພຽງ ເທົ່ານີ້

**ສຳພາທະສູດທີ ໑ ຈົບ**

# ໘. ກາຍະສັກຂີສູດ

## ວ່າດ້ວຍບຸກຄົນຜູ້ເປັນກາຍະສັກຂີ

[໔໓] ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກາຍະສັກຂີ ກາຍະສັກຂີ" ຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ ກາຍະສັກຂີ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ສະຫງັດຈາກກາມຯລຯ ບັນລຸປະຖົມຊານຯລຯ ແລະອາຍະຕະນະຄືປະຖົມຊານນັ້ນ ມີຢູ່ໂດຍປະການໃດ ໆ ທ່ານສຳຜັດອາຍະຕະນະຄືປະຖົມຊານນັ້ນດ້ວຍກາຍ ໂດຍປະການນັ້ນ ໆ ຢູ່ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ກາຍະສັກຂີ" ໂດຍປະຣິຍາຍະແລ້ວ (໑)

ພິກຂຸບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ແລະອາຍະຕະນະ ຄື ຈະຕຸດຖະຊານນັ້ນມີຢູ່ໂດຍປະການໃດ ໆ ທ່ານສຳຜັດອາຍະຕະນະຄືຈະຕຸດຖະຊານ ນັ້ນດ້ວຍກາຍໂດຍປະການນັ້ນ ໆ ຢູ່ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ກາຍະສັກຂີ" ໂດຍປະຣິຍາຍແລ້ວ (໒-໔)

ພິກຂຸບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາທີ່ສຸດບໍ່ໄດ້" ຢູ່ ເພາະລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ແລະອາຍະຕະນະຄື ອາກາສານັນຈາຍະຕະນະຊານນັ້ນ ມີຢູ່ໂດຍປະການໃດ ໆ ທ່ານສຳຜັດອາຍະຕະນະຄື ອາກາສານັນຈາຍະຕະນະຊານນັ້ນ ດ້ວຍກາຍໂດຍປະການນັ້ນ ໆ ຢູ່ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກ ຄົນວ່າ "ກາຍະສັກຂີ" ໂດຍປະຣິຍາຍແລ້ວ (໕-໘)

ພິກຂຸລ່ວງເນວະສັນຍາ ນາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ແລະອາຍະຕະນະຄືສັນຍາເວທະຍິຕະນິໂຣດນັ້ນມີຢູ່ ໂດຍປະການໃດ ໆ ທ່ານສຳຜັດອາຍະຕະນະ ຄື ສັນຍາເວທະຍິຕະນິໂຣດນັ້ນດ້ວຍກາຍໂດຍປະການນັ້ນ ໆ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ກາຍະສັກຂີ" ໂດຍນິບປະຣິຍາຍແລ້ວ" (໙)

**ກາຍະສັກຂີສູດທີ ໘ ຈົບ**

# ໖. ປັນຍາວິມຸດຕະສູດ
## ວ່າດ້ວຍບຸກຄົນຜູ້ເປັນປັນຍາວິມຸດ

[໔໔] ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດຮຽກບຸກຄົນວ່າ "ປັນຍາວິມຸດ ປັນຍາວິມຸດ" ຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ ປັນຍາວິມຸດ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ຯລຯ ແລະທ່ານຍ່ອມຮູ້ແຈ້ງປະຖົມຊານນັ້ນດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ປັນຍາວິມຸດ" ໂດຍປະຣິຍາຍແລ້ວ

ຯລຯ

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາ ເວທະ ຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ແລະທ່ານຍ່ອມຮູ້ແຈ້ງສັນຍາເວທະຍິຕະນິໂຣດນັ້ນດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ປັນຍາວິມຸດ" ໂດຍນິບປະຣິຍາຍແລ້ວ"

**ປັນຍາວິມຸດຕະສູດທີ ໖ ຈົບ**

# ໔. ອຸພະໂຕພາຄະວິມຸດຕະສູດ
## ວ່າດ້ວຍບຸກຄົນຜູ້ເປັນອຸພະໂຕພາຄະວິມຸດ

[໔໕] ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດຮຽກບຸກຄົນວ່າ "ອຸພະໂຕພາຄະວິມຸດ ອຸພະໂຕພາຄະວິມຸດ" "ຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ອຸພະໂຕພາຄະວິມຸດ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ຯລຯ ແລະອາຍະຕະນະຄືປະຖົມຊານນັ້ນມີຢູ່ໂດຍປະການໃດໆ ທ່ານສຳຜັດອາຍະຕະນະ ຄື ປະຖົມຊານນັ້ນດ້ວຍກາຍໂດຍປະການນັ້ນໆ ຢູ່ ແລະທ່ານຮູ້ແຈ້ງອາຍະຕະນະຄືປະຖົມຊານນັ້ນດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ອຸພະໂຕພາຄະວິມຸດ" ໂດຍປະຣິຍາຍແລ້ວ

ຯລຯ

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ອາຍະຕະນະຄືສັນຍາເວທະຍິຕະນິໂຣດນັ້ນ ມີຢູ່ໂດຍປະການໃດໆ ທ່ານສຳຜັດອາຍະຕະນະຄືສັນຍາ ເວທະຍິຕະນິໂຣດນັ້ນດ້ວຍກາຍໂດຍປະການນັ້ນໆ ຢູ່ ແລະທ່ານຮູ້ແຈ້ງອາຍະຕະນະຄືສັນຍາເວທະຍິຕະນິໂຣດນັ້ນ ດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກບຸກຄົນວ່າ "ອຸພະໂຕພາຄະວິມຸດ" ໂດຍນິບປະຣິຍາຍແລ້ວ

**ອຸພະໂຕພາຄະວິມຸດຕະສູດທີ ໔ ຈົບ**

# ໕. ສັນທິດຖິກະທຳມະສູດ

## ວ່າດ້ວຍສັນທິດຖິກະທຳ

[໔໖] ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສັນທິດຖິກະທຳ ສັນທິດຖິກະທຳ" ຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ? ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສັນທິດຖິກະທຳ

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ຯລຯ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າໄດ້ຕັດສັນທິດຖິກະທຳໂດຍປະຣິຍາຍແລ້ວ

ຯລຯ

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະ ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດ ຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສັນທິດຖິກະທຳ ໂດຍນິບປະຣິຍາຍແລ້ວ"

**ສັນທິດຖິກະທຳມະສູດທີ ໕ ຈົບ**

# ໖. ສັນທິດຖິກະນິບພານະສູດ

## ວ່າດ້ວຍສັນທິດຖິກະນິບພານ

[໔໗] ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສັນທິດຖິກະນິບພານ ສັນທິດຖິກະນິບພານ" ທ່ານຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສັນທິດຖິກະນິບພານ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານຯລຯ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສັນທິດຖິກະນິບພານ ໂດຍປະຣິຍາຍແລ້ວ

ຯລຯ

ພິກຂຸລ່ວງເນວະສັນຍາ ນາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາ ເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວເພາະເຫັນດ້ວຍປັນຍາ ດ້ວຍເຫດ ພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສັນທິດຖິກະນິບພານ ໂດຍນິບປະຣິຍາຍແລ້ວ"

**ສັນທິດຖິກະນິບພານະສູດທີ ໖ ຈົບ**

# ໗. ນິບພານະສູດ

## ວ່າດ້ວຍນິບພານ

[໔໗] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນິບພານ ນິບ ພານ" ຯລຯ

**ນິບພານະສູດທີ ໗ ຈົບ**

# ໘. ປະຣິນິບພານະສູດ

## ວ່າດ້ວຍປະຣິນິບພານ

[໔໘] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປະຣິນິບພານ ປະຣິນິບພານ" ຯລຯ

**ປະຣິນິບພານະສູດທີ ໘ ຈົບ**

# ໙. ຕະທັງຄະນິບພານະສູດ

## ວ່າດ້ວຍຕະທັງຄະນິບພານ

[໕໐] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຕະທັງຄະນິບ ພານ ຕະທັງຄະນິບພານ" ຯລຯ

**ຕະທັງຄະນິບພານະສູດທີ ໙ ຈົບ**

# ໑໐ . ທິດຖະທຳມະນິບພານະສູດ

## ວ່າດ້ວຍທິດຖະທຳມະນິບພານ

[໔໑] ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທິດຖະທຳມະນິບພານ໔ ທິດຖະທຳມະນິບພານ" ຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດທິດຖະທຳມະນິບພານ

ພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ສະຫງັດຈາກກາມ ແລະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ฯລฯ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດທິດຖະທຳມະນິບພານ ໂດຍປະຣິຍາຍແລ້ວ

ฯລฯ

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດທິດຖະທຳມະນິບພານ ໂດຍນິບປະຣິຍາຍແລ້ວ"

**ທິດຖະທຳມະນິບພານະສູດທີ ໑໐ ຈົບ**

**ສາມັນຍະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສຳພາທະສູດ
໒. ກາຍະສັກຂີສູດ
໓. ປັນຍາວິມຸດຕະສູດ
໔. ອຸພະໂຕພາຄະວິມຸດຕະສູດ
໕. ສັນທິດຖິກະທຳມະສູດ
໖. ສັນທິດຖິກະນິບພານະສູດ
໗. ນິບພານະສູດ
໘. ປະຣິນິບພານະສູດ
໙. ຕະທັງຄະນິບພານະສູດ
໑໐. ທິດຖະທຳມະນິບພານະສູດ

**ປະຖະມະປັນນາດ ຈົບ**

# ໘. ທຸຕິຍະປັນນາດ

## ໑. ເຂມະວັກ

### ໝວດວ່າດ້ວຍເຫດໃຫ້ຕັດຮຽກວ່າ ເຂມະ

## ໑. ເຂມະສູດ

### ວ່າດ້ວຍເຫດໃຫ້ຕັດຮຽກວ່າ ເຂມະ

[໔໘] ທ່ານພຣະອຸທາຍີຖາມວ່າ "ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຂມະ ເຂມະ" ຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດເຂມະ"

ພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມຯລຯ ບັນລຸປະຖົມຊານ ຯລຯ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດເຂມະ ໂດຍປະຣິຍາຍແລ້ວ

ຯລຯ

ພິກຂຸລ່ວງເນວະສັນຍາ ນາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດເຂມະ ໂດຍນິບປະຣິຍາຍແລ້ວ"

**ເຂມະສູດທີ ໑ ຈົບ**

## ໒. ເຂມັບປັດຕະສູດ

### ວ່າດ້ວຍເຫດໃຫ້ຕັດຮຽກວ່າ ເຂມະປັດຕະ

[໔໙] ທ່ານພຣະອຸທາຍີຖາມວ່າຜູ້ມີອາຍຸພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຂມະປັດຕະເຂມະປັດຕະ" ຯລຯ

**ເຂມັບປັດຕະສູດທີ ໒ ຈົບ**

## ໓. ອະມະຕະສູດ

### ວ່າດ້ວຍເຫດໃຫ້ຕັດຮຽກວ່າ ອຳມະຕະ

[໕໔] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຳມະຕະ ອຳມະຕະ" ຯລຯ

**ອະມະຕະສູດທີ ໓ ຈົບ**

## ໔. ອະມະຕັບປັດຕະສູດ

### ວ່າດ້ວຍເຫດໃຫ້ຕັດຮຽກວ່າ ອະມະຕະປັດຕະ

[໕໕] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອະມະຕະປັດຕະ ອະມະຕະປັດຕະ" ຯລຯ

**ອະມະຕັບປັດຕະສູດທີ ໔ ຈົບ**

## ໕. ອະພະຍະສູດ

### ວ່າດ້ວຍເຫດໃຫ້ຕັດຮຽກວ່າ ອະພະຍະ

[໕໖] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອະພະຍະ ອະພະຍະ" ຯລຯ

**ອະພະຍະສູດທີ ໕ ຈົບ**

## ໖. ອະພະຍັບປັດຕະສູດ

### ວ່າດ້ວຍເຫດໃຫ້ຕັດຮຽກວ່າ ອະພະຍະປັດຕະ

[໕໗] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອະພະຍະປັດຕະ ອະພະຍະປັດຕະ" ຯລຯ

**ອະພະຍັບປັດຕະສູດທີ ໖ ຈົບ**

# ໗. ປັດສັດທິສູດ

## ວ່າດ້ວຍເຫດໃຫ້ຕັດຮຽກວ່າ ປັດສັດທິ

[໕໘] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປັດສັດທິ ປັດສັດທິ" ຯລຯ

**ປັດສັດທິສູດທີ ໗ ຈົບ**

# ໘. ອະນຸປຸບພະປັດສັດທິສູດ

## ວ່າດ້ວຍເຫດໃຫ້ຕັດຮຽກວ່າ ອະນຸປຸບພະປັດສັດທິ

[໕໙] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອະນຸປຸບພະປັດສັດທິ ອະນຸປຸບພະປັດສັດທິ" ຯລຯ

**ອະນຸປຸບພະປັດສັດທິສູດທີ ໘ ຈົບ**

# ໙. ນິໂຣທະສູດ

## ວ່າດ້ວຍເຫດໃຫ້ຕັດຮຽກວ່າ ນິໂຣດ

[໖໐] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ນິໂຣດ ນິໂຣດ"

ຯລຯ

**ນິໂຣທະສູດທີ ໙ ຈົບ**

# ໑໐. ອະນຸປຸບພະນິໂຣທະສູດ

## ວ່າດ້ວຍເຫດໃຫ້ຕັດຮຽກວ່າ ອະນຸປຸບພະນິໂຣດ

[໖໑] ທ່ານພຣະອຸທາຍີຖາມວ່າ ຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອະນຸປຸບພະນິໂຣດ ອະນຸປຸບພະນິໂຣດ" ຜູ້ມີອາຍຸ ດ້ວຍເຫດພຽງເທົ່າໃດນໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດອະນຸປຸບພະນິໂຣດ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ฯລฯ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດອະນຸປຸບພະນິໂຣດ ໂດຍປະຣິຍາຍແລ້ວ

ฯລฯ

ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ອາສະວະທັງຫຼາຍຂອງທ່ານໝົດສິ້ນແລ້ວ ເພາະເຫັນດ້ວຍປັນຍາ ດ້ວຍເຫດພຽງເທົ່ານີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດອະນຸປຸບພະນິໂຣດ ໂດຍນິບປະຣິຍາຍແລ້ວ"

**ອະນຸປຸບພະນິໂຣທະສູດທີ ໑໐ ຈົບ**

# ໑໑. ອະພັບພະສູດ

## ວ່າດ້ວຍຜູ້ອາດຈະແລະບໍ່ອາດຈະເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ

[໖໘] ພິກຂຸທັງຫຼາຍ ພິກຂຸລະທຳ ໙ ປະການບໍ່ໄດ້ ກໍບໍ່ອາດຈະເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້ ທຳ ໙ ປະການ ອັນໃດແດ່ ຄື

| | | | |
|---|---|---|---|
| ໑. ຣາຄະ | (ຄວາມກຳໜັດ) | ໒. ໂທສະ | (ຄວາມຄິດປະທຸດສະຮ້າຍ) |
| ໓. ໂມຫະ | (ຄວາມຫຼົງ) | ໔. ໂກທະ | (ຄວາມໂກດ) |
| ໕. ອຸປະນາຫະ | (ຄວາມຜູກໂກດ) | ໖. ມັກຂະ | (ຄວາມລົບຫຼູ່ຄຸນທ່ານ) |
| ໗. ປາສະ | (ຄວາມຕີສະເໝີ) | ໘. ອິດສາ | (ຄວາມຣິດສະຫຍາ) |
| ໙. ມັດສະຣິຍະ | (ຄວາມຂີ້ຖີ່) | | |

ພິກຂຸທັງຫຼາຍ ພິກຂຸລະທຳ ໙ ປະການນີ້ບໍ່ໄດ້ ກໍບໍ່ອາດຈະເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ພິກຂຸທັງຫຼາຍ ພິກຂຸລະທຳ ໙ ປະການໄດ້ແລ້ວ ອາດຈະເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໙ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ຣາຄະ | ໒. ໂທສະ |
| ໓. ໂມຫະ | ໔. ໂກທະ |
| ໕. ອຸປະນາຫະ | ໖. ມັກຂະ |

໗. ປາສະ ໙. ອິດສາ
໘. ມັດສະຣິຍະ

ພິກຂຸທັງຫຼາຍ ພິກຂຸລະທຳ ໘ ປະການນີ້ໄດ້ແລ້ວ ອາດຈະເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

**ອະພັບພະສູດທີ ໑໑ ຈົບ**

**ເຂມະວັກທີ ໑ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເຂມະສູດ
໒. ອະມະຕະສູດ
໕. ອະພະຍະສູດ
໗. ປັດສັດທິສູດ
໘. ນິໂຣທະສູດ
໑໑. ອະພັບພະສູດ
໒. ເຂມັບປັດຕະສູດ
໔. ອະມະຕັບປັດຕະສູດ
໖. ອະພະຍັບປັດຕະສູດ
໙. ອະນຸປຸບພະປັດສັດທິສູດ
໑໐. ອະນຸປຸບພະນິໂຣທະສູດ

# ໔. ສະຕິປັດຖານະວັກ

## ໝວດວ່າດ້ວຍສະຕິປັດຖານ

# ໑. ສິກຂາທຸບພັນລະຍະສູດ

## ວ່າດ້ວຍເຫດທໍ້ແທ້ໃນສິກຂາ

[໓໑] ພິກຂຸທັງຫຼາຍ ເຫດທໍ້ແທ້ໃນສິກຂາ ໕ ປະການນີ້

ເຫດທໍ້ແທ້ໃນສິກຂາ ໕ ປະການ ອັນໃດແດ່ ຄື

໑. ການຂ້າສັດ
໒. ການລັກຊັບ
໓. ການປະພຶດຜິດໃນກາມ
໔. ການເວົ້າຕົວະ
໕. ການເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ເຫດທໍ້ແທ້ໃນສິກຂາ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການ ເພື່ອລະເຫດທໍ້ແທ້ໃນສິກຂາ ໕ ປະການນີ້ ສະຕິປັດຖານ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດ ອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະເຫດທໍ້ແທ້ໃນສິກຂາ ໕ ປະການນີ້

**ສິກຂາທຸບພັນລະຍະສູດທີ ໑ ຈົບ**

# ໒. ນີວະຣະນະສູດ

## ວ່າດ້ວຍນີວອນ

[໖໔] ພິກຂຸທັງຫຼາຍ ນີວອນ (ທຳທີ່ກັ້ນຈິດບໍ່ໃຫ້ບັນລຸຄວາມດີ) ໕ ປະການນີ້

ນີວອນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະນີວອນ (ນີວອນຄືຄວາມພໍໃຈໃນກາມ)
໒. ພະຍາປາທະນີວອນ (ນີວອນຄືຄວາມຄິດຮ້າຍ)
໓. ຖີນະມິດທະນີວອນ (ນີວອນຄືຄວາມຫົດຫູ່ແລະເຊື່ອງຊຶມ)
໔. ອຸດທັດຈະກຸກກຸດຈະນີວອນ (ນີວອນຄືຄວາມຟຸ້ງຊ່ານແລະຮ້ອນໃຈ)
໕. ວິຈິກິດສານີວອນ (ນີວອນຄືຄວາມລັງເລສົງໄສ)

ພິກຂຸທັງຫຼາຍ ນີວອນ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການ ເພື່ອລະນີວອນ ໕ ປະການນີ້ ສະຕິປັດຖານ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະນີວອນ ໕ ປະການນີ້ແລ

**ນີວະຣະນະສູດທີ ໒ ຈົບ**

# ໓. ກາມມະຄຸນສູດ

## ວ່າດ້ວຍກາມມະຄຸນ

[໖໕] ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ

໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ

໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການ ເພື່ອລະກາມມະຄຸນ ໕ ປະການນີ້ແລ ຯລຯ

**ກາມມະຄຸນສູດທີ ໓ ຈົບ**

# ໔. ອຸປາທານັກຂັນທະສູດ

## ວ່າດ້ວຍອຸປາທານຂັນ

[໓໓] ພິກຂຸທັງຫຼາຍ ອຸປາທານຂັນ[1] (ຂັນອັນເປັນທີ່ຕັ້ງແຫ່ງຄວາມຍຶດໝັ້ນ) ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່ ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຮູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ພິກຂຸທັງຫຼາຍ ອຸປາທານະຂັນ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະອຸປາທານຂັນ ໕ ປະການນີ້ແລ ຯລຯ

**ອຸປາທານັກຂັນທະສູດທີ ໔ ຈົບ**

# ໕. ໂອຣຳພາຄິຍະສູດ

## ວ່າດ້ວຍໂອຣຳພາຄິຍະສັງໂຍດ

[໑໗໗] ພິກຂຸທັງຫຼາຍ ໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການນີ້

ໂອຣຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ສັກກາຍະທິດຖິ | (ຄວາມເຫັນວ່າເປັນອັດຕາຂອງຕົນ) |
| ໒. ວິຈິກິດສາ | (ຄວາມລັງເລສົງໄສ) |
| ໓. ສີລັບພະຕະປະຣາມາດ | (ຄວາມຍຶດໝັ້ນສີນພົດ) |
| ໔. ການະສັນທະ | (ຄວາມພໍໃຈໃນການ) |
| ໕. ພະຍາບາດ | (ຄວາມຄິດຮ້າຍ) |

ພິກຂຸທັງຫຼາຍ ໂອຣຳພາຄິຍະສັງໂຍດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການນີ້ແລ ຯລຯ

**ໂອຣຳພາຄິຍະສູດທີ ໕ ຈົບ**

# ໖. ຄະຕິສູດ

## ວ່າດ້ວຍຄະຕິ

[໑໗໘] ພິກຂຸທັງຫຼາຍ ຄະຕິ ໕ ປະການນີ້

ຄະຕິ ໕ ປະການ ອັນໃດແດ່ ຄື

໑. ນິຣະຍະ (ນະຮົກ)

໓. ຕິຣັດສານໂຍນິ (ກຳເນີດສັດເດຍຣັດສານ)
໓. ເປດຕິວິໄສ (ແດນເຜດ)
໔. ມະນຸດ
໕. ເທວະດາ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະຄະຕິ ໕ ປະການນີ້ແລ ຯລຯ

**ຄະຕິສູດທີ ໗ ຈົບ**

# ໗. ມັດສະຣິຍະສູດ

## ວ່າດ້ວຍມັດສະຣິຍະ

[໖໙] ພິກຂຸທັງຫຼາຍ ມັດສະຣິຍະ (ຄວາມຂີ້ຖີ່) ໕ ປະການນີ້

ມັດສະຣິຍະ ໕ ປະການ ອັນໃດແດ່ ຄື

໑. ອາວາສະມັດສະຣິຍະ (ຂີ້ຖີ່ທີ່ຢູ່)
໒. ກຸລະມັດສະຣິຍະ (ຂີ້ຖີ່ຕະກູນ)
໓. ລາພະມັດສະຣິຍະ (ຂີ້ຖີ່ລາບ)
໔. ວັນນະມັດສະຣິຍະ (ຂີ້ຖີ່ວັນນະ)
໕. ທຳມະມັດສະຣິຍະ (ຂີ້ຖີ່ທຳ)

ພິກຂຸທັງຫຼາຍ ມັດສະຣິຍະ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະມັດສະຣິຍະ ໕ ປະການນີ້ແລ ຯລຯ

**ມັດສະຣິຍະສູດທີ ໗ ຈົບ**

# ໘. ອຸດທຳພາຄິຍະສູດ

## ວ່າດ້ວຍອຸດທຳພາຄິຍະສັງໂຍດ ໑

[໗໐] ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູປະຣາຄະ (ຄວາມຕິດໃຈໃນອາລົມແຫ່ງຣູບຊານ)

໒. ອະຣູປະຣາຄະ (ຄວາມຕິດໃຈໃນອາລົມແຫ່ງອະຣູບຊານ)
໓. ມານະ (ຄວາມຖືຕົວ)
໔. ອຸດທັດຈະ (ຄວາມຟຸ້ງຊ່ານ)
໕. ອະວິດຊາ (ຄວາມບໍ່ຮູ້ແຈ້ງ)

ພິກຂຸທັງຫຼາຍ ອຸດທຳພາຄີຍະສັງໂຍດ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະອຸດທຳພາຄີຍະສັງໂຍດ ໕ ປະການນີ້ແລ ຯລຯ

**ອຸດທຳພາຄີຍະສູດທີ ໙ ຈົບ**

# ໑. ເຈໂຕຂີລະສູດ

## ວ່າດ້ວຍກິເລດເຄື່ອງຕຶງຈິດເໝືອນຕະປູ

[໗໑] ພິກຂຸທັງຫຼາຍ ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການນີ້

ກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດາ ຈິດຂອງພິກຂຸຜູ້ເຄືອບແຄງ ສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດານັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ ໑ ຂອງພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອບຳ ເພັນພຽນ

໒. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນທຳ ຯລຯ
໓. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສົງ ຯລຯ
໔. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສິກຂາ (ຂໍ້ທີ່ຈະຕ້ອງສຶກສາ) ຯລຯ

໕. ເປັນຜູ້ໂກດ ບໍ່ພໍໃຈ ມີຈິດຖືກໂທສະ (ຄວາມຄິດປະທຸດສະຮ້າຍ) ກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ໂກດ ບໍ່ພໍໃຈ ມີຈິດຖືກໂທສະກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບ

ເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດເໝືອນຕະປູປະການທີ ໕ ຂອງພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະກິເລດເຄື່ອງຕຶງຈິດເໝືອນຕະປູ ໕ ປະການນີ້ ຯລຯ

**ເຈໂຕຂີລະສູດທີ ໙ ຈົບ**

# ໑໐. ເຈຕະໂສວິນິພັນທະສູດ

## ວ່າດ້ວຍກິເລດເຄື່ອງຜູກໃຈ

[໗໔] ພິກຂຸທັງຫຼາຍ ກິເລດເຄື່ອງຜູກໃຈ ໕ ປະການນີ້

ກິເລດເຄື່ອງຜູກໃຈ ໕ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມກະຫາຍ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍ ຈິດຂອງພິກຂຸຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມກະຫາຍ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງຜູກໃຈປະການທີ ໑ ຂອງພິກຂຸຜູ້ມີຈິດບໍ່ນ້ອມໄປ ເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ

໒. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາຍ ຯລຯ

໓. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນຮູບ ຯລຯ

໔. ສັນອາຫານຕາມຕ້ອງການຈົນອີ່ມເກີນໄປ ປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ ຯລຯ

໕. ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ “ດ້ວຍສິນຂໍ້ວັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທບພະເຈົ້າ ຫຼື ເທບອົງໃດອົງໜຶ່ງ” ຈິດຂອງພິກຂຸຜູ້

ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສີນ ຂໍ້ວັດ ຕະບະ ຫຼື ພົມມະຈັນນີ້ ເຮົາຈັກເປັນເທບພະເຈົ້າ ຫຼື ເທບອົງໃດອົງໜຶ່ງ" ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງຜູກໃຈປະການທີ ໕ ຂອງຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ

ພິກຂຸທັງຫຼາຍ ກິເລດເຄື່ອງຜູກໃຈ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການ ເພື່ອລະກິເລດເຄື່ອງຜູກໃຈ ໕ ປະ ການ ນີ້ແລສະຕິປັດຖານ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນ

໑. ພິຈາລະນາເຫັນກາຍໃນກາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອລະກິເລດເຄື່ອງຜູກໃຈ ໕ ປະການນີ້ແລ

**ເຈຕະໂສວິນິພັນທະສູດທີ ໑໐ ຈົບ**

**ສະຕິປັດຖານວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ສຳມັປປະທານະວັກ

## ໝວດວ່າດ້ວຍສຳມັປປະທານ

# ໑. ສິກຂາສູດ

## ວ່າດ້ວຍເຫດທໍ້ແທ້ໃນສິກຂາ

[໗໓] ພິກຂຸທັງຫຼາຍ ເຫດທໍ້ແທ້ໃນສິກຂາ ໕ ປະການນີ້

ເຫດທໍ້ແທ້ໃນສິກຂາ ໕ ປະການ ອັນໃດແດ່ ຄື

໑. ການຂ້າສັດ

ฯລฯ

໕. ການເສບຂອງມຶນເມົາ ຄື ສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ເຫດທໍ້ແທ້ໃນສິກຂາ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສຳມັປປະທານະ (ຄວາມພຽນຖືກ) ໔ ປະການ ເພື່ອລະເຫດທໍ້ແທ້ໃນສິກຂາ ໕ ປະການນີ້ແລ ສຳມັປປະທານ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສຳມັບປະທານະ ໔ ປະການນີ້ ເພື່ອລະເຫດທົ້ແທ້ໃນສິກຂາ ໕ ປະການນີ້ແລ

**ສິກຂາສູດທີ ໑ ຈົບ**

[໗໔-໗໑] (ເພິ່ງຂະຫຍາຍໝວດທຳວ່າດ້ວຍສຳມັບປະທານເໝືອນໃນສະຕິປັດຖານວັກ)

# ໑໐. ເຈຕະໂສວິນິພັນທະສູດ

## ວ່າດ້ວຍກິເລດເຄື່ອງຜູກໃຈ

[໗໔] ພິກຂຸທັງຫຼາຍ ກິເລດເຄື່ອງຜູກໃຈ ໕ ປະການນີ້ ກິເລດເຄື່ອງຜູກໃຈ ໕ ປະການອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ

ຯລຯ

ພິກຂຸທັງຫຼາຍ ກິເລດເຄື່ອງຜູກໃຈ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສຳມັບປະທານ ໔ ປະການ ເພື່ອລະກິເລດເຄື່ອງຜູກໃຈ ໕ ປະການນີ້ແລ ສຳມັບປະທານ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ສ້າງສັນທະພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສຳມັບປະທານ ໔ ປະການນີ້ ເພື່ອລະກິເລດເຄື່ອງຜູກໃຈ ໕ ປະການນີ້ແລ

**ເຈຕະໂສວິນິພັນທະສູດທີ ໑໐ ຈົບ**

**ສຳມັບປະທານະວັກທີ ໓ ຈົບ**

# ໔. ອິດທິປາທະວັກ

**ໝວດວ່າອິດທິບາດ**

## ໑. ສິກຂາສູດ

### ວ່າດ້ວຍເຫດທໍ້ແທ້ໃນສິກຂາ

[໗໑] ພິກຂຸທັງຫຼາຍ ເຫດທໍ້ແທ້ໃນສິກຂາ ໕ ປະການນີ້

ເຫດທໍ້ແທ້ໃນສິກຂາ ໕ ປະການ ອັນໃດແດ່ ຄື

໑. ການຂ້າສັດ

ຯລຯ

໕. ການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ເຫດທໍ້ແທ້ໃນສິກຂາ ໕ ປະການນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອິດທິບາດ ໔ ປະການນີ້ ເພື່ອລະເຫດທໍ້ແທ້ໃນສິກຂາ ໕ ປະການນີ້ແລ

ອິດທິບາດ ໔ ປະການ ອັນໃດແດ່ ຄື

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ພະຍາຍາມຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ພະຍາຍາມຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອິດທິບາດ ໔ ປະການນີ້ ເພື່ອລະເຫດທໍ້ແທ້ໃນສິກຂາ ໕ ປະການນີ້ແລ

**ສິກຂາສູດທີ ໑ ຈົບ**

[໗໔-໘໑] (ເພິ່ງຂະຫຍາຍໝວດທຳວ່າດ້ວຍອິດທິບາດເໝືອນໃນສະຕິປັດຖານວັກ)

# ໑໐. ເຈຕະໂສວິນິພັນທະສູດ

## ວ່າດ້ວຍກິເລດເຄື່ອງຜູກໃຈ

[໘໒] ພິກຂຸທັງຫຼາຍ ກິເລດເຄື່ອງຜູກໃຈ ໕ ປະການນີ້ ກິເລດເຄື່ອງຜູກໃຈ ໕ ປະການອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ

ฯลฯ

ພິກຂຸທັງຫຼາຍ ກິເລດເຄື່ອງຜູກໃຈ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອິດທິບາດ ໔ ປະການນີ້ ເພື່ອລະກິເລດເປັນເຄື່ອງຜູກໃຈ ໕ ປະການນີ້ແລ ອິດທິບາດ ໔ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະ ສະມາທິປະທານສັງຂານ (ສະມາທິທີ່ເກີດຈາກສັນທະແລະຄວາມພຽນສ້າງສັນ)

໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິ ປະທານສັງຂານ (ສະມາທິທີ່ເກີດຈາກ ວິຣິຍະແລະຄວາມພຽນສ້າງສັນ)

໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກ ຈິດຕະແລະຄວາມພຽນສ້າງສັນ)

໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາ ສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາແລະຄວາມພຽນສ້າງສັນ)

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອິດທິບາດ ໔ ປະການນີ້ ເພື່ອລະກິເລດເຄື່ອງຜູກໃຈ ໕ ປະການນີ້ແລ

**ເຈຕະໂສວິນິພັນທະສູດທີ ໑໐ ຈົບ**

**ອິດທິປາທະວັກທີ ໔ ຈົບ**

(ຜູ້ສຶກສາເພິ່ງປະກອບສຳມັບປະທານ ໔ ແລະອິດທິບາດ ໔ ເໝືອນສະຕິປັດຖານ ໔)

# ธາຄະເປີຍຍາລະ

[໗໑] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໗ ປະການ ເພື່ອຮູ້ຍິ່ງธາຄະ

ທຳ ໗ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)
໒. ມໍຣະນະສັນຍາ (ກຳນົດໝາຍຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)
໓. ອາຫາເຣ ປະຕິກູນສັນຍາ (ກຳນົດໝາຍຄວາມປະຕິກູນໃນອາຫານ)
໔. ສັບພະໂລເກ ອະນະພິຣະຕະສັນຍາ (ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ)
໕. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)

໖. ອະນິດເຈ ທຸກຂະສັນຍາ (ກຳນົດໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແຫ່ງສັງຂານ)
໗. ທຸກເຂ ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)
໘. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໙. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປະນີດ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໙ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໑)

[໙໔] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໙ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໙ ປະການ ອັນໃດແດ່ ຄື

໑. ປະຖະມະຊານ
໒. ທຸຕິຍະຊານ
໓. ຕະຕິຍະຊານ
໔. ຈະຕຸດຖະຊານ
໕. ອາກາສານັນຈາຍະຕະຊານ
໖. ວິນຍານັນຈາຍະຕະນະຊານ
໗. ອາກິນຈັນຍາຍະຕະນະຊານ
໘. ເນວະສັນຍານາສັນຍາຍະຕະນະຊານ
໙. ສັນຍາເວທະຍິຕະນິໂຣດ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໙ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໒)

[໙໕-໑໑໔] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໙ ປະການນີ້ ເພື່ອກຳນົດຮູ້ຣາຄະ

ฯລฯ ເພື່ອຄວາມສິ້ນຣາຄະ
ฯລฯ ເພື່ອລະຣາຄະ
ฯລฯ ເພື່ອຄວາມສິ້ນໄປແຫ່ງຣາຄະ
ฯລฯ ເພື່ອຄວາມເສື່ອມໄປແຫ່ງຣາຄະ
ฯລฯ ເພື່ອຄວາມຄາຍອອກແຫ່ງຣາຄະ
ฯລฯ ເພື່ອຄວາມດັບໄປແຫ່ງຣາຄະ
ฯລฯ ເພື່ອຄວາມສະລະຣາຄະ
ฯລฯ ເພື່ອຄວາມສະລະຄືນຣາຄະ (໓-໔໐)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໙ ປະການນີ້ ເພື່ອຄວາມສະລະຄືນຣາຄະ

[໑໑໓-໔໓໔] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໙ ປະການນີ້ ເພື່ອຮູ້ຍິ່ງໂທສະ

ฯລฯ ເພື່ອກຳນົດຮູ້ໂທສະ

ໆລໆ ເພື່ອຄວາມສິ້ນໂທສະ

ໆລໆ ເພື່ອລະໂທສະ

ໆລໆ ເພື່ອຄວາມສິ້ນໄປແຫ່ງໂທສະ

ໆລໆ ເພື່ອຄວາມເສື່ອມໄປແຫ່ງໂທສະ

ໆລໆ ເພື່ອຄວາມຄາຍອອກແຫ່ງໂທສະ

ໆລໆ ເພື່ອຄວາມດັບໄປແຫ່ງໂທສະ

ໆລໆ ເພື່ອຄວາມສະລະໂທສະ

ໆລໆ ເພື່ອຄວາມສະລະຄືນໂທສະ ໆລໆ ໂມຫະ (ຄວາມຫຼົງ) ໆລໆ ໂກທະ (ຄວາມໂກດ) ໆລໆ ອຸປະນາຫະ (ຄວາມຜູກໂກດ) ໆລໆ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ໆລໆ ປະລາສະ (ຄວາມຕີຕົວສະເໝີ) ໆລໆ ອິດສາ (ຄວາມຣິດສະຫຍາ) ໆລໆ ມັດສະຣິຍະ (ຄວາມຂີ້ຖີ່) ໆລໆ ມາຍາ (ມາຍາ) ໆລໆ ສາເຖີຍຍະ (ຄວາມໂອ້ອວດ) ໆລໆ ຖໍາພະ (ຄວາມຫົວດື້) ໆລໆ ສາຣໍາພະ (ຄວາມແຂ່ງດີ) ໆລໆ ມານະ (ຄວາມຖືຕົວ) ໆລໆ ອະຕິມານະ (ຄວາມດູໝິ່ນເຂົາ) ໆລໆ ມະທະ (ຄວາມມົວເມົາ) ໆລໆ ປະມາທະ (ຄວາມຜະໝາດ) ໆລໆ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນທໍາ ໙ ປະການນີ້ ເພື່ອຄວາມສະລະຄືນປະມາທະ (໔໑-໓໔໐)

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຢ່າງນີ້ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊື່ນຊົມ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ

**ຣາຄະເປີຍະຍາລະ ຈົບ**

**ນະວະກະນິບາດ ຈົບບໍລິບູນ**